# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔

## ພຣະວິໄນ

## ເຫຼັ້ມທີ ໔

## ມະຫາວິພັງ ພາກ ໔



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔

# ພຣະວິໄນ

## ເຫຼັ້ມທີ ໔

# ມະຫາວິພັງ ພາກ ໔

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ໔. ນິດສັກຄິຍະກັນ

ທ່ານທັງຫຼາຍ ທໍາຄືນິດສັກຄິຍະປາຈິດຕີ ໓໐ ສິກຂາບົດເຫຼົ່ານີ້ ມາເຖິງວາຣະ ທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລໍາດັບດັ່ງຕໍ່ໄປນີ້

## ໑. ຈີວອນວັກ

### ໑. ປະຖົມກະຖິນສິກຂາບົດ

### ວ່າດ້ວຍກະຖິນເດາະຂໍ້ທີ ໑

### ເລື້ອງພຣະສັບພັກຄີ

[໔໕໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໂຄຕະມະກະເຈດີ ເຂດນະຄອນເວສາລີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງອະນຸຍາດໄຕຣຈີວອນເພື່ອພິກຂຸທັງຫຼາຍແລ້ວ ພວກພິກຂຸສັບພັກຄີໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໄຕຣຈີວອນແລ້ວ ຈຶ່ງເຂົ້າຫມູ່ບ້ານ ໂດຍຄອງໄຕຣຈີວອນ ໑ ໄຕຣ ຢູ່ໃນອາຣາມອີກ ໑ ໄຕຣ ອາບນໍ້າອີກ ໑ ໄຕຣ ບັນດາພິກຂຸຜູ້ມັກໜ້ອຍ ສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຊົງອະຕິເຣກຈີວອນ

ຫຼາຍແນວນັ້ນບໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຊົງອະຕິເຣກຈີວອນແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງ ພວກທ່ານຈຶ່ງຊົງອະຕິເຣກຈີວອນບໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສ ກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໔໖໐] ກໍ ພິກຂຸໃດຊົງອະຕິເຣກຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິກຂາບົດນີ້ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວ ຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພຣະອານົນ

[໔໖໑] ສະໄໝນັ້ນ ອະຕິເຣກຈີວອນເກີດຂຶ້ນແກ່ທ່ານພຣະອານົນ ທ່ານຕ້ອງການຈະຖວາຍອະຕິເຣກຈີວອນນັ້ນແກ່ທ່ານພຣະສາຣີບຸດ ແຕ່ທ່ານພຣະສາຣີບຸດຢູ່ທີ່ເມືອງສາເກດ ທີ່ນັ້ນທ່ານພຣະອານົນໄດ້ມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸບໍ່ເພິ່ງຊົງອະຕິເຣກຈີວອນ ກໍອະຕິເຣກຈີວອນນີ້ເກີດຂຶ້ນແກ່ເຮົາ ເຮົາຕ້ອງການຈະຖວາຍທ່ານພຣະສາຣີບຸດ ແຕ່ທ່ານຢູ່ທີ່ເມືອງສາເກດ ເຮົາເພິ່ງປະຕິບັດແນວໃດບໍ?" ຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະ ຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອີກດົນປານໃດ ສາຣີບຸດຈຶ່ງຈະກັບມາ"
ພຣະອານົນຂາບທູນວ່າ "ອີກ ໙ ຫຼື ໑໐ ວັນ ຈຶ່ງຈະກັບມາ ຂ້ານ້ອຍ"

## ຊົງອະນຸຍາດອະຕິເຣກຈີວອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ຊົງອະຕິເຣກຈີວອນໄດ້ ໑໐ ວັນເປັນຢ່າງຫຼາຍ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະອະນຸບັນຍັດ

[໔໗໘] ເມື່ອຈີວອນຂອງພິກຂຸສຳເລັດແລ້ວ ເມື່ອກະຖິນເດາະແລ້ວ ພິກຂຸເພິ່ງຊົງອະຕິເຣກຈີວອນໄວ້ໄດ້ ໑໐ ວັນເປັນຢ່າງຫຼາຍ ໃຫ້ເກີນກຳນົດນັ້ນໄປຕ້ອງອາບັດ ນິດສັກຄີຍະປາຈິດຕິ

### ເລື່ອງພຣະອານົນ ຈົບ

## ສິກຂາບົດວິພັງ

[໔໗໙] ຄຳວ່າ ເມື່ອຈີວອນ ຯລຯ ສຳເລັດແລ້ວ ໝາຍຄວາມວ່າ ຈີວອນຂອງພິກຂຸສຳເລັດແລ້ວ ສູນຫາຍແລ້ວ ເສຍຫາຍແລ້ວ ຖືກໄຟໄໝ້ແລ້ວ ຫຼື ພິກຂຸໝົດຫວັງວ່າຈະໄດ້ຜ້າມາຫຍິບເປັນຈີວອນຕື່ມ

ຄຳວ່າ ເມື່ອກະຖິນເດາະແລ້ວ ໝາຍຄວາມວ່າ ກະຖິນເດາະດ້ວຍມາຕິກາຢ່າງໃດຢ່າງໜຶ່ງໃນມາຕິກາ ໘ ຫຼື ສົງເດາະກະຖິນໃນລະຫວ່າງ

ຄຳວ່າ ໑໐ ວັນເປັນຢ່າງຫຼາຍ ຄື ຄອບຄອງໄວ້ໄດ້ ໑໐ ວັນເປັນຢ່າງຫຼາຍ

ຊື່ວ່າ ອະຕິເຣກຈີວອນ ໄດ້ແກ່ ຈີວອນທີ່ບໍ່ໄດ້ອະທິຖານ ບໍ່ໄດ້ວິກັບ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ໃຫ້ເກີນກຳນົດນັ້ນໄປ ຕ້ອງອາບັດນິດສັກຄີຍະປາຈິດຕິ ຄວາມວ່າ ເມື່ອຮອດອະຣຸນຂອງວັນທີ ໑໑ ຈີວອນຜືນນັ້ນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍ ເກີນກຳນົດ

໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດ ເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າດັ່ງນີ້

[໘໖໘] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງຄືນຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

[໘໖໙] ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍເກີນກຳນົດ ໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດ ເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ

[໘໖໖] ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

[໘໖໗] ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂອງຂ້ານ້ອຍເກີນກຳນົດ ໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໘໖໘] ຈີວອນເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າເກີນກຳນົດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນເກີນກຳນົດ ໑໐ ວັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າຍັງບໍ່ເກີນກຳນົດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ອະທິຖານ ພິກຂຸສຳຄັນວ່າ ອະທິຖານແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ວິກັບ ພິກຂຸສຳຄັນວ່າ ວິກັບແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ສະລະ ພິກຂຸສຳຄັນວ່າ ສະລະແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ສູນຫາຍ ພິກຂຸສຳຄັນວ່າ ສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ເສຍຫາຍ ພິກຂຸສຳຄັນວ່າ ເສຍຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ຖືກໄຟໄໝ້ ພິກຂຸສຳຄັນວ່າ ຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນທີ່ຍັງບໍ່ຖືກໂຈນຊິງເອົາໄປ ພິກຂຸສຳຄັນວ່າຖືກໂຈນຊິງເອົາໄປແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ຕິກະທຸກກົດ

ຈີວອນທີ່ເປັນນິດສັກຄີ ພິກຂຸຍັງບໍ່ໄດ້ສະລະ ໃຊ້ສອຍ ຕ້ອງອາບັດທຸກກົດ

ຈີວອນຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າເກີນກຳນົດແລ້ວໃຊ້ສອຍ ຕ້ອງອາບັດທຸກກົດ

ຈີວອນຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸບໍ່ແນ່ໃຈ ໃຊ້ສອຍ ຕ້ອງອາບັດທຸກກົດ

ຈີວອນຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າຍັງບໍ່ເກີນກຳນົດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໖໙] ໑. ພິກຂຸຜູ້ອະທິຖານພາຍໃນ ໑໐ ວັນ

໒. ພິກຂຸຜູ້ວິກັບໄວ້ພາຍໃນ ໑໐ ວັນ

໓. ພິກຂຸຜູ້ສະລະໃຫ້ໄປພາຍໃນ ໑໐ ວັນ

໔. ພິກຂຸຜູ້ມີຈີວອນສູນຫາຍພາຍໃນ ໑໐ ວັນ

໕. ພິກຂຸຜູ້ມີຈີວອນເສຍຫາຍພາຍໃນ ໑໐ ວັນ

໖. ພິກຂຸຜູ້ມີຈີວອນຖືກໄຟໄໝ້ພາຍໃນ ໑໐ ວັນ

໗. ພິກຂຸຜູ້ມີຈີວອນຖືກໂຈນຊິງຍາດເອົາໄປພາຍໃນ ໑໐ ວັນ

໘. ພິກຂຸຜູ້ມີຈີວອນຖືກເອົາໄປໂດຍວິສາສະພາຍໃນ ໑໐ ວັນ

໙. ພິກຂຸວິກົນຈະລິດ

໑໐. ພິກຂຸຕົ້ນບັນຍັດ

[໕໗໐] ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ຍອມຄືນຈີວອນທີ່ມີຜູ້ສະລະໃຫ້ ບັນດາພິກຂຸຜູ້ມັກ ໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງບໍ່ຍອມຄືນຈີວອນທີ່ມີຜູ້ສະລະໃຫ້ແນວນັ້ນນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມແລ້ວອະນຸຍາດໃຫ້ຄືນຈີວອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພວກພິກຂຸສັບພັກຄີວ່າ "ໄດ້ຂ່າວວ່າພວກທ່ານບໍ່ຍອມຄືນຈີວອນທີ່ມີຜູ້ສະລະໃຫ້ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ເປັນຫຍັງ ພວກທ່ານຈຶ່ງບໍ່ຍອມຄືນຈີວອນທີ່ມີຜູ້ສະລະໃຫ້ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ ຯລຯ" ດັ່ງນີ້ ແລ້ວຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມກັບເລື້ອງນັ້ນ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຈີວອນທີ່ພິກຂຸສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ ຈະບໍ່ຄືນບໍ່ໄດ້ ພິກຂຸໃດບໍ່ຄືນໃຫ້ ພິກຂຸນັ້ນຕ້ອງອາບັດທຸກະກົດ"

**ປະຖົມກະຖິນສິກຂາບົດທີ ໑ ຈົບ**

# ໑. ຈີວອນວັກ

## ໘. ອຸດໂທສິຕະສິກຂາບົດ

## ວ່າດ້ວຍພິກຂຸເກັບຈີວອນໄວ້ໃນໂຮງເກັບຂອງ

## (ວ່າດ້ວຍກະຖິນເດາະຂໍ້ທີ ໘)

## ເລື້ອງພິກຂຸຫຼາຍອົງ

[໕໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸທັງຫຼາຍຝາກສັງຄາຕິໄວ້ກັບພວກພິກຂຸມີພຽງອຸດຕະຣາສົງກັບອັນຕະຣະວາສົກອອກຈາຣິກໄປສູ່ຊົນນະບົດ ສັງຄາຕິເຫຼົ່ານັ້ນເກັບໄວ້ດົນຈຶ່ງຂຶ້ນຮາ ພິກຂຸທັງຫຼາຍຈຶ່ງນຳອອກມາຕາກແດດ

ທ່ານພຣະອານົນທ່ຽວໄປຕາມເສນາສະນະ ເຫັນພິກຂຸກຳລັງຕາກສັງຄາຕິຢູ່ ຈຶ່ງເຂົ້າໄປຖາມພິກຂຸເຫຼົ່ານັ້ນວ່າ "ທ່ານທັງຫຼາຍ ສັງຄາຕິທີ່ຂຶ້ນຣາເຫຼົ່ານີ້ເປັນຂອງໃຜ" ລຳດັບນັ້ນ ພິກຂຸເຫຼົ່ານັ້ນບອກເລື້ອງນັ້ນໃຫ້ພຣະອານົນຮູ້

ທ່ານພຣະອານົນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງຝາກສັງຄາຕິໄວ້ກັບພວກພິກຂຸ ມີພຽງອຸດຕະຣາສົງກັບອັນຕະຣະວາສົກ ອອກຈາຣິກໄປສູ່ຊົນນະບົດແນວນັ້ນບໍ່" ເມື່ອທ່ານຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸຝາກສັງຄາຕິໄວ້ກັບພວກພິກຂຸ ມີພຽງອຸດຕະຣາສົງກັບອັນຕະຣະວາສົກ ອອກຈາຣິກໄປສູ່ຊົນນະບົດ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ພວກໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງຝາກຈີວອນໄວ້ກັບພວກພິກຂຸ ມີພຽງອຸດຕະຣາສົງ ແລະ ອັນຕະຣະວາສົກອອກຈາຣິກໄປສູ່ຊົນນະບົດແນວນັ້ນບໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ດັ່ງນີ້ແລ້ວຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔ໆ໔] ເມື່ອຈີວອນຂອງພິກຂຸສຳເລັດແລ້ວ ເມື່ອກະຖິນເດາະແລ້ວ ຖ້າພິກຂຸຢູ່ປາສະຈາກໄຕຣຈີວອນແມ່ນສິ້ນຣາຕີໜຶ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແກ່ພິກຂຸທັງຫຼາຍແລ້ວຢ່າງນີ້

**ເລື້ອງພິກຂຸຫຼາຍອົງ ຈົບ**

## ເລື້ອງພິກຂຸເປັນໄຂ້

[໔ໆ໕] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ຢູ່ນະຄອນໂກສຳພີ ພວກຍາດສົ່ງທູດໄປສຳນັກຂອງພິກຂຸນັ້ນໃຫ້ແຈ້ງຂ່າວວ່າ "ນິມົນພຣະມາເທີ້ນ ພວກເຮົາຈະອຸປັດຖາກ" ພິກຂຸທັງຫຼາຍກໍກ່າວຢ່າງນີ້ວ່າ "ທ່ານໄປເທີ້ນ ພວກຍາດຈະອຸປັດຖາກທ່ານເອງ" ພິກຂຸນັ້ນກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸບໍ່ເພິ່ງຢູ່ປາສະຈາກໄຕຣຈີວອນ

ຂ້ານ້ອຍເປັນໄຂ້ບໍ່ສາມາດນຳໄຕຣຈີວອນໄປໄດ້ ຂ້ານ້ອຍ ຈະບໍ່ໄປ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີ ພຣະພາກເຈົ້າໃຫ້ຊົງຮັບຮູ້

ຊົງອະນຸຍາດໃຫ້ສົມມຸດຕິຈີວອນວິປະວາດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ເຮົາອະນຸຍາດໃຫ້ສົມມຸດ ເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນເພື່ອພິກຂຸຜູ້ເປັນໄຂ້"

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສົມມຸດຢ່າງນີ້

## ວິທີສົມມຸດຕິຈີວອນວິປະວາດ

ພິກຂຸຜູ້ເປັນໄຂ້ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍເປັນໄຂ້ ບໍ່ສາມາດນຳໄຕຣຈີວອນໄປໄດ້ ຂ້ານ້ອຍຂໍໃຫ້ສົງສົມມຸດ ເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນ ເພິ່ງກ່າວຂໍຢ່າງນີ້ເປັນຄັ້ງທີ ໒ ເພິ່ງກ່າວຂໍຢ່າງນີ້ເປັນຄັ້ງທີ ໓

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໗໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເປັນໄຂ້ ບໍ່ສາມາດນຳໄຕຣຈີວອນໄປໄດ້ ທ່ານຂໍໃຫ້ສົງສົມມຸດເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ສົມມຸດເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເປັນໄຂ້ບໍ່ສາມາດນຳໄຕຣຈີວອນໄປໄດ້ ທ່ານຂໍໃຫ້ສົງສົມມຸດເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນ ສົງໃຫ້ສົມມຸດເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ສົມມຸດ ເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ການສົມມຸດເພື່ອບໍ່ເປັນການຢູ່ປາສະຈາກໄຕຣຈີວອນ ສົງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນຊອບ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໔໗໕] ເມື່ອຈີວອນຂອງພິກຂຸສຳເລັດແລ້ວ ເມື່ອກະຖິນເດາະແລ້ວ ຖ້າພິກຂຸຢູ່ປາສະຈາກໄຕຣຈີວອນແມ່ນສິ້ນຣາຕີໜຶ່ງ ຕ້ອງອາບັດນິດສັກຄິຍະປາຈິດຕິ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

## ສິກຂາບົດວິພັງ

[໕໗໖] ຄຳວ່າ ເມື່ອຈີວອນຯລຯສຳເລັດແລ້ວ ໝາຍຄວາມວ່າ ຈີວອນຂອງພິກຂຸທຳສຳເລັດ ແລ້ວ ສູນຫາຍແລ້ວ ສິບຫາຍແລ້ວ ຖືກໄຟໄໝ້ແລ້ວ ຫຼື ພິກຂຸໝົດຫວັງວ່າຈະໄດ້ຜ້າມາຫຍິບເປັນຈີວອນ

ຄຳວ່າ ເມື່ອກະຖິນເດາະແລ້ວ ໝາຍຄວາມວ່າ ກະຖິນເດາະດ້ວຍມາຕິກາຢ່າງໃດຢ່າງໜຶ່ງໃນມາຕິກາ ໘ ຫຼື ສົງເດາະພາຍໃນລະຫວ່າງ

ຄຳວ່າ ຖ້າພິກຂຸຢູ່ປາສະຈາກໄຕຣຈີວອນແມ່ນສິ້ນຣາຕີໜຶ່ງ ຄວາມວ່າ ພິກຂຸຢູ່ປາສະຈາກສັງຄາຕິ ອຸດຕະຣາສົງ ຫຼື ອັນຕະຣະວາສົກຜືນໃດຜືນໜຶ່ງ ແມ່ນຄືນດຽວ

ຄຳວ່າ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ ຄື ຍົກເວັ້ນພິກຂຸຜູ້ໄດ້ຮັບສົມມຸດ

ຄຳວ່າ ຕ້ອງອາບັດນິດສັກຄິຍະປາຈິດຕິ ຄື ຈີວອນເປັນນິດສັກຄີພ້ອມກັບອະຣຸນຂຶ້ນ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ່ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍ ຢູ່ປາສະຈາກແລ້ວລ່ວງຣາຕີ ເວັ້ນຈາກໄດ້ຮັບການສົມມຸດ ເປັນນິດສັກຄີ ຂ້ານ້ອຍສະລະກກກກກກກກກຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ່ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍຢູ່ປາສະຈາກແລ້ວລ່ວງຣາຕີ ເວັ້ນຈາກໄດ້ຮັບການສົມມຸດ ເປັນນິດສັກຄີ ຂ້ານ້ອຍ ສະລະຈີວອນຜືນນີ້ແກ່ທ່ານທັງ ຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂອງຂ້ານ້ອຍຢູ່ປາສະຈາກແລ້ວລ່ວງຣາຕີເວັ້ນຈາກໄດ້ຮັບການສົມມຸດ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

### ມາຕິກາ

[໕໗໗] ໝູ່ບ້ານ ມີອຸປະຈານດຽວກັນ ໝູ່ບ້ານ ມີອຸປະຈານແຍກກັນ
ເຮືອນ ມີອຸປະຈານດຽວກັນ ເຮືອນ ມີອຸປະຈານແຍກກັນ
ໂຮງເກັບຂອງ ມີອຸປະຈານດຽວກັນ ໂຮງເກັບຂອງ ມີອຸປະຈານແຍກກັນ
ປ້ອມ ມີອຸປະຈານດຽວກັນ ປ້ອມ ມີອຸປະຈານແຍກກັນ
ເຮືອນຍອດດຽວ ມີອຸປະຈານດຽວກັນ ເຮືອນຍອດດຽວ ມີອຸປະຈານແຍກກັນ
ຜາສາດ ມີອຸປະຈານດຽວກັນ ຜາສາດ ມີອຸປະຈານແຍກກັນ
ເຮືອນໂລ້ນ ມີອຸປະຈານດຽວກັນ ເຮືອນໂລ້ນ ມີອຸປະຈານແຍກກັນ
ເຮືອ ມີອຸປະຈານດຽວກັນ ເຮືອ ມີອຸປະຈານແຍກກັນ
ໝູ່ກວຽນ ມີອຸປະຈານດຽວກັນ ໝູ່ກວຽນ ມີອຸປະຈານແຍກກັນ
ນາ ມີອຸປະຈານດຽວກັນ ນາມີອຸປະຈານແຍກກັນ
ລານນວດເຂົ້າ ມີອຸປະຈານດຽວກັນ ລານນວດເຂົ້າ ມີອຸປະຈານແຍກກັນ
ສວນ ມີອຸປະຈານດຽວກັນ ສວນ ມີອຸປະຈານແຍກກັນ
ວິຫານ ມີອຸປະຈານດຽວກັນ ວິຫານ ມີອຸປະຈານແຍກກັນ
ເຫງົ້າໄມ້ ມີອຸປະຈານດຽວກັນ ເຫງົ້າໄມ້ ມີອຸປະຈານແຍກກັນ
ທີ່ກາງແຈ້ງ ມີອຸປະຈານດຽວກັນ ທີ່ກາງແຈ້ງ ມີອຸປະຈານແຍກກັນ

[໔໗໘] ທີ່ຊື່ວ່າ ໝູ່ບ້ານມີອຸປະຈານດຽວກັນ ຄື ໝູ່ບ້ານຂອງຕະກູນໜຶ່ງລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ພາຍໃນໝູ່ບ້ານ ແລ້ວເພິ່ງຢູ່ພາຍໃນໝູ່ບ້ານ ທີ່ຊື່ວ່າ ໝູ່ບ້ານມີອຸປະຈານແຍກກັນ ຄື ໝູ່ບ້ານຂອງຕະກູນໜຶ່ງບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນເຮືອນທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໗໙] ໝູ່ບ້ານຂອງຕ່າງຕະກູນ ແລະ ລ້ອມຮົ້ວໄວ້ດ້ວຍກັນ ພິກຂຸຕ້ອງຢູ່ໃນເຮືອນທີ່ຕົນເກັບຈີວອນໄວ້ ໃນຫໍປະຊຸມຫຼືທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ເມື່ອໄປຫໍປະຊຸມ ຕ້ອງເກັບຈີວອນໄວ້ໃນຫັດຖະບາດແລ້ວຢູ່ໃນຫໍປະຊຸມ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ພິກຂຸເກັບຈີວອນໃນຫໍປະຊຸມຕ້ອງຢູ່ໃນຫໍປະຊຸມ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

ໝູ່ບ້ານບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນເຮືອນທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໘໐] ເຮືອນ ຂອງຕະກູນໜຶ່ງລ້ອມຮົ້ວໄວ້ດ້ວຍກັນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸເກັບຈີວອນໄວ້ພາຍໃນເຮືອນ ຕ້ອງຢູ່ພາຍໃນເຮືອນ

ເຮືອນບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໘໑] ເຮືອນ ຂອງຕ່າງຕະກູນແລະລ້ອມຮົ້ວໄວ້ດ້ວຍກັນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

ເຮືອນບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໘໒] ໂຮງເກັບຂອງ ຂອງຕະກູນໜຶ່ງລ້ອມຮົ້ວໄວ້ດ້ວຍກັນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນໂຮງເກັບຂອງທີ່ຕົນເກັບຈີວອນໄວ້

ໂຮງເກັບຂອງບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນຫ້ອງເກັບຂອງທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໘໓] ໂຮງເກັບຂອງ ຂອງຕ່າງຕະກູນແລະລ້ອມຮົ້ວໄວ້ດ້ວຍກັນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

ໂຮງເກັບຂອງບໍ່ມີຮົ້ວລ້ອມ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໘໔] ປ້ອມ ຂອງຕະກູນໜຶ່ງ ພິກຂຸຕ້ອງຢູ່ພາຍໃນປ້ອມທີ່ຕົນເກັບຈີວອນໄວ້

ປ້ອມຂອງຕ່າງຕະກູນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

[໔໘໕] ເຮືອນຍອດດຽວ ຂອງຕະກູນໜຶ່ງ ພິກຂຸຕ້ອງຢູ່ພາຍໃນເຮືອນຍອດດຽວທີ່ຕົນເກັບຈີວອນໄວ້

ເຮືອນຍອດດຽວຂອງຕ່າງຕະກູນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

[໔໗໖] ຜາສາດ ຂອງຕະກູນໜຶ່ງ ພິກຂຸຕ້ອງຢູ່ໃນຜາສາດທີ່ຕົນເກັບຈີວອນໄວ້

ຜາສາດຂອງຕ່າງຕະກູນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

[໔໗໗] ເຮືອນໂລ້ນ ຂອງຕະກູນໜຶ່ງ ພິກຂຸຕ້ອງຢູ່ພາຍໃນເຮືອນໂລ້ນທີ່ຕົນເກັບຈີວອນໄວ້

ເຮືອນໂລ້ນຂອງຕ່າງຕະກູນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

[໔໗໘] ເຮືອ ຂອງຕະກູນໜຶ່ງ ພິກຂຸຕ້ອງຢູ່ພາຍໃນເຮືອທີ່ຕົນເກັບຈີວອນໄວ້

ເຮືອຂອງຕ່າງຕະກູນ ມີຫ້ອງໃຫຍ່ຫ້ອງນ້ອຍຫຼາຍຫ້ອງ ພິກຂຸຕ້ອງຢູ່ໃນຫ້ອງທີ່ຕົນເກັບຈີວອນໄວ້ຫຼືທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ

[໔໗໙] ໝູ່ກວຽນ ຂອງຕະກູນໜຶ່ງ ພິກຂຸຕ້ອງບໍ່ລະອັບພັນດອນ[๑] ດ້ານໜ້າ ຫຼື ດ້ານຫຼັງຂ້າງລະ ໗ ອັບພັນດອນ ດ້ານຂ້າງດ້ານລະ ໑ ອັບພັນດອນ

ໝູ່ກວຽນຂອງຕ່າງຕະກູນ ພິກຂຸເກັບຈີວອນໄວ້ໃນໝູ່ກວຽນ ຕ້ອງບໍ່ລະຫັດຖະບາດ

[໔໘໐] ນາ ຂອງຕະກູນໜຶ່ງແລະລ້ອມຮົ້ວໄວ້ດ້ວຍກັນ ພິກຂຸຕ້ອງຢູ່ພາຍໃນນາທີ່ຕົນເກັບຈີວອນໄວ້ ນາບໍ່ມີຮົ້ວລ້ອມ ພິກຂຸຕ້ອງບໍ່ລະຫັດຖະບາດ

ນາຂອງຕ່າງຕະກູນ ແລະ ລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ພາຍໃນນາ ຕ້ອງຢູ່ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ນາທີ່ບໍ່ມີຮົ້ວລ້ອມ ຕ້ອງບໍ່ລະຫັດຖະບາດ

[໔໘໑] ລານນວດເຂົ້າຂອງຕະກູນໜຶ່ງ ແລະ ລ້ອມຮົ້ວໄວ້ດ້ວຍກັນ ພິກຂຸຕ້ອງຢູ່ພາຍໃນລານນວດເຂົ້າທີ່ຕົນເກັບຈີວອນໄວ້ ລານນວດເຂົ້າຂອງຕະກູນໜຶ່ງບໍ່ມີຮົ້ວລ້ອມ ຕ້ອງບໍ່ລະຫັດຖະບາດ

ລານນວດເຂົ້າຂອງຕ່າງຕະກູນ ແລະ ລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ພາຍໃນລານນວດເຂົ້າ ຕ້ອງຢູ່ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ລານນວດເຂົ້າຂອງຕ່າງຕະກູນບໍ່ມີຮົ້ວລ້ອມ ຕ້ອງບໍ່ລະຫັດຖະບາດ

[໔໘໒] ສວນ ຂອງຕະກູນໜຶ່ງແລະລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ພາຍໃນສວນ ຕ້ອງຢູ່ພາຍໃນສວນ ສວນທີ່ບໍ່ມີຮົ້ວລ້ອມ ຕ້ອງບໍ່ລະຫັດຖະບາດ

ສວນຂອງຕ່າງຕະກູນແລະລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ພາຍໃນສວນ ຕ້ອງຢູ່ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ສວນທີ່ບໍ່ມີຮົ້ວລ້ອມ ຕ້ອງບໍ່ລະຫັດຖະບາດ

[໔໙໓] ວິຫານ ຂອງຕະກູນໜຶ່ງແລະລ້ອມຮົ້ວໄວ້ດ້ວຍກັນ ພິກຂຸເກັບຈີວອນໄວ້ໃນວິຫານ ຕ້ອງຢູ່ພາຍໃນວິຫານ ວິຫານຂອງຕະກູນໜຶ່ງບໍ່ມີຮົ້ວລ້ອມ ຕ້ອງຢູ່ໃນວິຫານທີ່ຕົນເກັບຈີວອນໄວ້ ຫຼືບໍ່ລະຫັດຖະບາດ

ວິຫານຂອງຕ່າງຕະກູນແລະລ້ອມຮົ້ວໄວ້ດ້ວຍກັນ ພິກຂຸຕ້ອງຢູ່ໃນວິຫານທີ່ຕົນເກັບຈີວອນໄວ້ ຫຼື ທີ່ແຄມປະຕູ ຫຼື ບໍ່ລະຫັດຖະບາດ ວິຫານຂອງຕ່າງຕະກູນບໍ່ມີຮົ້ວລ້ອມ ຕ້ອງຢູ່ໃນວິຫານທີ່ຕົນເກັບຈີວອນໄວ້ ຫຼື ບໍ່ລະຫັດຖະບາດ

[໔໙໔] ເຫງົ້າໄມ້ ຂອງຕະກູນໜຶ່ງ ກຳນົດເຂດທີ່ເງົາແຜ່ໄປອ້ອມ ໆ ເວລາທ່ຽງວັນ ພິກຂຸເກັບຈີວອນພາຍໃນເຂດເງົາ ຕ້ອງຢູ່ໃນເຂດເງົາ

ເຫງົ້າໄມ້ຂອງຕ່າງຕະກູນ ຕ້ອງບໍ່ລະຫັດຖະບາດ

ທີ່ຊື່ວ່າ ທີ່ກາງແຈ້ງມີອຸປະຈານດຽວກັນ ຄື ປ່າບໍ່ມີບ້ານ ກຳນົດ ໗ ອັບພັນດອນໂດຍອ້ອມ ເປັນອຸປະຈານດຽວ ພົ້ນກຳນົດນັ້ນເປັນອຸປະຈານແຍກກັນ

## ນິດສັກຄິຍະປາຈິດຕີ

[໔໙໕] ຈີວອນຢູ່ປາສະຈາກແລ້ວ ພິກຂຸສຳຄັນວ່າຢູ່ປາສະຈາກແລ້ວ ຕ້ອງອາບັດນິດສັກຄິຍະ ປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຢູ່ປາສະຈາກແລ້ວ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຢູ່ປາສະຈາກແລ້ວ ພິກຂຸສຳຄັນວ່າບໍ່ຢູ່ປາສະຈາກແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ໄດ້ຖອນ ພິກຂຸສຳຄັນວ່າຖອນແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ໄດ້ສະລະໃຫ້ ພິກຂຸສຳຄັນວ່າສະລະໃຫ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ເສຍຫາຍ ພິກຂຸສຳຄັນວ່າເສຍຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ຖືກໄຟໄໝ້ ພິກຂຸສຳຄັນວ່າຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

ຈີວອນຍັງບໍ່ຖືກໂຈນຊິງ ພິກຂຸສຳຄັນວ່າຖືກໂຈນຊິງໄປແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນແຕ່ພິກຂຸໄດ້ຮັບສົມມຸດ

## ຕິກະທຸກກົດ

ຈີວອນເປັນນິດສັກຄີ ພິກຂຸຍັງບໍ່ສະລະ ໃຊ້ສອຍ ຕ້ອງອາບັດທຸກກົດ
ຈີວອນບໍ່ຢູ່ປາສະຈາກ ພິກຂຸສຳຄັນວ່າຢູ່ປາສະຈາກແລ້ວ ໃຊ້ສອຍ ຕ້ອງອາບັດທຸກກົດ
ຈີວອນບໍ່ຢູ່ປາສະຈາກ ພິກຂຸບໍ່ແນ່ໃຈ ໃຊ້ສອຍ ຕ້ອງອາບັດທຸກກົດ
ຈີວອນບໍ່ຢູ່ປາສະຈາກ ພິກຂຸສຳຄັນວ່າບໍ່ຢູ່ປາສະຈາກ ໃຊ້ສອຍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໖] ໑. ພິກຂຸຜູ້ຖອນພາຍໃນອະຣຸນ
໒. ພິກຂຸຜູ້ສະລະໃຫ້ໄປ
໓. ພິກຂຸຜູ້ມີຈີວອນສູນຫາຍ
໔. ພິກຂຸຜູ້ມີຈີວອນເສຍຫາຍ
໕. ພິກຂຸຜູ້ມີຈີວອນຖືກໄຟໄໝ້
໖. ພິກຂຸຜູ້ມີຈີວອນຖືກໂຈນຊິງເອົາໄປ
໗. ພິກຂຸຜູ້ມີຈີວອນຖືກຖືເອົາໄປໂດຍວິສາສະ
໘. ພິກຂຸໄດ້ຮັບສົມມຸດ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ອຸດໂທສິຕະສິກຂາບົດທີ ໒ ຈົບ**

# ໑. ຈີວອນວັກ

## ໓. ຕະຕິຍະກະຖິນສິກຂາບົດ

### ວ່າດ້ວຍກະຖິນເດາະຂໍ້ທີ ໓

### ເລື້ອງພິກຂຸຮັບອະກາລະຈີວອນ

[໔໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອະກາລະຈີວອນ ໄດ້ເກີດຂຶ້ນແກ່ພິກຂຸອົງໜຶ່ງ ທ່ານຈະທຳຈີວອນແຕ່ຜ້າບໍ່ພໍ ຈຶ່ງພະຍາຍາມດຶງຜ້ານັ້ນໃຫ້ຍືດແລ້ວຮີດຫຼາຍຄັ້ງ ພຣະຜູ້ມີພຣະພາກເຈົ້າສະເດັດໄປຕາມເສນາສະນະ ທອດພຣະເນດເຫັນທ່ານພະຍາຍາມດຶງຜ້ານັ້ນໃຫ້ຍືດແລ້ວຮີດຫຼາຍຄັ້ງ ຈຶ່ງສະເດັດເຂົ້າໄປຫາພິກຂຸອົງນັ້ນ ເມື່ອເຖິງແລ້ວຕັດຖາມວ່າ "ທ່ານພະຍາຍາມດຶງຜ້ານັ້ນໃຫ້ຍືດແລ້ວຮີດຫຼາຍຄັ້ງ ເພື່ອອັນໃດ"

ພິກຂຸນັ້ນຂາບທູນວ່າ "ຂ້າພຣະອົງໄດ້ຜ້າທີ່ເປັນອະກາລະຈີວອນ ເມື່ອຈະເຮັດຈີວອນຜ້າບໍ່ພໍ ດັ່ງນັ້ນຈຶ່ງພະຍາຍາມດຶງຜ້ານັ້ນໃຫ້ຍືດແລ້ວຮີດຫຼາຍຄັ້ງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຍັງມີຄວາມຫວັງວ່າຈະໄດ້ຜ້າສຳລັບເຮັດຈີວອນຕື່ມອີກບໍ?"

ພິກຂຸນັ້ນຂາບທູນວ່າ "ຍັງມີຄວາມຫວັງ ຂ້ານ້ອຍ"

### ຊົງອະນຸຍາດອະກາລະຈີວອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ເຮົາອະນຸຍາດໃຫ້ຮັບຜ້າທີ່ເປັນອະກາລະຈີວອນແລ້ວເກັບໄວ້ໂດຍມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ"

[໔໗໘] ຕໍ່ມາ ພິກຂຸທັງຫຼາຍຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ຮັບຜ້າ ທີ່ເປັນອະກາລະຈີວອນເກັບໄວ້ໄດ້ໂດຍມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ ຈຶ່ງຮັບຜ້າທີ່ເປັນອະກາລະຈີວອນເກັບໄວ້ເກີນ ໑ ເດືອນ ຜ້າເຫຼົ່ານັ້ນຖືກມັດລວມເປັນຫໍ່ ໆ ແຂວນໄວ້ທີ່ຣາວ

ທ່ານພຣະອານົນທ່ຽວໄປຕາມເສນາສະນະ ເຫັນຜ້າເຫຼົ່ານັ້ນຖືກມັດລວມເປັນຫໍ່ ໆ ແຂວນໄວ້ທີ່ຣາວ ຈຶ່ງຖາມພິກຂຸທັງຫຼາຍວ່າ "ຜ້າເຫຼົ່ານັ້ນຖືກມັດລວມເປັນຫໍ່ ໆ ແຂວນໄວ້ຢູ່ຣາວເປັນຂອງໃຜ"

ພິກຂຸທັງຫຼາຍຕອບວ່າ "ຜ້າເຫຼົ່ານີ້ເປັນອະກາລະຈີວອນ ພວກຂ້ານ້ອຍເກັບໄວ້ໂດຍຄວາມຫວັງວ່າຈະໄດ້ຜ້າມາເພີ່ມ"

ພຣະອານົນຖາມວ່າ "ເກັບໄວ້ດົນເທົ່າໃດ"

ພິກຂຸທັງຫຼາຍຕອບວ່າ "ເກັບໄວ້ເກີນ ໑ ເດືອນ ຂ້ານ້ອຍ"

ພຣະອານົນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງຮັບຜ້າທີ່ເປັນອະກາລະຈີວອນເກັບໄວ້ເກີນ ໑ ເດືອນແນວນັ້ນບໍ" ເມື່ອທ່ານຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຮັບຜ້າທີ່ເປັນອະກາລະຈີວອນເກັບໄວ້ເກີນ ໑ ເດືອນ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງຮັບຜ້າທີ່ເປັນອະກາລະຈີວອນແລ້ວເກັບໄວ້ເກີນ ໑ ເດືອນບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໙໙] ເມື່ອຈີວອນຂອງພິກຂຸສຳເລັດແລ້ວ ເມື່ອກະຖິນເດາະແລ້ວ ອະກາລະຈີວອນເກີດຂຶ້ນແກ່ພິກຂຸ ພິກຂຸຕ້ອງການກໍເພິ່ງຮັບໄວ້ໄດ້ ເມື່ອຮັບແລ້ວເພິ່ງຮີບໃຫ້ເຮັດເປັນຈີວອນ ຖ້າຜ້ານັ້ນ ມີບໍ່ພໍ ເມື່ອມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ ພິກຂຸນັ້ນເພິ່ງເກັບຜ້າສຳລັບເຮັດຈີວອນນັ້ນໄວ້ບໍ່ເກີນ ໑ ເດືອນ ເພື່ອເພີ່ມຜ້າສຳລັບເຮັດຈີວອນທີ່ຍັງຂາດໃຫ້ຄົບ ຖ້າເກັບເກີນກຳນົດນັ້ນ ແມ່ນມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸຮັບອະກາລະຈີວອນ ຈົບ

## ສິກຂາບົດວິພັງ

[໕໐໐] ຄຳວ່າ ເມື່ອຈີວອນ ຯລຯ ສຳເລັດແລ້ວ ໝາຍຄວາມວ່າ ຈີວອນຂອງພິກຂຸເຮັດສຳເລັດ ແລ້ວ ສູນຫາຍແລ້ວ ເສຍຫາຍແລ້ວ ຖືກໄຟໄໝ້ແລ້ວ ຫຼື ພິກຂຸໝົດຫວັງວ່າຈະໄດ້ຜ້າມາຫຍິບເປັນຈີວອນ

ຄຳວ່າ ເມື່ອກະຖິນເດາະແລ້ວ ໝາຍຄວາມວ່າ ກະຖິນເດາະດ້ວຍມາຕິກາຢ່າງໃດຢ່າງໜຶ່ງໃນມາຕິກາ ๘ ຫຼື ສົງເດາະກະຖິນໃນລະຫວ່າງ

ທີ່ຊື່ວ່າ ອະກາລະຈີວອນ ໄດ້ແກ່ ຜ້າທີ່ເກີດຂຶ້ນຕະຫຼອດ ໑໑ ເດືອນ ໃນເມື່ອບໍ່ໄດ້ການກະຖິນ ຜ້າທີ່ເກີດຂຶ້ນຕະຫຼອດ ໗ ເດືອນ ໃນເມື່ອໄດ້ການກະຖິນແລ້ວ ແມ່ນຜ້າທີ່ເຂົາຖວາຍເຈາະຈົງໃນການ ນີ້ຊື່ວ່າ ອະກາລະຈີວອນ

ຄຳວ່າ ເກີດຂຶ້ນ ຄື ເກີດຈາກສົງ ຈາກຄະນະ ຈາກຍາດ ຈາກມິດ ຫຼື ທີ່ເປັນຜ້າບັງສຸກຸນ ຫຼືທີ່ໄດ້ມາດ້ວຍຊັບຂອງຕົນ

ຄຳວ່າ ຕ້ອງການ ຄື ເມື່ອຕ້ອງການກໍຮັບໄວ້

ຄຳວ່າ ເມື່ອຮັບແລ້ວເພິ່ງຮີບໃຫ້ເຮັດ ຄື ເພິ່ງໃຫ້ເຮັດສຳເລັດພາຍໃນ ໑໐ ວັນ

ຄຳວ່າ ຖ້າຜ້ານັ້ນມີບໍ່ພໍ ຄື ຜ້າບໍ່ພຽງພໍທີ່ຈະເຮັດເປັນໄຕຣຈີວອນຜືນໃດຜືນໜຶ່ງ

ຄຳວ່າ ພິກຂຸນັ້ນເພິ່ງເກັບຜ້າສຳລັບເຮັດຈີວອນນັ້ນໄວ້ບໍ່ເກີນ ໑ ເດືອນ ຄື ເກັບໄວ້ໄດ້ ໑ ເດືອນເປັນຢ່າງຫຼາຍ

ຄຳວ່າ ເພື່ອເພີ່ມຜ້າສຳລັບເຮັດຈີວອນທີ່ຍັງຂາດໃຫ້ຄົບ ຄື ເພື່ອຈະໃຫ້ຜ້າທີ່ຍັງຂາດຄົບບໍລິບູນ

ຄຳວ່າ ເມື່ອມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ ຄື ມີຄວາມຫວັງວ່າຈະໄດ້ຈາກສົງ ຈາກຄະນະ ຈາກຍາດ ຈາກມິດ ຫຼື ທີ່ເປັນຜ້າບັງສຸກຸນ ຫຼື ທີ່ໄດ້ມາດ້ວຍຊັບຂອງຕົນ

## ຈີວອນທີ່ມີຄວາມຫວັງວ່າຈະໄດ້ມາ

ຄຳວ່າ ຖ້າເກັບເກີນກຳນົດນັ້ນ ແມ່ນມີຄວາມຫວັງວ່າຈະໄດ້ຜ້າມາເພີ່ມ ອະທິບາຍວ່າຈີວອນທີ່ຫວັງເກີດຂຶ້ນໃນວັນທີຈີວອນຜືນເດີມເກີດຂຶ້ນແລ້ວ ເພິ່ງເຮັດໃຫ້ສຳເລັດໃນ ໑໐ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໓ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໔ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໕ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໖ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໗ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໘ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໙ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໐ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໑໐ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໑ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໒ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໓ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໔ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນ

ແລ້ວໄດ້ ໑໕ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໖ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໗ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໘ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໑໙ ວັນ ຯລຯ ໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໐ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໑໐ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໑ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໙ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໒ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໘ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໓ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໗ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໔ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໖ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໕ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໕ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໖ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໔ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໗ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໓ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໘ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໒ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໒໙ ວັນ ເພິ່ງເຮັດໃຫ້ສຳເລັດໃນ ໑ ວັນ

ຈີວອນທີ່ຫວັງເກີດຂຶ້ນໃນເມື່ອຈີວອນຜືນເດີມເກີດຂຶ້ນແລ້ວໄດ້ ໓໐ ວັນ ເພິ່ງອະທິຖານວິກັບ ສະລະໃຫ້ຜູ້ອື່ນໃນວັນນັ້ນ ຖ້າບໍ່ອະທິຖານ ບໍ່ວິກັບ ຫຼື ບໍ່ສະລະໃຫ້ຜູ້ອື່ນ ເມື່ອອະຣຸນວັນທີ ໓໑ ຈີວອນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ອະກາລະຈີວອນຜືນນີ້ຂອງຂ້ານ້ອຍເກີນ

໑ ເດືອນ ເປັນນິດສັກຄີ ຂ້ານ້ອຍສະລະອະກາລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ອະກາລະຈີວອນ ຜືນນີ້ຂອງຂ້ານ້ອຍເກີນ ໑ ເດືອນ ເປັນນິດສັກຄີ ຂ້ານ້ອຍສະລະອະກາລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ອະກາລະຈີວອນຜືນນີ້ຂອງຂ້ານ້ອຍເກີນ ໑ ເດືອນ ເປັນນິດສັກຄີ ຂ້ານ້ອຍສະລະອະກາລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວ ຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍ ຄືນຈີວອນຜືນນີ້ໃຫ້ແກ່ທ່ານ

ຈີວອນທີ່ຫວັງເກີດຂຶ້ນ ເນື້ອຜ້າບໍ່ເໝືອນກັບຈີວອນເດີມທີ່ເກີດຂຶ້ນແລ້ວ ແລະວັນຄືນກໍຍັງເຫຼືອຢູ່ ເມື່ອບໍ່ຕ້ອງການຈະເຮັດກໍບໍ່ຕ້ອງເຮັດ

## ບົດພາຊະນີ
## ນິດສັກຄິຍະປາຈິດຕີ

[໕໐໑] ຈີວອນເກັບໄວ້ເກີນ ໑ ເດືອນ ພິກຂຸສຳຄັນວ່າເກີນແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນເກັບໄວ້ເກີນ ໑ ເດືອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນເກັບໄວ້ເກີນ ໑ ເດືອນ ພິກຂຸສຳຄັນວ່າຍັງບໍ່ເກີນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ອະທິຖານ ພິກຂຸສຳຄັນວ່າອະທິຖານແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ວິກັບ ພິກຂຸສຳຄັນວ່າວິກັບແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ໄດ້ສະລະໃຫ້ ພິກຂຸສຳຄັນວ່າສະລະໃຫ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ເສຍຫາຍ ພິກຂຸສຳຄັນວ່າເສຍຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ຖືກໄຟໄໝ້ ພິກຂຸສຳຄັນວ່າຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ຖືກໂຈນຊີງ ພິກຂຸສຳຄັນວ່າຖືກໂຈນຊີງແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ຕິກະທຸກກົດ

ຈີວອນເປັນນິດສັກຄີ ພິກຂຸບໍ່ສະລະ ໃຊ້ສອຍ ຕ້ອງອາບັດທຸກກົດ

ຈີວອນຍັງບໍ່ເກີນ ໑ ເດືອນ ພິກຂຸສຳຄັນວ່າເກີນແລ້ວ ຕ້ອງອາບັດທຸກກົດ

ຈີວອນທີ່ຍັງບໍ່ເກີນ ໑ ເດືອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຈີວອນຍັງບໍ່ເກີນ ໑ ເດືອນ ພິກຂຸສຳຄັນວ່າຍັງບໍ່ເກີນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໐໔] ໑. ພິກຂຸອະທິຖານພາຍໃນ ໑ ເດືອນ

໔. ພິກຂຸຜູ້ວິກັບໄວ້

໓. ພິກຂຸຜູ້ສະລະໃຫ້ໄປ

໔. ພິກຂຸຜູ້ມີຈີວອນສູນຫາຍ

໕. ພິກຂຸຜູ້ມີຈີວອນເສຍຫາຍ

໖. ພິກຂຸຜູ້ມີຈີວອນຖືກໄຟໄໝ້

໗. ພິກຂຸຜູ້ມີຈີວອນຖືກໂຈນຊີງເອົາໄປ

໘. ພິກຂຸຜູ້ມີຈີວອນຖືກຖືເອົາໄປໂດຍວິສາສະ

໙. ພິກຂຸວິກົນຈະລິດ

໑໐. ພິກຂຸຕົ້ນບັນຍັດ

**ຕະຕິຍະກະຖິນສິກຂາບົດທີ ໓ ຈົບ**

# ໑. ຈີວອນວັກ

## ໔. ປຸຣານະຈີວອນສິກຂາບົດ

### ວ່າດ້ວຍການໃຫ້ຊັກຈີວອນເກົ່າ

### ເລື້ອງພຣະອຸທາຍີກັບອະດີດພັນລະຍາ

[໕໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອະດີດພັນລະຍາຂອງທ່ານພຣະອຸທາຍີບວດຢູ່ໃນສຳນັກພິກຂຸນີ ນາງມາຫາທ່ານພຣະອຸທາຍີຢູ່ສະເໝີ ແມ່ນທ່ານພຣະອຸທາຍີກໍໄປຫານາງຢູ່ສະເໝີ ກໍໃນສະໄໝນັ້ນ ທ່ານພຣະອຸທາຍີເຮັດພັດຕະກິດໃນທີ່ຢູ່ຂອງນາງ

ເຊົ້າວັນໜຶ່ງ ທ່ານພຣະອຸທາຍີຄອງອັນຕະຣະວາສົກຖືບາດ ແລະ ຈີວອນໄປຫານາງເຖິງທີ່ຢູ່ ເມື່ອເຂົ້າໄປເຖິງແລ້ວກໍນັ່ງເທິງອາສະນະເປີດອົງຄະຊາດຕໍ່ໜ້າພິກຂຸນີນັ້ນ ແມ່ນພິກຂຸນີນັ້ນກໍນັ່ງເທິງ ອາສະນະເປີດອົງກຳເນີດຕໍ່ໜ້າທ່ານພຣະອຸທາຍີເຊັ່ນກັນ ທ່ານພຣະອຸທາຍີເກີດຄວາມກຳໜັດເພ່ງເບິ່ງອົງກຳເນີດຂອງນາງ ນ້ຳອະສຸຈິຂອງທ່ານພຣະອຸທາຍີນັ້ນເຄື່ອນ ເມື່ອແລ້ວທ່ານພຣະອຸທາຍີຈຶ່ງກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ນ້ອງຍິງ ທ່ານຈົ່ງໄປຫານ້ຳມາ ເຮົາຈະຊັກອັນຕະຣະວາສົກ

ນາງຕອບວ່າ "ໂຜດສົ່ງມາເທີ້ນ ຂ້ອຍຈະຊັກໃຫ້"

ເມື່ອແລ້ວນາງໃຊ້ປາກດູດອະສຸຈິສ່ວນໜຶ່ງ ແລະສອດອະສຸຈິອີກສ່ວນໜຶ່ງເຂົ້າໃນອົງກຳເນີດ ຍ້ອນເຫດນັ້ນນາງຈຶ່ງໄດ້ຖືພາ

ພວກພິກຂຸນີເວົ້າວ່າ "ພິກຂຸນີນັ້ນບໍ່ໄດ້ປະພຶດພົມມະຈັນຈຶ່ງຖືພາ"

ນາງຕອບວ່າ "ແມ່ເຈົ້າ ບໍ່ແມ່ນຂ້ອຍບໍ່ໄດ້ປະພຶດພົມມະຈັນ" ແລ້ວບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ພວກພິກຂຸນີພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີຈຶ່ງໃຫ້ພິກຂຸນີຊັກຈີວອນເກົ່າໃຫ້ນໍ" ແລ້ວນຳເລື້ອງນີ້ໄປບອກໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີ ຈຶ່ງໃຫ້ພິກຂຸນີຊັກຈີວອນເກົ່າໃຫ້ນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານໃຊ້ພິກຂຸນີຊັກຈີວອນເກົ່າ ແມ່ນບໍ?"

ພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະພຸດທະອົງຊົງຖາມວ່າ "ອຸທາຍີ ນາງເປັນຍາດຂອງທ່ານ ຫຼື ບໍ່ແມ່ນຍາດ" ພຣະອຸທາຍີທູນຕອບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ຊາຍຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຄວາມໜ້າເຫຼື້ອມໃສ ຫຼື ບໍ່ໜ້າເຫຼື້ອມໃສຂອງຍິງຜູ້ບໍ່ແມ່ນຍາດ ໂມຄະບຸຣຸດທ່ານນັ້ນ ໃຊ້ພິກຂຸນີຜູ້ທີ່ບໍ່ແມ່ນຍາດໃຫ້ຊັກຈີວອນເກົ່າ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໐໔] ກໍ ພິກຂຸໃດໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ໃຫ້ຍ້ອມ ຫຼື ໃຫ້ທຸບຈີວອນເກົ່າ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະອຸທາຍີກັບອະດີດພັນລະຍາ ຈົບ

## ສິກຂາບົດວິພັງ

[໕໐໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ຈີວອນເກົ່າ ໄດ້ແກ່ ຜ້າທີ່ນຸ່ງແລ້ວແມ່ນພຽງແຕ່ ໑ ຄັ້ງ ຜ້າທີ່ຫົ່ມແລ້ວແມ່ນພຽງ ໑ ຄັ້ງ

ພິກຂຸສັ່ງວ່າ "ຈົ່ງຊັກ" ຕ້ອງອາບັດທຸກກົດ ຈີວອນທີ່ພິກຂຸນີຊັກແລ້ວເປັນນິດສັກຄີ

ພິກຂຸສັ່ງວ່າ "ຈົ່ງຍ້ອມ" ຕ້ອງອາບັດທຸກກົດ ຈີວອນທີ່ພິກຂຸນີຍ້ອມແລ້ວເປັນນິດສັກຄີ

ພິກຂຸສັ່ງວ່າ "ຈົ່ງທຸບ" ຕ້ອງອາບັດທຸກກົດ ເມື່ອພິກຂຸນີໃຊ້ມື ຫຼື ທຸບພຽງ ໑ ຄັ້ງ ຈີວອນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸ ຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນເກົ່າຜືນນີ້ ຂ້ານ້ອຍໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນເກົ່າຜືນນີ້ຂ້ານ້ອຍໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນເກົ່າຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນເກົ່າຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນເກົ່າຜືນນີ້ຂ້ານ້ອຍໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນເກົ່າຜືນນີ້ໃຫ້ແກ່ທ່ານ

# ບົດພາຊະນີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທີ ໑

[໕໐໗] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກຈີວອນເກົ່າ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ທຸບຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ທຸບຈີວອນ ເກົ່າ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທີ ໒

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມຈີວອນເກົ່າ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ທຸບຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ຊັກຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ທຸບ ໃຊ້ໃຫ້ຊັກ ຈີວອນເກົ່າ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທີ ໓

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ທຸບຈີວອນເກົ່າ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ທຸບ ໃຊ້ໃຫ້ຊັກຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ທຸບ ໃຊ້ໃຫ້ຍ້ອມຈີວອນເກົ່າ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ທຸບ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມຈີວອນ ເກົ່າ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຯລຯ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຯລຯ

## ທຸກກົດ

ພິກຂຸໃຊ້ພິກຂຸນີໃຫ້ຊັກຈີວອນເກົ່າຂອງພິກຂຸອົງອື່ນ ຕ້ອງອາບັດທຸກກົດ

ພິກຂຸໃຊ້ພິກຂຸນີໃຫ້ຊັກຜ້າປູນັ່ງ ແລະ ຜ້າປູນອນ ຕ້ອງອາບັດທຸກກົດ

ພິກຂຸໃຊ້ພິກຂຸນີຜູ້ອຸປະສົມບົດໃນສົງຝ່າຍດຽວໃຫ້ຊັກ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໐໗] ໑. ພິກຂຸຜູ້ເປັນເຈົ້າຂອງຈີວອນທີ່ພິກຂຸນີຜູ້ເປັນຍາດຊັກໃຫ້ເອງ ໂດຍມີພິກຂຸນີສະຫາຍຜູ້ບໍ່ແມ່ນຍາດຄອຍຊ່ວຍເຫຼືອ

໒. ພິກຂຸບໍ່ໄດ້ໃຊ້ ພິກຂຸນີບໍ່ແມ່ນຍາດຊັກໃຫ້ເອງ
໓. ພິກຂຸໃຊ້ຊັກຈີວອນທີ່ຍັງບໍ່ໄດ້ໃຊ້ສອຍ
໔. ພິກຂຸໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກບໍຣິຂານຢ່າງອື່ນ ນອກຈາກຈີວອນ
໕. ພິກຂຸໃຊ້ສິກຂະມານາໃຫ້ຊັກ
໖. ພິກຂຸໃຊ້ສາມະເນຣີໃຫ້ຊັກ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ປຸຣານະຈີວອນສິກຂາບົດທີ ໔ ຈົບ**

# ໑. ຈີວອນວັກ

## ໕. ຈີວະຣະປະຕິກຄະຫະນະສິກຂາບົດ

### ວ່າດ້ວຍການຮັບຈີວອນ

### ເລື້ອງພິກຂຸນີອຸບົນວັນນາ

[໕໐໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພິກຂຸນີອຸບົນວັນນາພັກຢູ່ໃນນະຄອນສາວັດຖີ ເວລາເຊົ້າ ພິກຂຸນີອຸບົນວັນນາຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ເຂົ້າໄປບິນທະບາດໃນນະຄອນສາ ວັດຖີ ກັບຈາກບິນທະບາດຫຼັງຈາກສັນສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນ ເພື່ອ ພັກຜ່ອນກາງເວັນ ນັ່ງຢູ່ເຫງົ້າໄມ້ຕົ້ນໜຶ່ງ

ສະໄໝນັ້ນ ພວກໂຈນລັກງົວແມ່ນາຂ້າແລ້ວຖືເອົາຊີ້ນເຂົ້າປ່າອັນທະວັນ ຫົວໜ້າໂຈນແນມເຫັນພິກຂຸນີອຸບົນວັນນານັ່ງພັກກາງເວັນ ເມື່ອເຫັນແລ້ວຈຶ່ງຄິດວ່າ “ຫາກພວກລູກນ້ອງເຮົາພົບເຂົ້າຈະຕ້ອງປະທຸດສະຮ້າຍນາງຢ່າງແນ່ນອນ” ຈຶ່ງລ່ຽງຢ່າງໄປທາງອື່ນ ເມື່ອປີ້ງຊີ້ນຈົນສຸກ ຫົວໜ້າໂຈນເລືອກຊີ້ນດີ ໆ ເອົາໃບໄມ້ຫໍ່ແຂວນໄວ້ທີ່ຕົ້ນໄມ້ໃກ້ພິກຂຸນີແລ້ວກ່າວວ່າ “ຊີ້ນຫໍ່ນີ້ເຮົາໃຫ້ແລ້ວ ສະມະນະຫຼືພາມເຫັນແລ້ວຈົ່ງຖືເອົາໄປເທີ້ນ

ພິກຂຸນີອອກຈາກສະມາທິ ໄດ້ຍິນຄຳທີ່ຫົວໜ້າໂຈນເວົ້າ ຈຶ່ງຖືເອົາເນື້ອໄປທີ່ພັກ ເມື່ອຣາຕີຜ່ານໄປ ນາງຈັດຊີ້ນຕ່ອນນັ້ນໃຫ້ຮຽບຮ້ອຍແລ້ວໃຊ້ອຸດຕະຣາສົງຫໍ່ໄວ້ແລ້ວເຫາະໄປສູ່ພຣະເວລຸວັນວິຫານ

ເຊົ້າວັນນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປບິນທະບາດໃນໝູ່ບ້ານ ເຫຼືອທ່ານພຣະອຸທາຍີຢູ່ເຝົ້າພຣະວິຫານ ພິກຂຸນີອຸບົນວັນນາເຂົ້າໄປຫາແລ້ວຖາມວ່າ “ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ທີ່ໃດ”

ທ່ານພຣະອຸທາຍີຕອບວ່າ “ພຣະຜູ້ມີພຣະພາກເຈົ້າສະເດັດໄປບິນທະບາດໃນໝູ່ບ້ານ”

ພິກຂຸນີກ່າວວ່າ “ໂຜດຖວາຍຊີ້ນຕ່ອນນີ້ແດ່ພຣະຜູ້ມີພຣະພາກເຈົ້າ”

ທ່ານພຣະອຸທາຍີກ່າວວ່າ “ນາງ ພຣະຜູ້ມີພຣະພາກຈະຊົງອີ່ມໜຳດ້ວຍຊີ້ນທີ່ຖວາຍ ຖ້າທ່ານຖວາຍອັນຕະຣະວາສົກແກ່ອາດຕະມາ ອາດຕະມາກໍຈະອີ່ມໜຳດ້ວຍອັນຕະຣະວາສົກເຊັ່ນກັນ

ພິກຂຸນີກ່າວວ່າ "ທ່ານ ຄວາມຈິງ ຂ້ານ້ອຍເປັນມາຕຸຄາມຫາລາບໄດ້ຍາກ ທັງຜ້າຜືນນີ້ກໍເປັນຈີວອນຜືນສຸດທ້າຍທີ່ຈະຄົບ ໕ ຜືນ ຂ້ານ້ອຍຖວາຍບໍ່ໄດ້"

ທ່ານພຣະອຸທາຍີກ່າວວ່າ "ນາງ ປຽບເໝືອນບຸຣຸດໃຫ້ຊ້າງແລ້ວກໍຄວນສະລະແຍ່ງສຳລັບຊ້າງດ້ວຍ ທ່ານກໍຄືກັນ ຖວາຍຕ່ອນຊິ້ນແດ່ພຣະຜູ້ມີພຣະພາກເຈົ້າແລ້ວກໍຈົ່ງສະລະອັນຕະຣະວາສົກແກ່ອາດຕະມາເທີ້ນ"

ເມື່ອຖືກທ່ານພຣະອຸທາຍີເວົ້າກົດດັນ ນາງຈຶ່ງຖວາຍອັນຕະຣະວາສົກແລ້ວກັບທີ່ພັກ

ພວກພິກຂຸນີຜູ້ຖ້າຮັບບາດແລະຈີວອນຖາມນາງວ່າ "ອັນຕະຣະວາສົກຂອງຍາແມ່ຢູ່ໃສ?"

ນາງຈຶ່ງບອກເລື່ອງນັ້ນໃຫ້ຮູ້

ພິກຂຸນີທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີຈຶ່ງຮັບຈີວອນຈາກມືພິກຂຸນີແນວນັ້ນນໍ ມາຕຸຄາມມີລາບໜ້ອຍ" ແລ້ວບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີຈຶ່ງຮັບຈີວອນຈາກມືພິກຂຸນີນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານຮັບຈີວອນຈາກມືພິກຂຸນີ ແມ່ນບໍ?" ທ່ານພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະພຸດທະອົງຕັດຖາມວ່າ "ອຸທາຍີ ນາງເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ?" ພຣະອຸທາຍີທູນຮັບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະພຸດທະອົງຕັດວ່າ "ໂມຄະບຸຣຸດ ບຸຣຸດຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຂອງທີ່ມີຢູ່ ຫຼື ບໍ່ມີຂອງສະຕີຜູ້ບໍ່ແມ່ນຍາດ ທ່ານນັ້ນຮັບຈີວອນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໐໗] ກໍ ພິກຂຸໃດຮັບຈີວອນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດນິດສັກຄີຍະປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພິກຂຸນີອຸບົນວັນນາ ຈົບ**

## ເລື້ອງແລກປ່ຽນຈີວອນ

[໕໑໐] ສະໄໝນັ້ນ ພວກພິກຂຸລັງກຽດບໍ່ຍອມຮັບຈີວອນແລກປ່ຽນຂອງພວກພິກຂຸນີ ພວກພິກຂຸນີຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພຣະຈຶ່ງບໍ່ຍອມຮັບຈີວອນແລກປ່ຽນຂອງພວກເຮົານໍ” ພວກພິກຂຸໄດ້ຍິນຄຳຕຳໜິ ປະນາມ ໂພນທະນາຂອງພວກພິກຂຸນີ ຈຶ່ງນຳຄວາມນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ຮັບຈີວອນແລກປ່ຽນໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະຫະທຳມິກ ໕ ຄື ພິກຂຸ ພິກຂຸນີ ສິກຂະມານາ ສາມະເນນ ແລະ ສາມະເນຣີ ແລກປ່ຽນຈີວອນກັນໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບສິ່ງຂອງແລກປ່ຽນຂອງສະຫະທຳມິກ ໕ ເຫຼົ່ານີ້ໄດ້” ແລ້ວຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໑໑] ອັນໜຶ່ງ ພິກຂຸໃດຮັບຈີວອນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ແລກປ່ຽນກັນ

### ເລື້ອງແລກປ່ຽນຈີວອນ ຈົບ

## ສິກຂາບົດວິພັງ

[໕໑໔] ຄຳວ່າ ອັນໜຶ່ງຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ເວັ້ນໄວ້ແຕ່ແລກປ່ຽນ ຄື ຍົກເວັ້ນແລກປ່ຽນກັນ

ພິກຂຸຮັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ ຈີວອນເປັນນິດສັກຄີ ຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍຮັບມາຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ໂດຍບໍ່ໄດ້ແລກປ່ຽນກັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍຮັບມາຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ໂດຍບໍ່ໄດ້ແລກປ່ຽນກັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານ ຈີວອນຜືນນີ້ຂ້ານ້ອຍຮັບມາຈາກມື ພິກຂຸນີຜູ້ບໍ່ແມ່ນຍາດ ໂດຍບໍ່ໄດ້ແລກປ່ຽນກັນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

### ຕິກະນິດສັກຄິຍະປາຈິດຕີ

[໕໑໓] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຮັບຈີວອນຈາກມື ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຮັບຈີວອນຈາກມື ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຮັບຈີວອນຈາກມື ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ແລກປ່ຽນກັນ

### ຕິກະທຸກກົດ

ພິກຂຸນີຜູ້ອຸປະສົມບົດໃນສົງຝ່າຍດຽວ ພິກຂຸຮັບຈີວອນຈາກມື ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຮັບຈີວອນຈາກມື ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຮັບຈີວອນຈາກມື ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ຮັບຈີວອນຈາກມື ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໑໔] ໑. ພິກຂຸຮັບຈີວອນຂອງພິກຂຸນີຜູ້ເປັນຍາດ

໒. ພິກຂຸແລກປ່ຽນ ຄື ເອົາຂອງທີ່ມີຄ່າໜ້ອຍແລກກັບຂອງມີຄ່າຫຼາຍ ຫຼື ເອົາຂອງທີ່ມີຄ່າຫຼາຍແລກກັບຂອງມີຄ່າໜ້ອຍ

໓. ພິກຂຸຖືວິສາສະເອົາມາ

໔. ພິກຂຸຂໍຢືມຈີວອນ

໕. ພິກຂຸຮັບບໍຣິຂານອື່ນນອກຈາກຈີວອນ

໖. ພິກຂຸຮັບຈີວອນຂອງສິກຂະມານາ

໗. ພິກຂຸຮັບຈີວອນຂອງສາມະເນຣີ

໘. ພິກຂຸວິກົນຈະລິດ

໙. ພິກຂຸຕົ້ນບັນຍັດ

**ຈີວະຣະປະຕິກຄະຫະນະສິກຂາບົດທີ ໕ ຈົບ**

# ໑. ຈີວອນວັກ

## ໖. ອັນຍາຕະກະວິນຍັດຕິສິກຂາບົດ

### ວ່າດ້ວຍການອອກປາກຂໍຄະລືຫັດຜູ້ບໍ່ແມ່ນຍາດ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໑໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຊ່ຽວຊານການສະແດງທຳມີກະຖາ ບຸດເສດຖີຄົນໜຶ່ງເຂົ້າໄປຫາທ່ານເຖິງທີ່ຢູ່ ເມື່ອເຖິງແລ້ວຈຶ່ງໄຫວ້ທ່ານນັ່ງ ໃນທີ່ສົມຄວນ ລຳດັບນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ຊີ້ແຈ່ງໃຫ້ບຸດເສດຖີເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ

ບຸດເສດຖີນັ້ນອັນທ່ານພຣະອຸປະນັນທະສາກະຍະບຸດຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວຈຶ່ງປະວາຣະນາທ່ານພຣະອຸປະນັນທະສາກະຍະບຸດວ່າ "ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າເພິ່ງບອກ ປັດໄຈ ໔ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານທີ່ທ່ານຕ້ອງການເຊິ່ງຂ້ານ້ອຍພໍຈະຈັດຫາມາຖວາຍໄດ້

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ຖ້າທ່ານຕ້ອງການຖວາຍແກ່ອາດຕະມາ ກໍຈົ່ງຖວາຍຜ້າຜືນໜຶ່ງຈາກຜ້າທີ່ທ່ານນຸ່ງຫົ່ມຢູ່ນີ້

ເຂົາກ່າວວ່າ "ຂ້ານ້ອຍເປັນກຸນລະບຸດ ຈະນຸ່ງຜ້າຜືນດຽວຍ່າງກັບບ້ານ ເບິ່ງຈະບໍ່ເໝາະນິມົນຖ້າໃຫ້ຂ້ານ້ອຍກັບໄປເຖິງບ້ານກ່ອນ ແລ້ວຂ້ານ້ອຍຈະສົ່ງຜ້າ ໑ ຜືນຈາກ ໔ ຜືນນີ້ ຫຼື ຜ້າທີ່ດີກວ່ານີ້ມາຖວາຍ

ທ່ານພຣະອຸປະນັນທະສາກະຍະບຸດເວົ້າເປັນຄັ້ງທີ ໔ ວ່າ "ຖ້າທ່ານຕ້ອງການຖວາຍແກ່ອາດຕະມາ ກໍຈົ່ງຖວາຍຜ້າຜືນໜຶ່ງຈາກຜ້າທີ່ທ່ານນຸ່ງຫົ່ມຢູ່ນີ້"

ບຸດເສດຖີກໍຍັງກ່າວປະຕິເສດຢູ່ເໝືອນເດີມວ່າ "ຂ້ານ້ອຍເປັນກຸນລະບຸດ ຈະນຸ່ງຜ້າຜືນດຽວຍ່າງກັບບ້ານ ເບິ່ງຈະບໍ່ເໝາະ ນິມົນທ່ານຖ້າໃຫ້ຂ້ານ້ອຍກັບໄປເຖິງບ້ານກ່ອນ ແລ້ວຂ້ານ້ອຍຈະສົ່ງຜ້າ ໑ ຜືນຈາກ ໔ ຜືນນີ້ ຫຼື ຜ້າທີ່ດີກວ່ານີ້ມາຖວາຍ"

ທ່ານພຣະອຸປະນັນທະສາກະຍະບຸດກໍເວົ້າຊູຊີເປັນຄັ້ງທີ ๓ ວ່າ "ຖ້າທ່ານຕ້ອງການຖວາຍແກ່ອາດຕະມາ ກໍຈົ່ງຖວາຍຜ້າຜືນໜຶ່ງຈາກຜ້າທີ່ທ່ານນຸ່ງຫົ່ມຢູ່ນີ້"

ແຕ່ເຂົາກໍຍັງເວົ້າບ່າຍບ່ຽງຢູ່ເໝືອນເດີມວ່າ "ຂ້ານ້ອຍເປັນກຸນລະບຸດ ຈະນຸ່ງຜ້າຜືນດຽວຍ່າງກັບບ້ານເບິ່ງຈະບໍ່ເໝາະ ນິມົນທ່ານຖ້າໃຫ້ຂ້ານ້ອຍກັບໄປເຖິງບ້ານກ່ອນ ແລ້ວຂ້ານ້ອຍຈະສົ່ງຜ້າ ໑ ຜືນຈາກ ๔ ຜືນນີ້ ຫຼື ຜ້າທີ່ດີກວ່ານີ້ມາຖວາຍ"

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ທ່ານບໍ່ຕ້ອງການຖວາຍ ແລ້ວຈະປະວາຣະນາໄປ ເຮັດຫຍັງ ປະວາຣະນາແລ້ວບໍ່ຖວາຍ ຈະມີປະໂຫຍດອັນໃດ?

ເມື່ອຖືກທ່ານພຣະອຸປະນັນທະສາກະຍະບຸດເວົ້າກົດດັນເຂົາຈຶ່ງຖວາຍຜ້າ ໑ ຜືນ ແລ້ວກັບໄປ ຖືກຊາວບ້ານຖາມວ່າ "ນາຍທ່ານ ເປັນຫຍັງຈຶ່ງນຸ່ງຜ້າຜືນດຽວກັບມານໍ" ບຸດເສດຖີນັ້ນຈຶ່ງບອກເລື້ອງນັ້ນໃຫ້ຊາວບ້ານເຫຼົ່ານັ້ນຮູ້

ຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດມັກຫຼາຍບໍ່ສັນໂດດ ສະມະນະເຫຼົ່ານີ້ແມ່ນຈະນິມົນຕາມທຳນຽມ ກໍບໍ່ແມ່ນເຮັດໄດ້ງ່າຍ ເປັນຫຍັງເມື່ອບຸດເສດຖີທຳການນິມົນຕາມທຳນຽມ ພຣະສະມະນະທັງຫຼາຍກໍຍັງຈະຮັບເອົາຜ້າໄປແນວນັ້ນນໍ"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸປະນັນທະສາກະຍະບຸດຈຶ່ງອອກປາກຂໍຈີວອນຈາກບຸດເສດຖີນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸປະນັນທະສາກະຍະບຸດ ໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານອອກປາກຂໍຈີວອນຈາກ ບຸດເສດຖີ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸປະນັນທະ ບຸດເສດຖີເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ" ທ່ານພຣະອຸປະນັນທະສາກະຍະບຸດທູນຕອບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະພຸດທະອົງຊົງຕຳໜິວ່າ "ໂມຄະບຸຣຸດ ຄະລຶຫັດຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຂອງທີ່ມີຢູ່ ຫຼື ບໍ່ມີຂອງຄົນຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ທ່ານນັ້ນອອກປາກຂໍຈີວອນຈາກບຸດເສດຖີຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໑໖] ກໍ ພິກຂຸໃດອອກປາກຂໍຈີວອນຈາກຄະລືຫັດຊາຍ ຫຼື ຄະລືຫັດຍິງຜູ້ບໍ່ແມ່ນຍາດ ຕ້ອງອາບັດນິດສັກຄີຍະປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ເລື້ອງພິກຂຸຖືກຊິງຈີວອນ

[໕໑໗] ສະໄໝນັ້ນ ພິກຂຸຫຼາຍອົງເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີໃນລະຫວ່າງທາງ ພວກໂຈນອອກມາປຸ້ນສະດົມພິກຂຸເຫຼົ່ານັ້ນ ພວກທ່ານຄິດວ່າ "ການອອກປາກຂໍຈີວອນຈາກຄະລືຫັດຊາຍ ຫຼື ຄະລືຫັດຍິງ ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ແລ້ວ" ຈຶ່ງລັງກຽດບໍ່ຍອມອອກປາກຂໍຈີວອນ ເປືອຍກາຍຍ່າງໄປເຖິງນະຄອນສາວັດຖີ ໄຫວ້ພິກຂຸທັງຫຼາຍ ພວກພິກຂຸຈຶ່ງກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກອາຊີວົກທີ່ພາກັນໄຫວ້ພິກຂຸເຫຼົ່ານີ້ ເປັນພວກອາຊີວົກທີ່ດີ"

ພິກຂຸຊາວເມືອງສາເກດກ່າວຢ່າງນີ້ວ່າ "ພວກຂ້ານ້ອຍບໍ່ແມ່ນອາຊີວົກ ພວກຂ້ານ້ອຍເປັນພິກຂຸ"

ພິກຂຸຊາວນະຄອນສາວັດຖີໄດ້ກ່າວກັບພຣະອຸບາລີວ່າ "ທ່ານອຸບາລີ ນິມົນທ່ານສອບສວນພິກຂຸເຫຼົ່ານີ້ເທີ້ນ" ເມື່ອພິກຂຸເຫຼົ່ານັ້ນຖືກພຣະອຸບາລີສອບສວນ ຈຶ່ງເລົ່າເລື່ອງນັ້ນໃຫ້ຮູ້

ເມື່ອໄຕ່ສວນແລ້ວ ພຣະອຸບາລີແຈ້ງວ່າ "ພວກເປືອຍກາຍເຫຼົ່ານີ້ເປັນພິກຂຸ ຈົ່ງໃຫ້ຈີວອນແກ່ພວກທ່ານ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍຈຶ່ງເປືອຍກາຍຍ່າງມາແນວນັ້ນນໍ ຕາມທຳມະດາພິກຂຸຕ້ອງໃຊ້ຫຍ້າ ຫຼື ໃບໄມ້ປົກປິດກາຍຍ່າງມາກໍໄດ້ບໍ່ແມ່ນບໍ?" ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ຂໍຈີວອນໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຖືກໂຈນຊິງຈີວອນ ຫຼື ຈີວອນຫາຍ ອອກປາກຂໍຈີວອນຈາກຄະລືຫັດຊາຍ ຫຼື ຄະລືຫັດຍິງຜູ້ບໍ່ແມ່ນຍາດໄດ້ ຖ້າວັດທີ່ພິກຂຸໄປເຖິງກ່ອນ ມີຈີວອນປະຈຳວິຫານ ຜ້າປູຕຽງ ຜ້າປູພື້ນ ຫຼື ຜ້າປອກພູກຂອງສົງ ກໍເພິ່ງຖືເອົາຜ້າ

ຂອງສົງໄປຫົ່ມໂດຍຕັ້ງໃຈວ່າ ເມື່ອເຮົາໄດ້ຈີວອນແລ້ວຈະນຳມາຄືນ ດັ່ງນີ້ກໍຄວນ ຖ້າບໍ່ມີຈີວອນປະຈຳວິຫານ ຜ້າປູຕຽງ ຜ້າປູພື້ນ ຫຼື ຜ້າປອກຟູກຂອງສົງ ຄວນໃຊ້ຫຍ້າ ຫຼື ໃບໄມ້ປົກປິດມາ ອັນໜຶ່ງ ພິກຂຸບໍ່ເພິ່ງເປືອຍກາຍຍ່າງມາ ພິກຂຸໃດເປືອຍກາຍຍ່າງມາ ຕ້ອງອາບັດທຸກກົດ" ແລ້ວຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໑໗] ອັນໜຶ່ງ ພິກຂຸໃດອອກປາກຂໍຈີວອນຈາກຄະລິຫັດຊາຍ ຫຼື ຄະລິຫັດຍິງຜູ້ບໍ່ແມ່ນຍາດ ນອກສະໄໝ ຕ້ອງອາບັດນິດສັກຄິຍະປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ພິກຂຸຖືກຊິງຈີວອນໄປ ຫຼື ຈີວອນສູນຫາຍ ນີ້ເປັນສະໄໝໃນຂໍ້ນັ້ນ

### ເລື້ອງພິກຂຸຖືກຊິງຈີວອນ ຈົບ

## ສິກຂາບົດວິພັງ

[໕໑໘] ຄຳວ່າ ອັນໜຶ່ງ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ໆລໆ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ຄະລິຫັດຊາຍ ໄດ້ແກ່ ບຸຣຸດຜູ້ຄອງເຮືອນ

ທີ່ຊື່ວ່າ ຄະລິຫັດຍິງ ໄດ້ແກ່ ສະຕີຜູ້ຄອງເຮືອນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ພິກຂຸຖືກຊິງຈີວອນໄປ ໄດ້ແກ່ ຈີວອນຂອງພິກຂຸທີ່ພຣະຣາຊາ ໂຈນ ນັກເລງ ຫຼື ຄົນບາງພວກຊິງເອົາໄປ

ທີ່ຊື່ວ່າ ຈີວອນສູນຫາຍ ໄດ້ແກ່ ຈີວອນຂອງພິກຂຸຖືກໄຟໄໝ້ ນ້ຳພັດ ໜູ ຫຼື ປວກກັດ ຫຼື ທີ່ໃຊ້ສອຍຈົນເກົ່າ

ພິກຂຸອອກປາກຂໍນອກສະໄໝ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

# ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍ ອອກປາກຂໍຈາກຄະລິຫັດຜູ້ບໍ່ແມ່ນຍາດ ນອກສະໄໝ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍອອກປາກຂໍຈາກຄະລິຫັດຜູ້ບໍ່ແມ່ນຍາດ ນອກສະໄໝ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂ້ານ້ອຍອອກປາກຂໍ ຈາກຄະລິຫັດຜູ້ບໍ່ແມ່ນຍາດ ນອກສະໄໝ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວ ຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍ ຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄີຍະປາຈິດຕີ

[໕໘໐] ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຂໍຈີວອນນອກສະໄໝ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຂໍຈີວອນນອກສະໄໝ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຂໍຈີວອນນອກສະໄໝ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຂໍຈີວອນນອກສະໄໝ ຕ້ອງອາບັດທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຂໍຈີວອນນອກສະໄໝ ຕ້ອງອາບັດທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ຂໍຈີວອນນອກສະໄໝ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘໑] ໑. ພິກຂຸອອກປາກຂໍໃນສະໄໝ
໒. ພິກຂຸອອກປາກຂໍຈາກຍາດ
໓. ພິກຂຸອອກປາກຂໍຈາກຄົນປະວາຣະນາ
໔. ພິກຂຸອອກປາກຂໍເພື່ອພິກຂຸອົງອື່ນ
໕. ພິກຂຸຊື້ມາດ້ວຍຊັບຂອງຕົນ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ອັນຍາຕະກະວິນຍັດຕິສິກຂາບົດທີ ໖ ຈົບ**

# ໑. ຈີວອນວັກ

## ໗. ຕະຕຸດຕະຣິສິກຂາບົດ

### ວ່າດ້ວຍການອອກປາກຂໍຈີວອນເກີນ

### ເລື້ອງພຣະສັບພັກຄີ

[໕໘໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຂົ້າໄປຫາພິກຂຸທີ່ຖືກໂຈນຊີງຈີວອນໄປແລ້ວກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ ພິກຂຸທີ່ຖືກໂຈນຊີງຈີວອນໄປ ຫຼື ຈີວອນສູນຫາຍ ອອກປາກຂໍຈີວອນຈາກຄະລິຫັດຊາຍ ຫຼື ຄະລິຫັດຍິງຜູ້ບໍ່ແມ່ນຍາດໄດ້ ພວກທ່ານຈົ່ງຂໍຈີວອນເທີ້ນ"

ພິກຂຸເຫຼົ່ານັ້ນກ່າວວ່າ "ບໍ່ຕ້ອງ ຂ້ານ້ອຍ ພວກຂ້ານ້ອຍໄດ້ຈີວອນຄືນແລ້ວ"
ພວກພິກຂຸສັບພັກຄີກ່າວວ່າ "ພວກເຮົາຈະອອກປາກຂໍເພື່ອພວກທ່ານ"
ພິກຂຸເຫຼົ່ານັ້ນກ່າວວ່າ "ນິມົນອອກປາກຂໍເທີ້ນ ຂ້ານ້ອຍ"

ຕໍ່ຈາກນັ້ນ ພວກພິກຂຸສັບພັກຄີເຂົ້າໄປຫາພວກຄະລິຫັດກ່າວວ່າ "ທ່ານທັງຫຼາຍ ພວກພິກຂຸທີ່ຖືກໂຈນຊີງຈີວອນໄປມາເຖິງແລ້ວ ພວກທ່ານຈົ່ງຖວາຍຈີວອນແກ່ພວກທ່ານ" ແລ້ວອອກປາກຂໍຈີວອນເປັນຈຳນວນຫຼາຍ

ກໍສະໄໝນັ້ນ ຊາຍຄົນໜຶ່ງນັ່ງຢູ່ໃນທີ່ປະຊຸມບອກຊາຍອີກຄົນໜຶ່ງວ່າ "ພວກພຣະທີ່ຖືກໂຈນຊີງຈີວອນໄປມາເຖິງແລ້ວ ຂ້າພະເຈົ້າໄດ້ຖວາຍຈີວອນທ່ານເຫຼົ່ານັ້ນໄປແລ້ວ
ຊາຍຜູ້ນັ້ນຕອບວ່າ "ຂ້າພະເຈົ້າກໍໄດ້ຖວາຍໄປແລ້ວ"
ຊາຍອີກຄົນໜຶ່ງກໍກ່າວເຊັ່ນດຽວກັນວ່າ "ແມ່ນຂ້າພະເຈົ້າກໍໄດ້ຖວາຍໄປແລ້ວ

ພວກເຂົາຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງບໍ່ຮູ້ຈັກປະມານ ອອກປາກຂໍຈີວອນເປັນຈຳນວນຫຼວງຫຼາຍແນວນັ້ນນໍ ພວກທ່ານຈະເຮັດການຄ້າຂາຍຜ້າ ຫຼື ຈັດຕັ້ງຮ້ານຂາຍຜ້າແມ່ນບໍ?"

ພວກພິກຂຸໄດ້ຍິນຄຳຕຳໜິ ປະນາມ ໂພນທະນາຂອງຊາວບ້ານ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງບໍ່ຮູ້ຈັກປະມານອອກປາກຂໍຈີວອນເປັນຈຳນວນຫຼາຍນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານບໍ່ຮູ້ຈັກປະມານ ຂໍຈີວອນເປັນຈຳນວນຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງບໍ່ຮູ້ຈັກປະມານຂໍຈີວອນຈຳນວນຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໘໓] ຖ້າຄະລຶຫັດຊາຍ ຫຼື ຄະລຶຫັດຍິງຜູ້ບໍ່ແມ່ນຍາດ ນຳຈີວອນຈຳນວນຫຼາຍມາປະວາຣະນາພິກຂຸນັ້ນ ພິກຂຸນັ້ນເພິ່ງຍິນດີຈີວອນມີອຸດຕະຣາສົງ ແລະ ອັນຕະຣະວາສົກເປັນຢ່າງຫຼາຍຈາກຈີວອນທີ່ເຂົານຳມານັ້ນ ຖ້າຍິນດີເກີນກວ່ານັ້ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໕໘໔] ຄຳວ່າ ຖ້າ ຯລຯ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ຖືກໂຈນຊິງຈີວອນໄປ

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ຄະລຶຫັດຊາຍ ໄດ້ແກ່ບຸຣຸດຜູ້ຄອງເຮືອນ
ທີ່ຊື່ວ່າ ຄະລຶຫັດຍິງ ໄດ້ແກ່ ສະຕີຜູ້ຄອງເຮືອນ
ຄຳວ່າ ຈີວອນຈຳນວນຫຼາຍ ຄື ຈີວອນຫຼາຍຜືນ
ຄຳວ່າ ນຳຯລຯມາປະວາຣະນາ ຄື ນຳມາປະວາຣະນາວ່າ ທ່ານຈົ່ງຮັບຈີວອນຕາມທີ່ປາຖະໜາເທີ້ນ

ຄຳວ່າ ພິກຂຸນັ້ນເພິ່ງຍິນດີຈີວອນມີອຸດຕະຣາສົງ ແລະ ອັນຕະຣະວາສົກເປັນຢ່າງຫຼາຍຈາກ ຈີວອນທີ່ເຂົານຳມານັ້ນ ຄວາມວ່າ ຖ້າຈີວອນຫາຍ ໓ ຜືນ ທ່ານເພິ່ງຍິນດີ ໒ ຜືນ ຈີວອນຫາຍ ໒ ຜືນ ເພິ່ງຍິນດີ ໑ ຜືນ ຫາຍຜືນດຽວບໍ່ເພິ່ງຍິນດີ

ຄຳວ່າ ຖ້າຍິນດີເກີນກວ່ານັ້ນ ຄວາມວ່າ ພິກຂຸອອກປາກຂໍເກີນກວ່ານັ້ນ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍເຂົ້າໄປຫາຄະລິຫັດຜູ້ບໍ່ແມ່ນຍາດ ແລ້ວອອກປາກຂໍເກີນກຳນົດ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍເຂົ້າໄປຫາຄະລິຫັດຜູ້ບໍ່ແມ່ນຍາດ ແລ້ວອອກປາກຂໍເກີນກຳນົດ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂ້ານ້ອຍເຂົ້າໄປຫາຄະລິຫັດ ຜູ້ບໍ່ແມ່ນຍາດແລ້ວອອກປາກຂໍເກີນກຳນົດ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ ທ່ານ" ເມື່ອສະລະແລ້ວເພິ່ງສະແດງ ອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໕໔໕] ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຂໍຈີວອນເກີນກຳນົດ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຂໍຈີວອນເກີນກຳນົດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຂໍຈີວອນເກີນກຳນົດ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດຂໍຈີວອນເກີນກຳນົດ ຕ້ອງອາບັດທຸກກົດ
ຄະລືຫັດທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຂໍຈີວອນເກີນກຳນົດ ຕ້ອງອາບັດທຸກກົດ
ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ຂໍຈີວອນເກີນກຳນົດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໔໖] ໑. ພິກຂຸທີ່ຮັບເອົາໄປຍ້ອນຄິດວ່າ ຈະນຳຈີວອນທີ່ເຫຼືອມາຄືນ
໒. ພິກຂຸທີ່ຄະລືຫັດຖວາຍດ້ວຍຄຳເວົ້າວ່າ "ຈີວອນທີ່ເຫຼືອເປັນຂອງທ່ານອົງດຽວ"
໓. ພິກຂຸທີ່ຄະລືຫັດບໍ່ໄດ້ຖວາຍຍ້ອນຈີວອນຖືກຊິງໄປ
໔. ພິກຂຸທີ່ຄະລືຫັດບໍ່ໄດ້ຖວາຍຍ້ອນຈີວອນສູນຫາຍ
໕. ພິກຂຸຜູ້ຍິນດີຈີວອນທີ່ຍາດຖວາຍ
໖. ພິກຂຸຜູ້ຍິນດີຈີວອນທີ່ທາຍົກປະວາຣະນາຖວາຍ
໗. ພິກຂຸຜູ້ຍິນດີຈີວອນທີ່ໄດ້ມາດ້ວຍຊັບຂອງຕົນ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ຕະຕຸດຕະຣິສິກຂາບົດທີ ໗ ຈົບ**

# ໑. ຈີວອນວັກ

## ໗. ອຸປັກຂະຕະສິກຂາບົດ

### ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຊາຍຄົນໜຶ່ງກ່າວກັບພັນລະຍາວ່າ "ຂ້ອຍຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ

ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອົງໜຶ່ງໄດ້ຍິນຊາຍຄົນນັ້ນກ່າວ ຈຶ່ງເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ແລ້ວກ່າວວ່າ "ທ່ານອຸປະນັນທະ ທ່ານມີບຸນຫຼາຍ ຊາຍຄົນໜຶ່ງໃນທີ່ນັ້ນກ່າວກັບພັນລະຍາວ່າ ຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ"

ທ່ານພຣະອຸປະນັນທະກ່າວວ່າ "ແມ່ນ ເຂົາເປັນອຸປັດຖາກຂອງຂ້ານ້ອຍເອງ" ຕໍ່ມາທ່ານພຣະອຸປະນັນທະສາກະຍະບຸດໄດ້ເຂົ້າໄປຫາຜູ້ນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວວ່າ "ໄດ້ຂ່າວວ່າ ທ່ານຕ້ອງການຈະນິມົນອາດຕະມາໃຫ້ຄອງຈີວອນແມ່ນບໍ?"

ເຂົາຕອບວ່າ "ແມ່ນແລ້ວ ຂ້ານ້ອຍມີຄວາມຄິດວ່າຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ"

ທ່ານພຣະອຸປະນັນທະກ່າວວ່າ "ຫາກທ່ານຕ້ອງການຈະນິມົນອາດຕະມາໃຫ້ຄອງຈີວອນ

ກໍຈົ່ງໃຫ້ຄອງຈີວອນຊະນິດນີ້ ຈີວອນທີ່ອາດຕະມາບໍ່ໃຊ້ ແມ່ນນິມົນອາດຕະມາໃຫ້ຄອງກໍຈະມີປະໂຫຍດອັນໃດ"

ບັດນັ້ນ ບຸຣຸດນັ້ນຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດມັກຫຼາຍ ບໍ່ສັນໂດດ ຈະນິມົນໃຫ້ຄອງຈີວອນ ບໍ່ແມ່ນຈະເຮັດໄດ້ງ່າຍ ເປັນຫຍັງ ພຣະອຸປະນັນທະສາກະຍະບຸດເຊິ່ງເຮົາບໍ່ໄດ້ປະວາຣະນາໄວ້ກ່ອນ ຈຶ່ງເຂົ້າມາກຳນົດຊະນິດຈີວອນແນວນີ້ບໍ"

ພວກພິກຂຸໄດ້ຍິນຄຳຕຳໜິ ປະນາມ ໂພນທະນາຂອງຊາວບ້ານ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຈຶ່ງເຂົ້າໄປຫາຄະລືຫັດກຳນົດຊະນິດຈີວອນນໍ"

ເມື່ອພິກຂຸເຫຼົ່ານັ້ນ ຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນແຕ່ທ່ານເຂົ້າໄປຫາຄະລືຫັດແລ້ວກຳນົດຊະນິດຈີວອນ ແມ່ນບໍ?" ພຣະອຸປະນັນທະສາກະຍະບຸດທູນຮັບ ວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸປະນັນທະເຂົາເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ

ທ່ານພຣະອຸປະນັນທະທູນຕອບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ຄະລືຫັດຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມຫຼືບໍ່ເໝາະສົມ ຂອງທີ່ມີຢູ່ ຫຼື ບໍ່ມີຂອງຄົນຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ທ່ານນັ້ນເຊິ່ງພວກເຂົາບໍ່ໄດ້ປະວາຣະນາໄວ້ກ່ອນເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດແລ້ວກຳນົດຊະນິດຈີວອນ ໂມຄະບຸຣຸດ ການກະທຳແບວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໗] ກໍ ຄະລືຫັດຊາຍ ຫຼື ຄະລືຫັດຍິງຜູ້ບໍ່ແມ່ນຍາດ ກະກຽມຊັບເປັນຄ່າຈີວອນ ເຈາະຈົງພິກຂຸວ່າ "ເຮົາຈະຊື້ຈີວອນດ້ວຍຊັບເປັນຄ່າຈີວອນນີ້ແລ້ວ ນິມົນພິກຂຸຊື່ນີ້ໃຫ້ຄອງຈີວອນ" ຖ້າພິກຂຸນັ້ນເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປກຳນົດຊະນິດຈີວອນໃນທີ່ທີ່ເຂົາກຽມຈີວອນໄວ້ ຍ້ອນຕ້ອງການຈີວອນດີວ່າ "ດີແລ້ວ ທ່ານຈົ່ງຊື້ຈີວອນເຊັ່ນນັ້ນເຊັ່ນນີ້ດ້ວຍຊັບເປັນຄ່າຈີວອນນີ້ແລ້ວໃຫ້ອາດຕະມາຄອງເທີ້ນ" ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໕໔໘] ຄຳວ່າ ກໍຯລຯເຈາະຈົງພິກຂຸ ໄດ້ແກ່ ເພື່ອປະໂຫຍດຂອງພິກຂຸ ຄື ມຸ້ງສະເພາະພິກຂຸ ປາຖະໜາຈະໃຫ້ພິກຂຸຄອງຈີວອນ

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ຄະລືຫັດຊາຍ ໄດ້ແກ່ ບຸຣຸດຜູ້ຄອງເຮືອນ

ທີ່ຊື່ວ່າ ຄະລືຫັດຍິງ ໄດ້ແກ່ ສະຕີຜູ້ຄອງເຮືອນ

ທີ່ຊື່ວ່າ ຊັບເປັນຄ່າຈີວອນ ໄດ້ແກ່ ເງິນ ຄຳ ແກ້ວມຸກດາ ແກ້ວມະນີ ແກ້ວຕາແມວ ແກ້ວຜຶກຜ້າ ດ້າຍ ຫຼື ຝ້າຍ

ຄຳວ່າ ດ້ວຍຊັບເປັນຄ່າຈີວອນນີ້ ຄື ຊັບທີ່ເຂົາຈັດຫາໄວ້ສະເພາະ

ຄຳວ່າ ຊື້ ໄດ້ແກ່ ແລກປ່ຽນ

ຄຳວ່າ ໃຫ້ຯລຯຄອງ ຄື ຖວາຍ

ຄຳວ່າ ຖ້າພິກຂຸນັ້ນຯລຯໃນທີ່ທີ່ເຂົາກຽມຈີວອນໄວ້ ໄດ້ແກ່ ພິກຂຸອົງທີ່ເຂົາກະກຽມຊັບເປັນຄ່າຈີວອນໄວ້ຖວາຍໂດຍສະເພາະ

ຄຳວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຄື ທາຍົກບໍ່ໄດ້ກ່າວໄວ້ກ່ອນວ່າ "ທ່ານຜູ້ຈະເລີນ ທ່ານຕ້ອງການຈີວອນຊະນິດໃດ ຂ້ານ້ອຍຈະຊື້ຈີວອນຊະນິດໃດຖວາຍທ່ານ"

ຄຳວ່າ ເຂົ້າໄປ ຄື ໄປເຖິງເຮືອນແລ້ວເຂົ້າໄປຫາທີ່ໃດທີ່ໜຶ່ງ

ຄຳວ່າ ກຳນົດຊະນິດຈີວອນ ຄື ກຳນົດວ່າ ຂໍໃຫ້ເປັນຜ້າຍາວ ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດ

ຄຳວ່າ ດ້ວຍຊັບເປັນຄ່າຈີວອນນີ້ ຄື ຊັບທີ່ເຂົາຈັດຫາໄວ້ສະເພາະ

ຄຳວ່າ ເຊັ່ນນັ້ນເຊັ່ນນີ້ ຄື ຍາວ ຫຼື ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດ

ຄຳວ່າ ຊື້ ໄດ້ແກ່ ແລກປ່ຽນ

ຄຳວ່າ ຈົ່ງໃຫ້ຄອງ ຄື ຈົ່ງຖວາຍ

ຄຳວ່າ ຍ້ອນຕ້ອງການຈີວອນດີ ຄື ຕ້ອງການຜ້າເນື້ອດີ ຫຼື ຜ້າທີ່ມີລາຄາແພງ ເຂົາຊື້ຈີວອນຜືນຍາວ ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດຕາມຄຳຂອງພິກຂຸນັ້ນ ຕ້ອງອາບັດທຸກກົດຍ້ອນພະຍາ ຍາມ

ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ເຂົາບໍ່ໄດ້ ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລິຫັດຜູ້ບໍ່ແມ່ນຍາດ ກຳນົດຊະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະ

ວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດ ກໍານົດຊະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດ ກໍານົດຊະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນ ຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໔໓໐] ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສໍາຄັນວ່າບໍ່ແມ່ນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລືຫັດແລ້ວກໍານົດຊະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລືຫັດແລ້ວກໍານົດຊະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສໍາຄັນວ່າເປັນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລືຫັດແລ້ວກໍານົດຊະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກາກົດ

ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ເຂົ້າໄປກຳນົດຊະນິດຈີວອນ ຕ້ອງອາບັດທຸກາກົດ

ຄະລືຫັດທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ເຂົ້າໄປກຳນົດຊະນິດຈີວອນ ຕ້ອງອາບັດທຸກາກົດ

ຄະລືຫັດທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດເຂົ້າໄປກຳນົດຊະນິດຈີວອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໓໑] ໑. ພິກຂຸຂໍຈາກຄະລືຫັດທີ່ເປັນຍາດ

໒. ພິກຂຸຂໍຈາກຄະລືຫັດທີ່ປະວາຣະນາ

໓. ພິກຂຸຂໍເພື່ອພິກຂຸອື່ນ

໔. ພິກຂຸຊື້ມາດ້ວຍຊັບຂອງຕົນ

໕. ພິກຂຸຜູ້ເມື່ອຄະລືຫັດ ຜູ້ຕ້ອງການຊື້ຈີວອນລາຄາແພງໃຫ້ ແຕ່ຕົນເອງກັບໃຫ້ຊື້ຈີວອນລາຄາຖືກ

໖. ພິກຂຸວິກົນຈະລິດ

໗. ພິກຂຸຕົ້ນບັນຍັດ

**ອຸປັກຂະຕະສິກຂາບົດທີ ໘ ຈົບ**

# ໑. ຈີວອນວັກ

# ໙. ທຸຕິຍະອຸປັກຂະຕະສິກຂາບົດ

## ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນ ຂໍ້ທີ ໒

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໓໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ບຸຣຸດຄົນໜຶ່ງກ່າວກັບບຸຣຸດອີກຄົນໜຶ່ງວ່າ “ເຮົາຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ” ແມ່ນບຸຣຸດຄົນນັ້ນກໍກ່າວວ່າ “ເຮົາກໍຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ

ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອີງໜຶ່ງ ໄດ້ຍິນການສົນທະນາຂອງບຸຣຸດເຫຼົ່ານັ້ນ ຈຶ່ງເຂົ້າໄປຫາທ່ານພຣະອຸປະນັນທະເຖິງທີ່ຢູ່ແລ້ວກ່າວວ່າ "ທ່ານອຸປະນັນທະ ທ່ານມີບຸນຫຼາຍ ບຸຣຸດຄົນໜຶ່ງໃນທີ່ນັ້ນກ່າວກັບບຸຣຸດອີກຄົນໜຶ່ງວ່າ ຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ ແມ່ນບຸຣຸດຄົນນັ້ນກໍກ່າວວ່າ ເຮົາກໍຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ

ທ່ານພຣະອຸປະນັນທະກ່າວວ່າ "ແມ່ນແລ້ວ ບຸຣຸດທັງສອງເປັນອຸປັດຖາກຂອງຂ້ານ້ອຍເອງ" ຕໍ່ມາ ທ່ານພຣະອຸປະນັນທະສາກະຍະບຸດໄປຫາບຸຣຸດທັງສອງເຖິງທີ່ຢູ່ເມື່ອເຖິງແລ້ວຈຶ່ງກ່າວວ່າ "ໄດ້ຂ່າວວ່າ ທ່ານທັງສອງຕ້ອງການຈະນິມົນອາດຕະມາໃຫ້ຄອງຈີວອນຫຼາຍຜືນແມ່ນບໍ?"

ບຸຣຸດທັງສອງຕອບວ່າ "ຈິງຂ້ານ້ອຍ ພວກຂ້ານ້ອຍມີຄວາມຄິດຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ

ທ່ານພຣະອຸປະນັນທະກ່າວວ່າ "ຖ້າທ່ານທັງສອງຕ້ອງການຈະນິມົນອາດຕະມາໃຫ້ຄອງຈີວອນ ກໍຈົ່ງໃຫ້ຄອງຈີວອນຊະນິດນີ້ ຈີວອນທີ່ອາດຕະມາບໍ່ໃຊ້ແມ່ນນິມົນອາດຕະມາໃຫ້ຄອງກໍຈະມີປະໂຫຍດອັນໃດ"

ບຸຣຸດທັງສອງຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດມັກຫຼາຍ ບໍ່ສັນໂດດ ຈະນິມົນໃຫ້ຄອງຈີວອນ ກໍເຮັດໄດ້ຍາກ ເປັນຫຍັງ ພຣະອຸປະນັນທະ ເຊິ່ງພວກເຮົາບໍ່ໄດ້ປະວາຣະນາໄວ້ກ່ອນຈຶ່ງມາກຳນົດຊະນິດຈີວອນແນວນັ້ນນໍ"

ພວກພິກຂຸໄດ້ຍິນບຸຣຸດທັງສອງຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນຈຶ່ງເຂົ້າໄປຫາພວກຄະລິຫັດກຳນົດຈີວອນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນແຕ່ທ່ານໄປກຳນົດຊະນິດຈີວອນ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸປະນັນທະ ຄົນເຫຼົ່ານັ້ນເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ" ພຣະອຸປະນັນທະທູນຕອບວ່າ "ຄົນເຫຼົ່ານັ້ນບໍ່ແມ່ນຍາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ຄະລຶຫັດຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມຫຼືບໍ່ເໝາະສົມ ຂອງທີ່ມີຢູ່ ຫຼື ບໍ່ມີຂອງຄົນຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ທ່ານ ນັ້ນເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລຶຫັດຜູ້ບໍ່ແມ່ນຍາດແລ້ວກຳນົດຊະນິດຈີວອນ ໂມຄະບຸຣຸດ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດ ນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໓໓] ກໍ ຄະລຶຫັດຊາຍ ຫຼື ຄະລຶຫັດຍິງຜູ້ບໍ່ແມ່ນຍາດ ໒ ຄົນ ກະກຽມຊັບເປັນຄ່າຈີວອນຄົນລະຜືນ ເຈາະຈົງພິກຂຸວ່າ "ພວກເຮົາຈະຊື້ຈີວອນຄົນລະຜືນດ້ວຍຊັບເປັນຄ່າຈີວອນຄົນລະຜືນນີ້ແລ້ວນິມົນພິກຂຸຊື່ນີ້ໃຫ້ຄອງຈີວອນຫຼາຍຜືນ" ຖ້າພິກຂຸນັ້ນ ເຊິ່ງພວກເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປກຳນົດຊະນິດຈີວອນໃນທີ່ທີ່ເຂົາກຽມຈີວອນໄວ້ ຍ້ອນຕ້ອງການຈີວອນດີວ່າ "ດີແລ້ວ ທ່ານທັງສອງຈົ່ງລວມກັນຊື້ຈີວອນເຊັ່ນນັ້ນເຊັ່ນນີ້ ດ້ວຍຊັບເປັນຄ່າຈີວອນຄົນລະຜືນນີ້ແລ້ວນິມົນອາດຕະມາໃຫ້ຄອງເທີ້ນ" ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໕໓໔] ຄຳວ່າ ກໍຯລຯເຈາະຈົງພິກຂຸ ໄດ້ແກ່ ເພື່ອປະໂຫຍດຂອງພິກຂຸ ຄື ມຸ້ງສະເພາະພິກຂຸ ປາຖະໜາຈະໃຫ້ພິກຂຸຄອງຈີວອນ

ຄຳວ່າ ໒ ຄົນ ຄື ມີ ໒ ຄົນ

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ຄະລຶຫັດຊາຍ ໄດ້ແກ່ ບຸຣຸດຜູ້ຄອງເຮືອນ

ທີ່ຊື່ວ່າ ຄະລຶຫັດຍິງ ໄດ້ແກ່ ສະຕີຜູ້ຄອງເຮືອນ

ທີ່ຊື່ວ່າ ຊັບເປັນຄ່າຈີວອນ ໄດ້ແກ່ ເງິນ ຄຳ ແກ້ວມຸກດາ ແກ້ວມະນີ ແກ້ວຕາແມວ ແກ້ວຜຶກ ຜ້າ ດ້າຍ ຫຼື ຝ້າຍ

ຄຳວ່າ ດ້ວຍຊັບເປັນຄ່າຈີວອນຄົນລະຜືນນີ້ ຄື ຊັບທີ່ເຂົາຈັດຫາໄວ້ສະເພາະ

ຄຳວ່າ ຊື້ ໄດ້ແກ່ ແລກປ່ຽນ

ຄຳວ່າ ໃຫ້ ຯລຯ ຄອງ ຄື ຖວາຍ

ຄຳວ່າ ຖ້າພິກຂຸນັ້ນ ຯລຯ ໃນທີ່ທີ່ເຂົາກຽມຈີວອນໄວ້ ໄດ້ແກ່ ພິກຂຸອີງທີ່ເຂົາທັງສອງກະກຽມຊັບເປັນຄ່າຈີວອນໄວ້ຖວາຍໂດຍສະເພາະ

ຄຳວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຄື ທາຍົກທັງສອງບໍ່ໄດ້ກ່າວໄວ້ກ່ອນວ່າ "ທ່ານຜູ້ຈະເລີນ ທ່ານຕ້ອງການຈີວອນຊະນິດໃດ ພວກເຮົາຈະຊື້ຈີວອນຊະນິດໃດຖວາຍທ່ານ"

ຄຳວ່າ ເຂົ້າໄປ ຄື ໄປເຖິງເຮືອນແລ້ວເຂົ້າໄປຫາທີ່ໃດທີ່ໜຶ່ງ

ຄຳວ່າ ກຳນົດຊະນິດຈີວອນ ຄື ກຳນົດວ່າ ຂໍໃຫ້ເປັນຜ້າຍາວ ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດ

ຄຳວ່າ ດ້ວຍຊັບເປັນຄ່າຈີວອນຄົນລະຜືນນີ້ ຄື ຊັບທີ່ເຂົາຈັດຫາໄວ້ສະເພາະ

ຄຳວ່າ ເຊັ່ນນັ້ນເຊັ່ນນີ້ ຄື ຍາວ ຫຼື ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດ

ຄຳວ່າ ຊື້ ໄດ້ແກ່ ແລກປ່ຽນ

ຄຳວ່າ ຈົ່ງໃຫ້ຄອງ ຄື ຈົ່ງຖວາຍ

ຄຳວ່າ ທ່ານທັງສອງຈົ່ງລວມກັນ ຄື ຄົນ ໒ ຄົນຮ່ວມກັນ

ຄຳວ່າ ຍ້ອນຕ້ອງການຈີວອນດີ ຄື ຕ້ອງການຜ້າເນື້ອດີ ຫຼື ຜ້າລາຄາແພງ

ເຂົາຊື້ຈີວອນຜືນຍາວ ກວ້າງ ເນື້ອແໜ້ນ ຫຼື ເນື້ອລະອຽດຕາມຄຳພິກຂຸນັ້ນ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດ ກຳນົດຊະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ ເຂົາບໍ່ໄດ້ປະວາ

ຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດ ກໍານົດຂະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ ປະນົມມື ກ່າວວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດ ກໍານົດຂະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໔໓໕] ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສໍາຄັນວ່າບໍ່ແມ່ນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາພວກຄະລືຫັດແລ້ວກໍານົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາພວກຄະລືຫັດແລ້ວກໍານົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລືຫັດທີ່ບໍ່ແມ່ນຍາດ ພິກຂຸສໍາຄັນວ່າເປັນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາພວກຄະລືຫັດແລ້ວກໍານົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸສໍາຄັນວ່າບໍ່ແມ່ນຍາດ ເຂົ້າໄປກໍານົດຂະນິດຈີວອນ ຕ້ອງອາບັດທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ເຂົ້າໄປກໍານົດຂະນິດຈີວອນ ຕ້ອງອາບັດທຸກກົດ

ຄະລືຫັດທີ່ເປັນຍາດ ພິກຂຸສໍາຄັນວ່າເປັນຍາດເຂົ້າໄປກໍານົດຂະນິດຈີວອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໖] ໑. ພິກຂຸຂໍຈາກຄະລືຫັດທີ່ເປັນຍາດ
໒. ພິກຂຸຂໍຈາກຄະລືຫັດທີ່ປະວາຣະນາ
໓. ພິກຂຸຂໍເພື່ອພິກຂຸອື່ງອື່ນ
໔. ພິກຂຸຊື້ມາດ້ວຍຊັບຂອງຕົນ
໕. ພິກຂຸຜູ້ເມື່ອພວກຄະຫຼືຫັດຕ້ອງການຊື້ຈີວອນລາຄາແພງ ຕົນເອງກັບໃຫ້ຊື້ຈີວອນລາຄາຖືກ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ທຸຕິຍະອຸປັກຂະຕະສິກຂາບົດທີ ໙ ຈົບ**

# ໑. ຈີວອນວັກ

## ໑໐. ຣາຊະສິກຂາບົດ

## ວ່າດ້ວຍຊັບເປັນຄ່າຈີວອນທີ່ພຣະຣາຊາເປັນຕົ້ນໃຫ້ທູດນຳມາຖວາຍ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ມະຫາອຳມາດອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະບຸດສົ່ງທູດໄປຖວາຍຊັບເປັນຄ່າຈີວອນ ແລະສັ່ງວ່າ "ທ່ານຈົ່ງເອົາຊັບເປັນຄ່າຈີວອນນີ້ຊື້ຈີວອນແລ້ວນິມົນພຣະອຸປະນັນທະໃຫ້ຄອງ"

ຕໍ່ມາ ທູດນັ້ນໄດ້ເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍນຳຊັບເປັນຄ່າຈີວອນມາເຈາະຈົງທ່ານ ນິມົນທ່ານຮັບຊັບເປັນຄ່າຈີວອນນີ້ເທີ້ນ ຂ້ານ້ອຍ"

ເມື່ອທູດກ່າວຢ່າງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ກ່າວວ່າ "ອາດຕະມາຮັບຊັບເປັນຄ່າຈີວອນບໍ່ໄດ້ ຮັບສະເພາະຈີວອນທີ່ສົມຄວນຕາມການ"

ເມື່ອທ່ານກ່າວຢ່າງນັ້ນ ທູດຖາມວ່າ "ມີໃຜຜູ້ເປັນໄວຍາວັດຈະກອນຂອງທ່ານແດ່ບໍ"

ຂະນະນັ້ນ ອຸປາສົກຄົນໜຶ່ງມີທຸລະໄປທີ່ວັດ ທ່ານພຣະອຸປະນັນທະສາກະຍະບຸດ ຈຶ່ງກ່າວກັບທູດວ່າ "ອຸປາສົກນີ້ເປັນໄວຍາວັດຈະກອນຂອງພິກຂຸທັງຫຼາຍ"

ທູດນັ້ນຈຶ່ງຕົກລົງກັບອຸປາສົກແລ້ວເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ ກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕົກລົງກັບອຸປາສົກທີ່ທ່ານແນະນຳວ່າເປັນໄວຍາວັດຈະກອນແລ້ວ ທ່ານຈົ່ງໄປຫາໃນເວລາອັນສົມຄວນ ເຂົາຈັກນິມົນທ່ານໃຫ້ຄອງຈີວອນ"

ຕໍ່ມາ ມະຫາອຳມາດສົ່ງທູດໃຫ້ໄປຫາທ່ານພຣະອຸປະນັນທະສາກະຍະບຸດໃຫ້ຂາບຮຽນວ່າ "ຂໍໃຫ້ພຣະຜູ້ເປັນເຈົ້າຈົ່ງໃຊ້ສອຍຈີວອນເທີ້ນ ຂ້ານ້ອຍຕ້ອງການຈະໃຫ້ພຣະຜູ້ເປັນເຈົ້າໃຊ້ຈີວອນນັ້ນ" ທ່ານພຣະອຸປະນັນທະສາກະຍະບຸດບໍ່ກ່າວອັນໃດກັບອຸປາສົກນັ້ນ

ແມ່ນຄັ້ງທີ ໔ ມະຫາອຳມາດກໍສົ່ງທູດໃຫ້ໄປຫາທ່ານພຣະອຸປະນັນທະສາກະຍະບຸດ ໃຫ້ຂາບຮຽນວ່າ "ຂໍໃຫ້ພຣະຜູ້ເປັນເຈົ້າຈົ່ງໃຊ້ສອຍຈີວອນເທີ້ນ ຂ້ານ້ອຍຕ້ອງການຈະໃຫ້ພຣະຜູ້ເປັນເຈົ້າໃຊ້ຈີວອນນັ້ນ" ແມ່ນຄັ້ງທີ ໔ ທ່ານພຣະອຸປະນັນທະສາກະຍະບຸດກໍຍັງບໍ່ກ່າວອັນໃດກັບອຸປາສົກນັ້ນ

ແມ່ນຄັ້ງທີ ໓ ມະຫາອຳມາດກໍສົ່ງທູດໄປຫາທ່ານພຣະອຸປະນັນທະສາກະຍະບຸດ ໃຫ້ຂາບຮຽນວ່າ "ຂໍໃຫ້ພຣະຜູ້ເປັນເຈົ້າຈົ່ງໃຊ້ສອຍຈີວອນເທີ້ນ ຂ້ານ້ອຍຕ້ອງການຈະໃຫ້ພຣະຜູ້ເປັນເຈົ້າໃຊ້ສອຍຈີວອນນັ້ນ"

ສະໄໝນັ້ນເປັນເວລາປະຊຸມຂອງຊາວນິຄົມ ກໍຊາວນິຄົມໄດ້ຕັ້ງກະຕິກາໄວ້ວ່າ ຜູ້ມາປະຊຸມລ່າຊ້າຕ້ອງຖືກປັບ ໕໐ ກະຫາປະນະ

ຕໍ່ມາ ທ່ານພຣະອຸປະນັນທະສາກະຍະບຸດໄປຫາອຸປາສົກເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວວ່າ "ອາດຕະມາຕ້ອງການຈີວອນ"

ອຸປາສົກກ່າວວ່າ "ໂຜດຖ້າວັນໜຶ່ງເທີ້ນ ຂ້ານ້ອຍ ວັນນີ້ເປັນເວລາປະຊຸມຂອງຊາວນິຄົມ ແລະຊາວນິຄົມໄດ້ຕັ້ງກະຕິກາວ່າ ຜູ້ມາປະຊຸມລ່າຊ້າຕ້ອງຖືກປັບ ໕໐ ກະຫາປະນະ"

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ຈົ່ງຖວາຍຈີວອນອາດຕະມາວັນນີ້ແຫຼະ" ແລ້ວຢຶດຖົງໄວ້

ອຸປາສົກຖືກທ່ານພຣະອຸປະນັນທະສາກະຍະບຸດຂູ່ຊີ ຈຶ່ງໄດ້ຊື້ຈີວອນຖວາຍທ່ານພຣະອຸປະນັນທະ ສາກະຍະບຸດແລ້ວໄປປະຊຸມລ່າຊ້າ

ຊາວບ້ານຖາມວ່າ “ເຫດໃດທ່ານມາລ່າຊ້າ ທ່ານຕ້ອງເສຍຄ່າປັບ ໕໐ ກະຫາປະນະ”

ບັດນັ້ນ ອຸປາສົກຈຶ່ງເລົ່າເລື່ອງນັ້ນໃຫ້ຊາວບ້ານເຫຼົ່ານັ້ນຮູ້ ພວກຊາວບ້ານພາກັນ ຕຳໜິ ປະນາມ ໂພນທະນາວ່າ “ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມັກຫຼາຍ ບໍ່ສັນໂດດ ຍາກທີ່ໃຜ ໆ ຈະໃຫ້ຄວາມຊ່ວຍເຫຼືອສະມະນະເຫຼົ່ານັ້ນໄດ້ ເປັນຫຍັງ ທ່ານພຣະອຸປະນັນທະ ສາກະຍະບຸດ ເມື່ອອຸປາສົກກ່າວວ່າ ໂຜດຖ້າວັນໜຶ່ງເທີ້ນ ຂ້ານ້ອຍ ກໍບໍ່ຍອມຖ້າ”

ພິກຂຸທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ທ່ານອຸປະນັນທະສາກະຍະບຸດຜູ້ເຊິ່ງອຸປາສົກຂໍຮ້ອງຢູ່ວ່າ ທ່ານຜູ້ຈະເລີນ ໂຜດຖ້າວັນໜຶ່ງ ກໍບໍ່ຍອມຖ້າ” ເມື່ອພິກຂຸ ເຫຼົ່ານັ້ນຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ “ອຸປະນັນທະ ໄດ້ຂ່າວວ່າ ອຸປາສົກກ່າວກັບທ່ານວ່າ ໂຜດຖ້າວັນໜຶ່ງກ່ອນເທີ້ນຂ້ານ້ອຍ ທ່ານກໍບໍ່ຍອມຖ້າ ແມ່ນບໍ?” ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຜູ້ເຊິ່ງອຸປາສົກກ່າວວ່າ ທ່ານຜູ້ຈະເລີນ ທ່ານຈົ່ງຖ້າວັນໜຶ່ງກ່ອນເທີ້ນ ກໍບໍ່ຍອມຖ້ານໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໓໗] ກໍ ພຣະຣາຊາ ຣາຊະອຳມາດ ພາມ ຫຼື ຄະຫະບໍດີ ຜູ້ໃດ ຜູ້ໜຶ່ງ ສົ່ງທູດມາຖວາຍຊັບເປັນຄ່າຈີວອນເຈາະຈົງພິກຂຸພ້ອມກັບສັ່ງວ່າ “ທ່ານຈົ່ງເອົາຊັບເປັນຄ່າຈີວອນ ນີ້ຊື້ຈີວອນ ແລ້ວນິມົນພິກຂຸຊື່ນີ້ໃຫ້ຄອງຈີວອນ” ຖ້າທູດນັ້ນເຂົ້າໄປຫາພິກຂຸນັ້ນກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ຂ້ານ້ອຍນຳຊັບເປັນຄ່າຈີວອນນີ້ມາເຈາະຈົງພຣະຜູ້ເປັນເຈົ້າ ພຣະຜູ້ເປັນເຈົ້າຈົ່ງຮັບຊັບເປັນຄ່າຈີວອນນີ້ເທີ້ນ” ພິກຂຸນັ້ນເພິ່ງກ່າວກັບທູດນັ້ນຢ່າງນີ້ວ່າ “ພວກອາດຕະມາຮັບຊັບເປັນຄ່າຈີວອນບໍ່ໄດ້ ຮັບສະເພາະຈີວອນທີ່ສົມຄວນຕາມການ” ຖ້າທູດນັ້ນກ່າວກັບພິກຂຸນັ້ນຢ່າງນີ້ວ່າ “ມີໃຜຜູ້ເປັນໄວຍາວັດຈະກອນຂອງທ່ານແດ່ບໍ?” ພິກຂຸຜູ້ຕ້ອງການຈີວອນເພິ່ງສະແດງຄົນວັດ ຫຼື ອຸປາສົກໃຫ້ເປັນໄວຍາວັດຈະກອນວ່າ “ຜູ້ນີ້ເປັນໄວຍາວັດຈະກອນຂອງພິກຂຸທັງຫຼາຍ” ຖ້າທູດ

ຕົກລົງກັບໄວຍາວັດຈະກອນແລ້ວ ເຂົ້າໄປຫາພິກຂຸນັ້ນກ່າວຢ່າງນີ້ວ່າ "ຂ້າພະເຈົ້າຕົກລົງກັບຄົນທີ່ທ່ານແນະນຳວ່າເປັນໄວຍາວັດຈະກອນແລ້ວ ທ່ານຈົ່ງໄປຫາໃນເວລາອັນສົມຄວນ ເຂົາຈະນິມົນທ່ານໃຫ້ຄອງຈີວອນ" ພິກຂຸທັງຫຼາຍ ພິກຂຸຕ້ອງການຈີວອນເພິ່ງເຂົ້າໄປຫາໄວຍາວັດຈະກອນແລ້ວທວງ ຫຼື ເຕືອນ ໒ - ໓ ຄັ້ງວ່າ "ອາດຕະມາຕ້ອງການຈີວອນ" ເມື່ອທວງຫຼືເຕືອນ ໒ - ໓ ຄັ້ງ ໃຫ້ເຂົາຈັດຈີວອນສຳເລັດໄດ້ ນັ້ນເປັນການດີ ຖ້າບໍ່ສຳເລັດ ເພິ່ງໄປຢືນສະແດງຕົນນິ່ງ ໆ ເຖິງ ໔ ຄັ້ງ ໕ ຄັ້ງ ຫຼື ໖ ຄັ້ງ ເປັນຢ່າງຫຼາຍ ເມື່ອຢືນສະແດງຕົນນິ່ງ ໆ ເຖິງ ໔ ຄັ້ງ ໕ ຄັ້ງ ຫຼື ໖ ຄັ້ງເປັນຢ່າງຫຼາຍແລ້ວໃຫ້ເຂົາຈັດຈີວອນສຳເລັດໄດ້ ນັ້ນເປັນການດີ ຖ້າພະຍາຍາມເກີນກວ່ານັ້ນ ໃຫ້ເຂົາຈັດຈີວອນສຳເລັດໄດ້ ຕ້ອງອາບັດນິດສັກຄິຍະປາຈິດຕີ ຖ້າບໍ່ສຳເລັດ ເພິ່ງໄປເອງ ຫຼື ສົ່ງທູດໄປໃນສຳນັກທີ່ເຂົາສົ່ງຊັບເປັນຄ່າຈີວອນມາກ່າວວ່າ "ຊັບເປັນຄ່າຈີວອນທີ່ທ່ານສົ່ງໄປເຈາະຈົງພິກຂຸອົງນັ້ນ ບໍ່ໄດ້ອຳນວຍປະໂຫຍດອັນໃດແກ່ພິກຂຸອົງນັ້ນເລີຍ ທ່ານຈົ່ງທວງຊັບຂອງທ່ານຄືນມາເທີ້ນ ຊັບຂອງທ່ານຢ່າສູນຫາຍໄປເລີຍ" ນີ້ເປັນການກະທຳທີ່ສົມຄວນໃນເລື້ອງນັ້ນ

**ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ**

## ສິກຂາບົດວິພັງ

[໕໓໙] ຄຳວ່າ ກໍ ໗໘໗ ເຈາະຈົງພິກຂຸ ໄດ້ແກ່ ເພື່ອປະໂຫຍດຂອງພິກຂຸ ຄື ມຸ້ງສະເພາະພິກຂຸ ປາຖະໜາຈະໃຫ້ພິກຂຸຄອງຈີວອນ

ທີ່ຊື່ວ່າ ພຣະຣາຊາ ໄດ້ແກ່ ຜູ້ຄອງຣາດຊະສົມບັດ

ທີ່ຊື່ວ່າ ຣາຊະອຳມາດ ໄດ້ແກ່ ຂ້າຣາດຊະການທີ່ພຣະຣາຊາຊົງຊຸບລ້ຽງ

ທີ່ຊື່ວ່າ ພາມ ໄດ້ແກ່ ພາມໂດຍກຳເນີດ

ທີ່ຊື່ວ່າ ຄະຫະບໍດີ ໄດ້ແກ່ ຄົນທີ່ເຫຼືອ ຍົກເວັ້ນພຣະຣາຊາ ຣາດຊະອຳມາດ ພາມ ຊື່ວ່າ ຄະຫະບໍດີ

ທີ່ຊື່ວ່າ ຊັບເປັນຄ່າຈີວອນ ໄດ້ແກ່ ເງິນ ຄຳ ແກ້ວມະນີ ແກ້ວມຸກດາ (ແກ້ວຕາແມວ ຫຼື ແກ້ວຜຶກ)

ຄຳວ່າ ຊັບເປັນຄ່າຈີວອນນີ້ ຄື ຊັບທີ່ເຂົາຈັດຫາໄວ້ສະເພາະ

ຄຳວ່າ ຊື້ ຄື ແລກປ່ຽນ

ຄຳວ່າ ນິມົນໃຫ້ຄອງ ຄື ຈົ່ງຖວາຍ

ຖ້າທູດນັ້ນເຂົ້າໄປຫາພິກຂຸອົງນັ້ນເພິ່ງກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍນຳຊັບເປັນຄ່າຈີວອນນີ້ມາເຈາະຈົງທ່ານ ທ່ານຈົ່ງຮັບຊັບເປັນຄ່າຈີວອນນີ້ເທີ້ນ" ພິກຂຸນັ້ນເພິ່ງກ່າວກັບທູດນັ້ນຢ່າງນີ້ວ່າ "ພວກອາດຕະມາຮັບຊັບເປັນຄ່າຈີວອນບໍ່ໄດ້ ຮັບສະເພາະຈີວອນທີ່ສົມຄວນຕາມການ" ຖ້າ

ທູດກ່າວກັບພິກຂຸນັ້ນຢ່າງນີ້ວ່າ "ມີໃຜຜູ້ເປັນໄວຍາວັດຈະກອນຂອງທ່ານແດ່ບໍ?" ພິກຂຸຜູ້ຕ້ອງການຈີວອນເພິ່ງສະແດງຄົນວັດ ຫຼື ອຸປາສົກໃຫ້ເປັນໄວຍາວັດຈະກອນວ່າ "ຜູ້ນັ້ນເປັນໄວຍາວັດຈະກອນຂອງພິກຂຸທັງຫຼາຍ" ບໍ່ເພິ່ງກ່າວວ່າ "ຈົ່ງໃຫ້ແກ່ຜູ້ນັ້ນ" ຫຼື ວ່າ "ຜູ້ນັ້ນຈະເກັບໄວ້" ຫຼື "ຜູ້ນັ້ນຈະແລກ" ຫຼື "ຜູ້ນັ້ນຈັກຊື້

ຖ້າທູດຕົກລົງກັບໄວຍາວັດຈະກອນແລ້ວເພິ່ງເຂົ້າໄປຫາພິກຂຸກ່າວຢ່າງນີ້ວ່າ "ເຮົາຕົກລົງກັບຄົນທີ່ທ່ານແນະນຳວ່າເປັນໄວຍາວັດຈະກອນແລ້ວ ທ່ານຈົ່ງໄປຫາໃນເວລາອັນສົມຄວນ ເຂົາຈະນິມົນທ່ານໃຫ້ຄອງຈີວອນ" ພິກຂຸທັງຫຼາຍ ພິກຂຸຕ້ອງການຈີວອນເພິ່ງເຂົ້າໄປຫາໄວຍາວັດຈະກອນແລ້ວທວງຫຼືເຕືອນ ໒ - ໓ ຄັ້ງ ວ່າ "ອາດຕະມາຕ້ອງການຈີວອນ" ບໍ່ເພິ່ງກ່າວກັບເຂົາວ່າ "ທ່ານຈົ່ງໃຫ້ຈີວອນແກ່ອາດຕະມາ ນຳຈີວອນມາໃຫ້ອາດຕະມາ ແລກຈີວອນໃຫ້ອາດຕະມາ ຫຼື ຈົ່ງຊື້ຈີວອນໃຫ້ອາດຕະມາ" ແມ່ນຄັ້ງທີ ໒ ກໍເພິ່ງກ່າວກັບເຂົາ ແມ່ນຄັ້ງທີ ໓ ກໍເພິ່ງກ່າວກັບເຂົາ ຖ້າໃຫ້ເຂົາຈັດການ ສຳເລັດໄດ້ ນັ້ນເປັນການດີ ຖ້າບໍ່ສຳເລັດ ເພິ່ງໄປຢືນສະແດງຕົນນິ່ງ ໆ ໃນທີ່ນັ້ນ ບໍ່ເພິ່ງນັ່ງເທິງອາສະນະ ບໍ່ເພິ່ງຮັບອາມິດ ບໍ່ເພິ່ງກ່າວທຳ ເມື່ອເຂົາຖາມວ່າ "ມາທຸຣະອັນໃດ?" ເພິ່ງກ່າວ ກັບເຂົາວ່າ "ທ່ານຈົ່ງຮູ້ເອງເທີ້ນ" ຖ້ານັ່ງເທິງອາສະນະ ຫຼື ຮັບອາມິດ ຫຼື ກ່າວທຳ ຊື່ວ່າຕັດໂອກາດ ແມ່ນຄັ້ງທີ ໒ ກໍເພິ່ງຢືນ ແມ່ນຄັ້ງທີ ໓ ກໍເພິ່ງຢືນທວງ ໔ ຄັ້ງເພິ່ງຢືນໄດ້ ៤ ຄັ້ງ ທວງ ៥ ຄັ້ງເພິ່ງຢືນໄດ້ ໒ ຄັ້ງ ທວງ ໖ ຄັ້ງ ແລ້ວບໍ່ເພິ່ງໄປຢືນອີກ ຖ້າທ່ານພະຍາຍາມຍິ່ງກວ່ານັ້ນໃຫ້ເຂົາຈັດຈີວອນສຳເລັດ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍໃຫ້ເຂົາຈັດສຳເລັດດ້ວຍອາການທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍໃຫ້ເຂົາຈັດສຳເລັດດ້ວຍອາການທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂ້ານ້ອຍໃຫ້ເຂົາຈັດສຳເລັດດ້ວຍອາການທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ເຮົາຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

ຖ້າເຮັດບໍ່ສຳເລັດ ເພິ່ງໄປເອງ ຫຼື ສົ່ງທູດໄປໃນສຳນັກທີ່ເຂົາສົ່ງຊັບເປັນຄ່າຈີວອນມາກ່າວວ່າ "ຊັບທີ່ທ່ານສົ່ງໄປເຈາະຈົງພິກຂຸອົງໃດ ບໍ່ໄດ້ອຳນວຍປະໂຫຍດອັນໃດແກ່ພິກຂຸອົງນັ້ນເລີຍ ທ່ານຈົ່ງທວງຊັບຂອງທ່ານຄືນມາ ຊັບຂອງທ່ານຢ່າສູນຫາຍໄປເລີຍ"

ຄຳວ່າ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ ຄື ນີ້ເປັນຄວາມຖືກຕ້ອງໃນເລື້ອງນັ້ນ

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໕໔໐] ທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ພິກຂຸສຳຄັນວ່າເກີນ ໃຫ້ເຂົາຈັດຈີວອນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ພິກຂຸບໍ່ແນ່ໃຈ ໃຫ້ເຂົາຈັດຈີວອນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ພິກຂຸສຳຄັນວ່າຍ່ອນກວ່າ ໃຫ້ເຂົາຈັດຈີວອນສຳເລັດ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ທຸກກະທຸກກົດ

ທວງຍ່ອນກວ່າ ໓ ຄັ້ງ ຢືນຍ່ອນກວ່າ ໖ ຄັ້ງ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກົດ
ທວງຍ່ອນກວ່າ ໓ ຄັ້ງ ຢືນຍ່ອນກວ່າ ໖ ຄັ້ງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ທວງຍ່ອນກວ່າ ໓ ຄັ້ງ ຢືນຍ່ອນກວ່າ ໖ ຄັ້ງ ພິກຂຸສຳຄັນວ່າຍ່ອນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

## ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໔໑] ໑. ພິກຂຸທວງ ໓ ຄັ້ງ ຢືນ ໖ ຄັ້ງ
໒. ພິກຂຸທວງຍ່ອນກວ່າ ໓ ຄັ້ງ ຢືນຍ່ອນກວ່າ ໖ ຄັ້ງ
໓. ພິກຂຸບໍ່ໄດ້ທວງ ໄວຍາວັດຈະກອນຈັດຖວາຍເອງ
໔. ພິກຂຸຮັບຈີວອນທີ່ເຈົ້າຂອງທວງມາຖວາຍ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ຣາຊະສິກຂາບົດທີ ໑໐ ຈົບ**

**ຈີວອນວັກທີ ໑ ຈົບ**

## ລວມສິກຂາບົດທີ່ມີໃນຈີວອນວັກ

ຈີວອນວັກມີ ໑໐ ສິກຂາບົດ ຄື

໑. ປະຖົມກະຖິນສິກຂາບົດ ວ່າດ້ວຍກະຖິນເດາະຂໍ້ທີ ໑
໒. ອຸດໂທສິຕະສິກຂາບົດ ວ່າດ້ວຍພິກຂຸເກັບຈີວອນໄວ້ໃນໂຮງເກັບຂອງ (ວ່າດ້ວຍກະຖິນເດາະຂໍ້ທີ ໒)
໓. ຕະຕິຍະກະຖິນສິກຂາບົດ ວ່າດ້ວຍກະຖິນເດາະຂໍ້ທີ ໓
໔. ປຸຣານະຈີວອນສິກຂາບົດ ວ່າດ້ວຍການໃຫ້ຊັກຈີວອນເກົ່າ
໕. ຈີວະຣະປະຕິກຄະຫະນະສິກຂາບົດ ວ່າດ້ວຍການຮັບຈີວອນ
໖. ອັນຍາຕະກະວິນຍັດຕິສິກຂາບົດ ວ່າດ້ວຍການອອກປາກຂໍຄະລືຫັດຜູ້ບໍ່ແມ່ນຍາດ

໗. ຕະຕຸດຕະຣິສິກຂາບົດ ວ່າດ້ວຍການອອກປາກຂໍຈີວອນເກີນ

໘. ອຸປັກຂະຕະສິກຂາບົດ ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນ

໙. ທຸຕິຍະອຸປັກຂະຕະສິກຂາບົດ ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນຂໍ້ ທີ ໔

໑໐. ຣາຊະສິກຂາບົດ ວ່າດ້ວຍຊັບເປັນຄ່າຈີວອນທີ່ພຣະຣາຊາເປັນຕົ້ນໃຫ້ທູດນຳມາຖວາຍ

# ໔. ໂກສິຍະວັກ

## ໝວດວ່າດ້ວຍສັນຖັດໃຍໄໝ

## ໑. ໂກສິຍະສິກຂາບົດ

### ວ່າດ້ວຍການເຮັດສັນຖັດໃຍໄໝ

### ເລື້ອງພຣະສັບພັກຄີ

[໕໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນອັກຄາລະວະເຈດີ ເຂດເມືອງອາລະວີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຂົ້າໄປຫາພວກຊ່າງທໍຜ້າໄໝແລ້ວກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕມ້ອນຈຳນວນຫຼາຍໃຫ້ແກ່ພວກອາດຕະມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍໄໝ" ພວກຊ່າງທໍຜ້າໄໝຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງເຂົ້າມາຫາພວກເຮົາແລ້ວກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕມ້ອນຈຳນວນຫຼາຍໃຫ້ແກ່ອາດຕະມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍ ໄໝ ດັ່ງນີ້ນໍ ອັນໜຶ່ງ ບໍ່ແມ່ນລາບຂອງພວກເຮົາ ພວກເຮົາໄດ້ບໍ່ດີທີ່ຕ້ອງຂ້າສັດໂຕນ້ອຍ ໆ ເປັນຈຳນວນຫຼາຍ ຍ້ອນການຄອງຊີບ ຍ້ອນຕ້ອງລ້ຽງດູບຸດພັນລະຍາ"

ພິກຂຸໄດ້ຍິນພວກຊ່າງທໍຜ້າໄໝຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງເຂົ້າໄປຫາຊ່າງທໍຜ້າໄໝແລ້ວກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕມ້ອນຈຳນວນຫຼາຍໃຫ້ແກ່ພວກອາດຕະມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍໄໝ ດັ່ງນີ້ນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກທ່ານເຂົ້າໄປຫາຊ່າງທໍຜ້າໄໝແລ້ວກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕມ້ອນຈຳນວນຫຼາຍໃຫ້ແກ່ພວກອາດຕະມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍໄໝ ດັ່ງນີ້ ແມ່ນບໍ?” ພວກພິກຂຸສັບພັກຄີທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ໆລໆ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງເຂົ້າໄປຫາຊ່າງທໍຜ້າໄໝແລ້ວກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕມ້ອນຈຳນວນຫຼາຍໃຫ້ແກ່ພວກອາດຕະມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍໄໝ ດັ່ງນີ້ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໓] ກໍ ພິກຂຸໃດໃຊ້ໃຫ້ເຮັດສັນຖັດປະສົມໃຍໄໝ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໕໔໔] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ສັນຖັດ ໄດ້ແກ່ ຜ້າຮອງນັ່ງທີ່ຫຼໍ່ ບໍ່ແມ່ນທໍ

ຄຳວ່າ ໃຊ້ໃຫ້ເຮັດ ຄວາມວ່າ ພິກຂຸເຮັດເອງຫຼືໃຊ້ໃຫ້ເຮັດ ແຊມດ້ວຍເສັ້ນໄໝແມ່ນເສັ້ນດຽວ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ສັນຖັດເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະສັນຖັດທີ່ເປັນນິດສັກຄີຢ່າງນີ້

# ວິທີສະລະສັນຖັດທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດປະສົມໃຍໄໝຜືນນີ້ຂ້າພະເຈົ້າໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້າພະເຈົ້າສະລະສັນຖັດນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດປະສົມໃຍໄໝຜືນນີ້ຂ້າພະເຈົ້າໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້າພະເຈົ້າສະລະສັນຖັດຜືນນີ້ແກ່ທ່ານ ທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ສັນຖັດຜືນນີ້ຂ້ານ້ອຍໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສັນຖັດຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໕໔໕] ພິກຂຸເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ
ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ທຸກກະທຸກກົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ສັນຖັດທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘໖] ໑. ພິກຂຸເຮັດເປັນເພດານ ເຄື່ອງປູລາດພື້ນ ມ່ານ ເປືອກຟູກ ຫຼື ປອກໝອນ
໒. ພິກຂຸວິກົນຈະລິດ
໓. ພິກຂຸຕົ້ນບັນຍັດ

**ໂກສິຍະສິກຂາບົດທີ ໑ ຈົບ**

# ໒. ໂກສິຍະວັກ

## ໒. ສຸດທະກາລະກະສິກຂາບົດ

## ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳລ້ວນ

## ເລື້ອງພຣະສັບພັກຄີ

[໕໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພວກພິກຂຸສັບພັກຄີໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນ ພວກຊາວບ້ານທ່ຽວໄປຕາມວິຫານເຫັນເຂົ້າຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນເໝືອນຄະລຶຫັດທີ່ຍັງບໍລິໂພກກາມນໍ"

ພິກຂຸທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໃຊ້ໃຫ້ເຮັດ

ສັນຖັດຂົນຈຽມດຳລ້ວນນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ໃຫ້ເຮັດສັນຖັດ ຂົນຈຽມດຳລ້ວນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໗] ກໍ ພິກຂຸໃດໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໕໔໘] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ສີດຳ ມີ ໔ ຊະນິດ ຄື ດຳຕາມທຳມະຊາດ ຫຼື ດຳຍ້ອມຍ້ອມ

ທີ່ຊື່ວ່າ ສັນຖັດ ໄດ້ແກ່ ຜ້າຮອງນັ່ງທີ່ຫຼໍ່ ບໍ່ແມ່ນທໍ

ຄຳວ່າ ໃຊ້ໃຫ້ເຮັດ ຄວາມວ່າ ພິກຂຸເຮັດເອງ ຫຼື ໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດຍ້ອນພະຍາ ຍາມ ສັນຖັດເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະສັນຖັດທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະສັນຖັດທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຂົນຈຽມດຳລ້ວນຜືນນີ້ຂ້ານ້ອຍໃຊ້

ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຂົນຈຽມດຳລ້ວນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສັນຖັດຂົນຈຽມດຳລ້ວນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຂົນຈຽມດຳລ້ວນຜືນນີ້ແກ່ພິກຂຸຊື່ນີ້

**ສະລະແກ່ຄະນະ**

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຂົນຈຽມດຳລ້ວນຜືນນີ້ຂ້ານ້ອຍໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຂົນຈຽມດຳລ້ວນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສັນຖັດຂົນຈຽມດຳລ້ວນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຂົນຈຽມດຳລ້ວນ ຜືນນີ້ແກ່ພິກຂຸຊື່ນີ້

**ສະລະແກ່ບຸກຄົນ**

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ສັນຖັດຂົນຈຽມດຳລ້ວນຜືນນີ້ ຂ້ານ້ອຍໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຂົນຈຽມດຳລ້ວນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສັນຖັດຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

### ນິດສັກຄິຍະປາຈິດຕີ

[໕໕໐] ພິກຂຸເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ພິກຂຸເຮັດເອງຫຼືໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ສັນຖັດທີ່ຜູ້ອື່ນເຮັດໄວ້ແລ້ວ ໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໕໑] ໑. ພິກຂຸເຮັດເປັນເພດານ ເຄື່ອງປູລາດພື້ນ ມ່ານ ເປືອກຟູກ ຫຼື ປອກໝອນ
໒. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ສຸດທະກາລະກະສິກຂາບົດທີ ໒ ຈົບ**

# ໒. ໂກສິຍະວັກ

## ໖. ທະເວພາຄະສິກຂາບົດ

## ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳ ໒ ສ່ວນ

## ເລື້ອງພຣະສັບພັກຄີ

[໕໕໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໄດ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການເຮັດສັນຖັດຂົນຈຽມດຳລ້ວນ" ຈຶ່ງໃຫ້ເອົາຂົນຈຽມຂາວໜ່ອຍໜຶ່ງປົນໄວ້ທີ່ຊາຍຜ້າສັນຖັດ ແລ້ວເຮັດສັນຖັດຂົນຈຽມດຳລ້ວນຄືເກົ່າ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງໃຫ້ເອົາຂົນຈຽມຂາວໜ່ອຍໜຶ່ງປົນໄວ້ທີ່ຊາຍຜ້າສັນຖັດ ແລ້ວເຮັດສັນຖັດຂົນຈຽມດຳລ້ວນຄືເກົ່າແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ

ສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຫ້ເອົາຂົນຈຽມຂາວໜ່ອຍໜຶ່ງປົນໄວ້ທີ່ຊາຍຜ້າສັນຖັດ ແລ້ວເຮັດສັນຖັດຂົນຈຽມດຳລ້ວນຄືເກົ່າ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຫ້ເອົາຂົນຈຽມຂາວໜ່ອຍໜຶ່ງປົນໄວ້ທີ່ຊາຍສັນຖັດ ແລ້ວເຮັດສັນຖັດຂົນຈຽມດຳລ້ວນຄືເກົ່ານໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໕໓] ກໍ ພິກຂຸຜູ້ໃຊ້ໃຫ້ເຮັດສັນຖັດໃໝ່ ເພິ່ງເອົາຂົນຈຽມດຳລ້ວນ ໒ ສ່ວນ ຂົນຈຽມຂາວເປັນສ່ວນທີ ໓ ຂົນຈຽມແດງເປັນສ່ວນທີ ໔ ຖ້າທ່ານບໍ່ເອົາຂົນຈຽມດຳລ້ວນ ໒ ສ່ວນ ຂົນຈຽມຂາວເປັນສ່ວນທີ ໓ ຂົນຈຽມແດງເປັນສ່ວນທີ ໔ ແລ້ວໃຫ້ເຮັດສັນຖັດໃໝ່ ຕ້ອງອາບັດນິດສັກຄິຍະປາ ຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໕໕໔] ທີ່ຊື່ວ່າ ໃໝ່ ພຣະອົງຕັດມຸ້ງເອົາການກະທຳ

ທີ່ຊື່ວ່າ ສັນຖັດ ໄດ້ແກ່ ຜ້າຮອງນັ່ງທີ່ຫຼໍ່ ບໍ່ແມ່ນທໍ

ຄຳວ່າ ຜູ້ໃຊ້ໃຫ້ເຮັດ ຄື ຜູ້ເຮັດເອງຫຼືໃຊ້ໃຫ້ເຮັດ

ຄຳວ່າ ເອົາຂົນຈຽມດຳລ້ວນ ໒ ສ່ວນ ຄວາມວ່າ ໃຊ້ຂົນຈຽມດຳລ້ວນ ໒ ສ່ວນ

ຄຳວ່າ ຂົນຈຽມຂາວເປັນສ່ວນທີ ໓ ຄື ຂົນຈຽມຂາວ ໑ ສ່ວນ

ຄຳວ່າ ຂົນຈຽມແດງເປັນສ່ວນທີ ໔ ຄື ຂົນຈຽມແດງ ໑ ສ່ວນ

ຄຳວ່າ ຖ້າທ່ານບໍ່ເອົາຂົນຈຽມດຳລ້ວນ ໒ ສ່ວນ ຂົນຈຽມຂາວເປັນສ່ວນທີ ໓ ຂົນຈຽມແດງເປັນສ່ວນທີ ໔ ຄວາມວ່າ ບໍ່ເອົາຂົນຈຽມດຳລ້ວນ ໒ ສ່ວນ ຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ເຮັດເອງ ຫຼື ໃຊ້ໃຫ້ເຮັດສັນຖັດໃໝ່ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ສັນຖັດເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະສັນຖັດທີ່ເປັນນິດສັກຄີຢ່າງນີ້

# ວິທີສະລະສັນຖັດທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸ ຜູ້ແກ່ພັນສາ ນັ່ງຢອງຢັ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຜືນນີ້ ຂ້ານ້ອຍບໍ່ໄດ້ເອົາຂົນຈຽມດຳລ້ວນ ໔ ສ່ວນ ຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢັ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຜືນນີ້ເຮົາບໍ່ໄດ້ເອົາຂົນຈຽມດຳລ້ວນ ໔ ສ່ວນ ຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢັ້ປະນົມມື ກ່າວວ່າ "ທ່ານຂ້ານ້ອຍ ສັນຖັດຜືນນີ້ຂ້ານ້ອຍບໍ່ໄດ້ເອົາຂົນຈຽມດຳ ລ້ວນ ໔ ສ່ວນ ຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ໃຊ້ໃຫ້ເຮັດ ເປັນນິດສັກຄີ

ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສັນຖັດຜືນນີ້ໃຫ້ແກ່ທ່ານ"

# ບົດພາຊະນີ

## ນິດສັກຄີຍະປາຈິດຕີ

[໕໕໕] ພິກຂຸເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄີຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄີຍະປາຈິດຕີ

ພິກຂຸເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄີຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄີຍະປາຈິດຕີ

**ທຸກະທຸກກົດ**

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

ພິກຂຸໄດ້ສັນຖັດທີ່ຜູ້ອື່ນເຮັດໄວ້ ໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໕໗] ໑. ພິກຂຸເອົາຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ປົນແລ້ວເຮັດ

໒. ພິກຂຸເອົາຂົນຈຽມຂາວຫຼາຍກວ່າ ຂົນຈຽມແດງຫຼາຍກວ່າ ປົນແລ້ວເຮັດ

໓. ພິກຂຸເອົາຂົນຈຽມຂາວລ້ວນ ຂົນຈຽມແດງລ້ວນ ປົນແລ້ວເຮັດ

໔. ພິກຂຸເຮັດເປັນເພດານ ເຄື່ອງປູລາດພື້ນ ມ່ານ ເປືອກຟູກ ຫຼື ປອກໝອນ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ທະເວພາຄະສິກຂາບົດທີ ໓ ຈົບ**

# ໒. ໂກສິຍະວັກ

## ໔. ສັບພັດສະສິກຂາບົດ

## ວ່າດ້ວຍການເກັບສັນຖັດໄວ້ ໖ ປີ

## ເລື້ອງພິກຂຸຫຼາຍອົງ

[໕໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸທັງຫຼາຍໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ພິກຂຸເຫຼົ່ານັ້ນເປັນຜູ້ຫຼາຍໄປດ້ວຍການຂໍວ່າ “ທ່ານທັງຫຼາຍຈົ່ງໃຫ້ຂົນຈຽມພວກອາດຕະມາຕ້ອງການຂົນຈຽມ”

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍກ່າວວ່າ ທ່ານທັງຫຼາຍຈົ່ງໃຫ້ຂົນຈຽມ ພວກອາດຕະມາຕ້ອງການຂົນຈຽມ ດັ່ງນີ້ນໍ ສັນຖັດຂອງພວກເຮົາທີ່ເຮັດຄັ້ງດຽວ ຖືກເດັກນ້ອຍຖ່າຍອຸດຈາຣະໃສ່ແດ່ ປັດສາວະໃສ່ແດ່ ໜູກັດເສຍແດ່ ກໍຍັງໃຊ້ສອຍໄດ້ເຖິງ ໕ ປີແດ່ ໖ ປີແດ່ ແຕ່ພິກຂຸເຫຼົ່ານີ້ໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍກ່າວວ່າ ທ່ານທັງຫຼາຍ ຈົ່ງໃຫ້ຂົນຈຽມ ພວກອາດຕະມາຕ້ອງການຂົນຈຽມ"

ພິກຂຸທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍກ່າວວ່າ ທ່ານທັງຫຼາຍຈົ່ງໃຫ້ຂົນຈຽມ ພວກອາດຕະມາຕ້ອງການຂົນຈຽມ ດັ່ງນີ້ນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍກ່າວວ່າ ທ່ານທັງຫຼາຍຈົ່ງໃຫ້ຂົນຈຽມ ພວກ ອາດຕະມາຕ້ອງການຂົນຈຽມ ດັ່ງນີ້ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງໃຊ້ໃຫ້ເຮັດສັນຖັດທຸກ ໆ ປີ ເປັນຜູ້ຫຼາຍໄປດ້ວຍການຂໍ ເປັນຜູ້ຫຼາຍໄປດ້ວຍການອອກປາກຂໍດ້ວຍກ່າວວ່າ ທ່ານທັງຫຼາຍ ຈົ່ງໃຫ້ຂົນຈຽມ ພວກອາດຕະມາຕ້ອງການຂົນຈຽມດັ່ງນີ້ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໕໗] ກໍ ພິກຂຸໃຊ້ໃຫ້ເຮັດສັນຖັດໃໝ່ແລ້ວເພິ່ງໃຊ້ສອຍໃຫ້ໄດ້ ໖ ປີ ຖ້າຕ່ຳກວ່າ ໖ ປີ ທ່ານຈະສະລະຫຼືບໍ່ສະລະສັນຖັດນັ້ນກໍຕາມ ໃຊ້ໃຫ້ເຮັດສັນຖັດອື່ນໃໝ່ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພິກຂຸຫຼາຍອົງ ຈົບ**

## ເລື່ອງພິກຂຸເປັນໄຂ້

[໕໕໙] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ຢູ່ນະຄອນໂກສຳພີ ພວກຍາດສິ່ງທູດໄປສຳນັກຂອງພິກຂຸນັ້ນ ໃຫ້ແຈ້ງຂ່າວວ່າ "ນິມົນພຣະຜູ້ເປັນເຈົ້າມາເທີ້ນ ພວກຂ້ານ້ອຍຈັກອຸປັດຖາກ" ພິກຂຸທັງຫຼາຍ ກ່າວຢ່າງນີ້ວ່າ "ໄປເທີ້ນ ທ່ານ ພວກຍາດຈະອຸປັດຖາກທ່ານເອງ"

ພິກຂຸນັ້ນ ກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸໃຊ້ໃຫ້ເຮັດສັນຖັດໃໝ່ແລ້ວເພິ່ງໃຊ້ສອຍໃຫ້ໄດ້ ໖ ປີ ຂ້ານ້ອຍກໍເປັນໄຂ້ຢູ່ ບໍ່ສາມາດນຳສັນຖັດໄປໄດ້ ຖ້າຂາດສັນຖັດແລ້ວຂ້ານ້ອຍຈະບໍ່ຜາສຸກ ຂ້ານ້ອຍຈະບໍ່ໄປ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ສົມມຸດສັນຖັດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດສັນຖັດເພື່ອພິກຂຸຜູ້ເປັນໄຂ້

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສົມມຸດສັນຖັດຢ່າງນີ້

## ວິທີສົມມຸດສັນຖັດ

ພິກຂຸຜູ້ເປັນໄຂ້ອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ ທ່ານຜູ້ຈະເລີນ ຂ້ານ້ອຍເປັນໄຂ້ບໍ່ສາມາດນຳສັນຖັດຕິດຕົວໄປໄດ້ ຂ້ານ້ອຍຂໍສົມມຸດສັນຖັດກັບສົງ ເພິ່ງຂໍສົມມຸດສັນຖັດແມ່ນຄັ້ງທີ ໒ ເພິ່ງຂໍສົມມຸດສັນຖັດແມ່ນຄັ້ງທີ ໓

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໕໖໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເປັນໄຂ້ບໍ່ສາມາດນຳສັນຖັດຕິດຕົວໄປໄດ້ ພິກຂຸນັ້ນຂໍສົມມຸດສັນຖັດຈາກສົງ ຖ້າສົງພ້ອມແລ້ວກໍເພິ່ງໃຫ້ສົມມຸດສັນຖັດແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເປັນໄຂ້ບໍ່ສາມາດນຳສັນຖັດຕິດຕົວໄປໄດ້ ພິກຂຸນັ້ນຂໍສົມມຸດສັນຖັດຈາກສົງ ຖ້າສົງພ້ອມແລ້ວກໍເພິ່ງໃຫ້ສົມມຸດສັນຖັດແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ສົມມຸດສັນຖັດແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ການສົມມຸດສັນຖັດສົງໃຫ້ແລ້ວແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຈະຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້"

ແລ້ວຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໗໑] ອັນໜຶ່ງ ພິກຂຸໃຊ້ໃຫ້ເຮັດສັນຖັດໃໝ່ແລ້ວເພິ່ງໃຊ້ສອຍໃຫ້ໄດ້ ໖ ປີ ຖ້າຕ່ຳກວ່າ ໖ ປີ ທ່ານຈະສະລະຫຼືບໍ່ສະລະສັນຖັດນັ້ນກໍຕາມ ໃຊ້ໃຫ້ເຮັດສັນຖັດອື່ນໃໝ່ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸຜູ້ໄດ້ສົມມຸດ

## ເລື້ອງພິກຂຸເປັນໄຂ້ ຈົບ

## ສິກຂາບົດວິພັງ

[໕໗໘] ທີ່ຊື່ວ່າ ໃໝ່ ພຣະອົງຕັດມຸ້ງເອົາການກະທຳ
ທີ່ຊື່ວ່າ ສັນຖັດ ໄດ້ແກ່ ຜ້າຮອງນັ່ງທີ່ຫຼໍ່ ບໍ່ແມ່ນທໍ
ຄຳວ່າ ໃຊ້ໃຫ້ເຮັດແລ້ວ ຄື ເຮັດເອງຫຼືໃຊ້ໃຫ້ເຮັດແລ້ວ
ຄຳວ່າ ເພິ່ງໃຊ້ສອຍໃຫ້ໄດ້ ໖ ປີ ຄື ເພິ່ງໃຊ້ສອຍໃຫ້ໄດ້ ໖ ປີເປັນຢ່າງໜ້ອຍ
ຄຳວ່າ ຖ້າຕ່ຳກວ່າ ໖ ປີ ຄື ຢ່ອນກວ່າ ໖ ປີ
ຄຳວ່າ ສະລະສັນຖັດນັ້ນ ຄື ໃຫ້ແກ່ຜູ້ອື່ນ
ຄຳວ່າ ບໍ່ສະລະ ຄື ຍັງບໍ່ໃຫ້ແກ່ຜູ້ອື່ນ
ຄຳວ່າ ເວັ້ນໄວ້ແຕ່ພິກຂຸຜູ້ໄດ້ສົມມຸດ ຄື ຍົກເວັ້ນພິກຂຸຜູ້ໄດ້ຮັບສົມມຸດ

ພິກຂຸເຮັດເອງ ຫຼື ໃຊ້ໃຫ້ເຮັດສັນຖັດໃໝ່ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ສັນຖັດເປັນນິດສັກຄິຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະສັນຖັດທີ່ເປັນນິດສັກຄິຢ່າງນີ້

## ວິທີສະລະສັນຖັດທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຜືນນີ້ຂອງຂ້ານ້ອຍໃຊ້ໃຫ້ເຮັດຢ່ອນກວ່າ ໖ ປີ ເປັນນິດສັກຄີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຜືນນີ້ຂ້ານ້ອຍໃຊ້ໃຫ້ເຮັດ ຢ່ອນກວ່າ ໖ ປີ ເປັນນິດສັກຄີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ສັນຖັດຜືນນີ້ຂ້ານ້ອຍໃຊ້ໃຫ້ເຮັດ ຢ່ອນກວ່າ ໖ ປີ ເປັນນິດສັກຄີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສັນຖັດຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

### ນິດສັກຄິຍະປາຈິດຕີ

[໕໖໓] ພິກຂຸເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄິຍະ ປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໖໔] ໑. ພິກຂຸເຮັດໃໝ່ ເມື່ອໃຊ້ຄົບ ໖ ປີ

໔. ພິກຂຸເຮັດໃໝ່ ເມື່ອໃຊ້ເກີນ ໖ ປີ
໑. ພິກຂຸເຮັດເອງ ຫຼື ໃຊ້ໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ
໔. ພິກຂຸໄດ້ສັນຖັດທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ
໕. ພິກຂຸເຮັດເປັນເພດານ ເຄື່ອງປູລາດພື້ນ ມ່ານ ເປືອກຟູກ ຫຼື ປອກໝອນ
໖. ພິກຂຸຜູ້ໄດ້ສົມມຸດ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສັບພັດສະສິກຂາບົດທີ ໔ ຈົບ**

# ໔. ໂກສິຍະວັກ

## ໕. ນິສີທະນະສັນຖະຕະສິກຂາບົດ
## ວ່າດ້ວຍການເຮັດສັນຖັດສຳລັບຮອງນັ່ງ
## ເລື້ອງພຣະອຸປະເສນະວັງຄັນຕະບຸດ

[໕໖໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸ ທັງຫຼາຍ ເຮົາປາຖະໜາຈະຫຼີກຫຼີກຢູ່ຜູ້ດຽວຕະຫຼອດໄຕຣມາດ ໃຜ ໆ ຢ່າເຂົ້າໄປຫາເຮົາ ຍົກເວັ້ນພິກຂຸຜູ້ນຳພັດຕາຫານເຂົ້າໄປໃຫ້ອົງດຽວ"

ພິກຂຸທັງຫຼາຍຮັບສະໜອງພຣະພຸດທະດຳຣັດວ່າ "ໄດ້ ຂ້ານ້ອຍ" ບໍ່ມີໃຜເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເລີຍ ນອກຈາກພິກຂຸຜູ້ນຳພັດຕາຫານເຂົ້າໄປຖວາຍພຽງອົງດຽວ

ສະໄໝນັ້ນ ສົງໃນນະຄອນສາວັດຖີຕັ້ງກະຕິກາກັນວ່າ "ພຣະຜູ້ມີພຣະພາກເຈົ້າມີພຣະປະສົງ ສະເດັດຫຼີກຫຼີກຢູ່ຕະຫຼອດໄຕຣມາດ ໃຜ ໆ ຢ່າເຂົ້າໄປເຝົ້າພຣະອົງ ຍົກເວັ້ນພິກຂຸຜູ້ນຳພັດຕາຫານເຂົ້າໄປຖວາຍອົງດຽວ ພິກຂຸອົງໃດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເພິ່ງໃຫ້ພິກຂຸອົງນັ້ນສະແດງອາບັດປາຈິດຕີ"

ຕໍ່ມາ ທ່ານພຣະອຸປະເສນະວັງຄັນຕະບຸດພ້ອມດ້ວຍບໍລິສັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ

### ພຸດທະປະເພນີ

ອັນການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງປາໄສກັບພຣະອາຄັນຕຸກະທັງຫຼາຍນັ້ນເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານພຣະອຸປະເສນະວັງຄັນຕະບຸດວ່າ "ອຸປະເສນະ ທ່ານທັງຫຼາຍຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ? ເດີນທາງມາໂດຍບໍ່ລຳບາກບໍ?"

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ສະບາຍດີ ຂ້ານ້ອຍ ພໍເປັນຢູ່ໄດ້ ຂ້ານ້ອຍ ຂ້າພຣະອົງເດີນທາງມາໂດຍບໍ່ລຳບາກ ຂ້ານ້ອຍ"

ຂະນະນັ້ນ ພິກຂຸສັດທິວິຫາຣິກຂອງທ່ານພຣະອຸປະເສນະວັງຄັນຕະບຸດນັ່ງຢູ່ບໍ່ຫ່າງ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸນັ້ນວ່າ "ພິກຂຸ ຜ້າບັງສຸກຸນຂອງທ່ານໜ້າພໍໃຈບໍ?"

ພິກຂຸນັ້ນຂາບທູນວ່າ "ຜ້າບັງສຸກຸນຂອງຂ້າພຣະອົງບໍ່ໜ້າພໍໃຈ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ແລ້ວເປັນຫຍັງ ທ່ານຊົງຜ້າບັງສຸກຸນນໍ?"

ພິກຂຸນັ້ນຂາບທູນວ່າ "ພຣະອຸປັດຊາຂອງຂ້າພຣະອົງ ເປັນຜູ້ຊົງຜ້າບັງສຸກຸນ ແມ່ນຂ້າພຣະອົງກໍຕ້ອງເປັນຜູ້ຊົງຜ້າບັງສຸກຸນຕາມ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານພຣະອຸປະເສນະວັງຄັນຕະບຸດວ່າ "ອຸປະເສນະ ບໍລິສັດນີ້ຂອງທ່ານໜ້າເຫຼື້ອມໃສ ທ່ານແນະນຳບໍລິສັດຢ່າງໃດ?"

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ຂ້າພຣະອົງບອກຜູ້ມາຂໍອຸປະສົມບົດກັບຂ້າພຣະອົງວ່າ ເຮົາຖືຢູ່ປ່າເປັນວັດ ຖືທ່ຽວບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ຖ້າທ່ານຈັກຖືຢູ່ປ່າເປັນວັດ ຖືທ່ຽວບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ເຮົາກໍຈະໃຫ້ທ່ານອຸປະສົມບົດ ຖ້າເຂົາຮັບຄຳຂອງຂ້າພຣະອົງ ຂ້າພຣະອົງກໍໃຫ້ອຸປະສົມບົດ ຖ້າບໍ່ຮັບຄຳ ກໍຈະບໍ່ໃຫ້ອຸປະສົມບົດ ຂ້າພຣະອົງບອກພິກຂຸທີ່ມາຂໍນິໄສວ່າ ເຮົາຖືຢູ່ປ່າເປັນວັດ ຖືທ່ຽວບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ຖ້າທ່ານຈັກຖືຢູ່ປ່າເປັນວັດ ຖືທ່ຽວບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ເຮົາກໍຈະໃຫ້ນິໄສແກ່ທ່ານ ຖ້າພິກຂຸນັ້ນຮັບຄຳຂອງຂ້າພຣະອົງ ຂ້າພຣະອົງກໍຈະໃຫ້ນິໄສ ຖ້າບໍ່ຮັບຄຳ ກໍຈະບໍ່ໃຫ້ນິໄສ ຂ້າພຣະອົງແນະນຳບໍລິສັດຢ່າງນີ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປະເສນະ ດີແລ້ວ ໆ ອຸປະເສນະ ທ່ານແນະນຳບໍລິສັດດີແລ້ວ ທ່ານຮູ້ກະຕິກາສົງໃນນະຄອນສາວັດຖີບໍ?"

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ຂ້າພຣະອົງບໍ່ຮູ້ກະຕິກາຂອງສົງໃນນະຄອນສາວັດຖີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສົງໃນນະຄອນສາວັດຖີຕັ້ງກະຕິກາກັນວ່າ ພຣະຜູ້ມີພຣະພາກເຈົ້າມີພຣະປະສົງຈະສະເດັດຫຼີບຫຼີກຢູ່ຕະຫຼອດໄຕຣມາດ ຜູ້ໃດກໍຕາມຢ່າເຂົ້າໄປເຝົ້າພຣະອົງ ຍົກເວັ້ນພິກຂຸຜູ້ນຳພັດຕາຫານເຂົ້າໄປຖວາຍອົງດຽວ ພິກຂຸອົງໃດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເພິ່ງໃຫ້ພິກຂຸອົງນັ້ນສະແດງອາບັດປາຈິດຕີ

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ສົງໃນນະຄອນສາວັດຖີຈະເປີດເຜີຍຕົນເອງອອກມາດ້ວຍກະຕິກາຂອງຕົນ ຂ້າພຣະອົງຈະບໍ່ບັນຍັດສິ່ງທີ່ພຣະອົງບໍ່ໄດ້ຊົງບັນຍັດໄວ້ ແລະບໍ່ເພີກຖອນສິ່ງທີ່ຊົງບັນຍັດໄວ້ແລ້ວ ຈະສະມາທານປະພຶດໃນສິກຂາບົດຕາມທີ່ຊົງບັນຍັດໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປະເສນະ ດີແລ້ວ ໆ ສົງບໍ່ບັນຍັດສິ່ງທີ່ເຮົາບໍ່ໄດ້ບັນຍັດ ແລະບໍ່ເພິ່ງເພີກຖອນສິ່ງທີ່ເຮົາບັນຍັດໄວ້ ເພິ່ງສະມາທານປະພຶດໃນສິກຂາບົດຕາມທີ່ເຮົາບັນຍັດໄວ້ ອຸປະເສນະ ເຮົາອະນຸຍາດໃຫ້ພິກຂຸຜູ້ຖືຢູ່ປ່າເປັນວັດ ຖືບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ເຂົ້າມາຢ້ຽມເຮົາໄດ້ຕາມສະດວກ"

[໕໖໖] ສະໄໝນັ້ນ ພິກຂຸຫຼາຍອົງຢືນຖ້າຢູ່ນອກຊຸ້ມປະຕູ ຍ້ອນຕັ້ງໃຈວ່າ "ພວກເຮົາຈະໃຫ້ທ່ານພຣະອຸປະເສນະວັງຄັນຕະບຸດສະແດງອາບັດປາຈິດຕີ" ເມື່ອທ່ານພຣະອຸປະເສນະວັງຄັນຕະບຸດພ້ອມກັບບໍລິສັດລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນຈາກໄປ ພິກຂຸເຫຼົ່ານັ້ນໄດ້ກ່າວກັບທ່ານພຣະອຸປະເສນະວັງຄັນຕະບຸດວ່າ "ທ່ານຮູ້ກະຕິກາຂອງສົງໃນນະຄອນສາວັດຖີບໍ?" ທ່ານພຣະອຸປະເສນະວັງຄັນຕະບຸດຕອບວ່າ "ແມ່ນພຣະຜູ້ມີພຣະພາກເຈົ້າກໍຕັດເຊັ່ນນີ້ກັບຂ້ານ້ອຍຢ່າງນີ້ຄືກັນວ່າ ອຸປະເສນະ ທ່ານຮູ້ກະຕິກາຂອງສົງໃນນະຄອນສາວັດຖີບໍ? ຂ້ານ້ອຍກໍທູນຕອບວ່າ ຂ້າພຣະອົງບໍ່ຮູ້ກະຕິກາສົງໃນນະຄອນສາວັດຖີຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸປະເສນະ ກໍກະຕິກາທີ່ສົງໃນນະຄອນສາວັດຖີຕັ້ງໄວ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງປະສົງຈະສະເດັດຫຼີບຫຼີກຢູ່ພຣະອົງດຽວຕະຫຼອດໄຕຣມາດ ໃຜ ໆ ຢ່າເຂົ້າໄປເຝົ້າພຣະອົງ ຍົກເວັ້ນພິກຂຸຜູ້ນຳພັດຕາຫານໄປຖວາຍ ພິກຂຸໃດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເພິ່ງໃຫ້ພິກຂຸອົງນັ້ນສະແດງອາບັດປາຈິດຕີ ຂ້ານ້ອຍຂາບທູນວ່າ ພຣະສົງໃນນະຄອນສາວັດຖີຈະເປີດເຜີຍຕົນເອງອອກມາດ້ວຍກະຕິກາຂອງຕົນ ຂ້າພຣະອົງຈະບໍ່ບັນຍັດສິ່ງທີ່ພຣະພຸດທະອົງບໍ່ໄດ້ຊົງບັນຍັດ ແລະຈະບໍ່ຖອນສິ່ງທີ່ພຣະພຸດທະອົງຊົງບັນຍັດໄວ້ແລ້ວ ຈະສະມາທານປະພຶດໃນສິກຂາບົດທີ່ພຣະພຸດທະອົງຊົງບັນຍັດໄວ້ແລ້ວດັ່ງນີ້ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໄວ້ແລ້ວວ່າ ພິກຂຸຜູ້ຖືຢູ່ປ່າເປັນວັດ ຖືບິນທະບາດເປັນ ວັດ ຖືຊົງຜ້າບັງສຸກຸນເປັນວັດ ເຂົ້າຢ້ຽມເຮົາໄດ້ຕາມສະດວກ"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນກ່າວວ່າ "ທ່ານພຣະອຸປະເສນະວັງຄັນຕະບຸດກ່າວຈິງ ພຣະສົງບໍ່ຄວນບັນຍັດສິ່ງທີ່ພຣະພຸດທະເຈົ້າຍັງບໍ່ໄດ້ຊົງບັນຍັດໄວ້ ບໍ່ຄວນເພີກຖອນສິ່ງທີ່ພຣະອົງຊົງບັນຍັດໄວ້ ເພິ່ງສະມາທານປະພຶດໃນສິກຂາບົດທີ່ພຣະພຸດທະອົງຊົງບັນຍັດໄວ້"

ພິກຂຸທັງຫຼາຍພໍຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດໃຫ້ພິກຂຸຜູ້ຖືຢູ່ປ່າເປັນວັດ ຖືບິນທະບາດເປັນວັດ ຖືຊົງຜ້າບັງສຸກຸນເປັນວັດ ເຂົ້າເຝົ້າໄດ້ຕາມສະດວກ" ຈຶ່ງປາຖະໜາ

เຂົ້າເຝົ້າ ໄດ້ລະຖິ້ມສັນຖັດພາກັນສະມາທານອາຣັນຍິກະທຸດົງ ປິນດະປາຕິກະທຸດົງ ແລະ ບັງສຸກູລິກະທຸດົງ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າພ້ອມພິກຂຸຈຳນວນຫຼາຍສະເດັດປະພາດຕາມເສນາສະນະ ທອດພຣະເນດເຫັນສັນຖັດຖືກປະຖິ້ມໄວ້ໃນທີ່ນັ້ນ ໆ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສັນຖັດທີ່ຖືກປະຖິ້ມໄວ້ໃນທີ່ນັ້ນ ໆ ເປັນຂອງໃຜ" ພິກຂຸເຫຼົ່ານັ້ນໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ
໕. ເພື່ອປິດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໖໗] ກໍ ພິກຂຸຜູ້ໃຊ້ໃຫ້ເຮັດສັນຖັດຮອງນັ່ງ ເພິ່ງເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນເພື່ອເຮັດໃຫ້ເສຍສີ ຖ້າບໍ່ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນໃຊ້ໃຫ້ເຮັດສັນຖັດຮອງນັ່ງໃໝ່ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພຣະອຸປະເສນະວັງຄັນຕະບຸດ ຈົບ**

## ສິກຂາບົດວິພັງ

[໕໙໘] ທີ່ຊື່ວ່າ ຮອງນັ່ງ ພຣະອົງຕັດມຸ້ງເອົາຜ້າມີຊາຍ

ທີ່ຊື່ວ່າ ສັນຖັດ ໄດ້ແກ່ ຜ້າຮອງນັ່ງທີ່ຫຼໍ່ ບໍ່ແມ່ນທໍ

ຄຳວ່າ ຜູ້ໃຊ້ໃຫ້ເຮັດ ຄື ເຮັດເອງ ຫຼື ໃຊ້ໃຫ້ເຮັດ

ທີ່ຊື່ວ່າ ສັນຖັດເກົ່າ ຄື ທີ່ໃຊ້ປູນັ່ງແດ່ ໃຊ້ປູນອນແດ່ ແມ່ນເວລາດຽວ

ຄຳວ່າ ເພິ່ງເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນເພື່ອເຮັດໃຫ້ເສຍສີ ຄື ຕັດເປັນຮູບຊົງມົນ ຫຼື ຮູບສີ່ຫຼ່ຽມ ແລ້ວຈຶ່ງປູລາດໃນສ່ວນໜຶ່ງ ຫຼື ສາງອອກແລ້ວຈຶ່ງປູລາດ ເພື່ອຄວາມຄົງທົນ

ຄຳວ່າ ຖ້າບໍ່ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນ ຄວາມວ່າ ບໍ່ຖືເອົາ ສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມ ເຮັດເອງ ຫຼື ໃຊ້ໃຫ້ຜູ້ອື່ນເຮັດສັນຖັດຮອງນັ່ງໃໝ່ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ສັນຖັດເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະ ແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະສັນຖັດທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະສັນຖັດທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸ ຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຮອງນັ່ງຜືນນີ້ຂ້ານ້ອຍບໍ່ໄດ້ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນ ໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ສັນຖັດຮອງ ນັ່ງຜືນນີ້ຂ້ານ້ອຍບໍ່ໄດ້ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນ ໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສັນຖັດຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສັນຖັດຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢັ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ສັນຖັດຮອງນັ່ງຜືນນີ້ຂ້ານ້ອຍບໍ່ໄດ້ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາປົນ ໃຊ້ໃຫ້ເຮັດ ເປັນນິດສັກຄີ ຂ້ານ້ອຍສະລະສັນຖັດຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນສັນຖັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສັນຖັດຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໕໗໙] ພິກຂຸເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດສັນຖັດທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກກົດ

ພິກຂຸເຮັດເອງຫຼືໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘໐] ໑. ພິກຂຸເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍອ້ອມມາເຮັດ

໒. ພິກຂຸຫາສັນຖັດເກົ່າບໍ່ໄດ້ຈຶ່ງເອົາແຕ່ໜ້ອຍມາເຮັດ

໓. ພິກຂຸຫາສັນຖັດເກົ່າບໍ່ໄດ້ເລີຍບໍ່ເອົາມາເຮັດ
໔. ພິກຂຸໄດ້ສັນຖັດທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ
໕. ພິກຂຸເຮັດເປັນເພດານ ເຄື່ອງປູລາດພື້ນ ມ່ານ ເປືອກຟູກ ຫຼື ປອກໝອນ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ນິສີທະນະສັນຖະຕະສິກຂາບົດທີ ໕ ຈົບ**

# ໔. ໂກສິຍະວັກ

## ໖. ເອລະກະໂລມະສິກຂາບົດ

### ວ່າດ້ວຍການຮັບຂົນຈຽມ

### ເລື້ອງພິກຂຸອົງໃດອົງໜຶ່ງຮັບຂົນຈຽມລະຫວ່າງທາງ

[໕໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງເດີນທາງໄປນະຄອນສາວັດຖີ ໃນຊົນນະບົດແຄວ້ນໂກສົນ ລະຫວ່າງທາງ ຂົນຈຽມເກີດຂຶ້ນ ທ່ານຈຶ່ງໃຊ້ອຸດຕະຣາສົງຫໍ່ຂົນຈຽມໄປ

ພວກຊາວບ້ານເຫັນທ່ານຈຶ່ງເວົ້າຍອກຫຼິ້ນວ່າ "ທ່ານຊື້ຂົນຈຽມມາລາຄາເທົ່າໃດ ຈະຂາຍມີກຳໄລເທົ່າໃດ"

ທ່ານຖືກຊາວບ້ານເວົ້າຍອກຫຼິ້ນຈຶ່ງເກີ້ເຂີນ ເມື່ອເຖິງນະຄອນສາວັດຖີ ໄດ້ໂຍນຂົນຈຽມເຫຼົ່າ ນັ້ນຖິ້ມໄປທັງທີ່ຍືນຢູ່

ພິກຂຸທັງຫຼາຍ ກ່າວກັບທ່ານຢ່າງນີ້ວ່າ "ເປັນຫຍັງ ທ່ານຈຶ່ງໂຍນຂົນຈຽມເຫຼົ່ານັ້ນຖິ້ມທັງທີ່ຍືນຢູ່ບໍ"

ທ່ານຕອບວ່າ "ຈິງຢ່າງນັ້ນ ທ່ານທັງຫຼາຍ ຂ້ານ້ອຍຖືກພວກຊາວບ້ານເວົ້າຍອກຫຼິ້ນຍ້ອນຂົນຈຽມເຫຼົ່ານີ້"

ພິກຂຸທັງຫຼາຍຖາມວ່າ "ທ່ານນຳຂົນຈຽມເຫຼົ່ານີ້ມາໄກເທົ່າໃດ

ພິກຂຸອົງນັ້ນຕອບວ່າ "ເກີນ ໓ ໂຍດ ຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຈຶ່ງນຳຂົນຈຽມມາໄກເກີນ ໓ ໂຍດນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸອົງນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ “ພິກຂຸ ໄດ້ຂ່າວວ່າທ່ານນຳຂົນຈຽມມາໄກເກີນ ໓ ໂຍດ ແມ່ນບໍ?” ພິກຂຸນັ້ນທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງນຳຂົນຈຽມມາໄກເກີນ ໓ ໂຍດນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໗໔] ກໍ ຂົນຈຽມເກີດຂຶ້ນແກ່ພິກຂຸຜູ້ເດີນທາງໄກ ພິກຂຸຕ້ອງການກໍເພິ່ງຮັບໄດ້ ເມື່ອຮັບແລ້ວ ເມື່ອບໍ່ມີຄົນນຳໄປໃຫ້ ເພິ່ງນຳໄປເອງຕະຫຼອດໄລຍະ ໓ ໂຍດເປັນຢ່າງຫຼາຍ ຖ້າເມື່ອບໍ່ມີຄົນນຳໄປໃຫ້ ນຳໄປໄກກວ່ານັ້ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸອົງໃດອົງໜຶ່ງຮັບຂົນຈຽມລະຫວ່າງທາງ ຈົບ

## ສິກຂາບົດວິພັງ

[໕໗໓] ຄຳວ່າ ກໍ ຯລຯ ແກ່ພິກຂຸຜູ້ເດີນທາງໄກ ໄດ້ແກ່ ພິກຂຸຜູ້ເດີນທາງ

ຄຳວ່າ ຂົນຈຽມເກີດຂຶ້ນ ຄື ເກີດຈາກສົງ ຈາກຄະນະ ຈາກຍາດ ຈາກມິດ ຫຼື ທີ່ເປັນຂອງບັງສຸກຸນ ຫຼື ທີ່ໄດ້ມາດ້ວຍຊັບຂອງຕົນ

ຄຳວ່າ ຕ້ອງການ ຄື ເມື່ອຕ້ອງການກໍຮັບໄວ້ໄດ້

ຄຳວ່າ ເມື່ອຮັບແລ້ວ ຯລຯ ເພິ່ງນຳໄປເອງຕະຫຼອດໄລຍະ ໓ ໂຍດເປັນຢ່າງຫຼາຍ ຄືນຳໄປເອງໄດ້ ໓ ໂຍດ

ຄຳວ່າ ເມື່ອບໍ່ມີຄົນນຳໄປໃຫ້ ຄວາມວ່າ ບໍ່ມີຄົນອື່ນ ຄື ສະຕີ ບຸຣຸດ ຄະລຶຫັດ ຫຼື ບັນພະຊິດ ຖ້າຊ່ອຍນຳໄປ

ຄຳວ່າ ຖ້າເມື່ອບໍ່ມີຄົນນຳໄປໃຫ້ ນຳໄປໄກກວ່ານັ້ນ ອະທິບາຍວ່າ ພິກຂຸກ້າວຂາທີ ໑ ຜ່ານ ໓ ໂຍດໄປ ຕ້ອງອາບັດທຸກກົດ ກ້າວຂາທີ ໔ ຜ່ານໄປ ຂົນຈຽມທັງຫຼາຍເປັນນິດສັກຄີ ພິກຂຸຢືນຢູ່ພາຍໃນໄລຍະ ໓ ໂຍດ ໂຍນຂົນຈຽມອອກນອກໄລຍະ ໓ ໂຍດ ຂົນຈຽມທັງຫຼາຍເປັນນິດສັກຄີ

ພິກຂຸເຊື່ອງຂົນຈຽມໃນຍານພາຫະນະ ຫຼື ໃນຫໍ່ຂອງຂອງຜູ້ອື່ນທີ່ເຂົາບໍ່ຮູ້ ກ້າວຂາໄປເກີນ ໓ ໂຍດ ຂົນຈຽມທັງຫຼາຍເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຂົນຈຽມທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຂົນຈຽມທີ່ເປັນນິດສັກຄີ
## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ຂົນຈຽມເຫຼົ່ານີ້ ຂ້ານ້ອຍນຳໄປເກີນ ໓ ໂຍດ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຂົນຈຽມເຫຼົ່ານີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຂົນຈຽມເຫຼົ່ານີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ຂົນຈຽມເຫຼົ່ານີ້ ຂ້ານ້ອຍນຳໄປເກີນ ໓ ໂຍດ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ທ່ານທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍກ່າວວ່າ “ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຂົນຈຽມເຫຼົ່ານີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຂົນຈຽມເຫຼົ່ານີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຂ້ານ້ອຍ ຂົນຈຽມເຫຼົ່ານີ້ ຂ້ານ້ອຍນຳໄປເກີນ ໓ ໂຍດ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ທ່ານ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍກ່າວວ່າ “ຂ້ານ້ອຍ ຄືນຂົນຈຽມເຫຼົ່ານີ້ໃຫ້ແກ່ທ່ານ”

## ບົດພາຊະນີ
## ຕິກະນິດສັກຄິຍະປາຈິດຕີ

[໕໗໔] ເກີນໄລຍະ ໓ ໂຍດ ພິກຂຸສຳຄັນວ່າເກີນ ນຳໄປເກີນ ໓ ໂຍດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ເກີນໄລຍະ ໓ ໂຍດ ພິກຂຸບໍ່ແນ່ໃຈ ນຳໄປເກີນ ໓ ໂຍດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ເກີນໄລຍະ ໓ ໂຍດ ພິກຂຸສຳຄັນວ່າຍ່ອນກວ່າ ນຳໄປເກີນ ໓ ໂຍດ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ທຸກກະໄດ

ຍ່ອນກວ່າ ໓ ໂຍດ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກະໄດ

ຍ່ອນກວ່າ ໓ ໂຍດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກະໄດ

ຍ່ອນກວ່າ ໓ ໂຍດ ພິກຂຸສຳຄັນວ່າຍ່ອນກວ່າ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໗໕] ໑. ພິກຂຸນຳໄປພຽງ ໓ ໂຍດ

໒. ພິກຂຸນຳໄປຍ່ອນກວ່າ ໓ ໂຍດ

໓. ພິກຂຸນຳໄປກໍດີ ນຳກັບກໍດີ ພຽງໄລຍະ ໓ ໂຍດ

໔. ພິກຂຸນຳໄປພຽງໄລຍະ ໓ ໂຍດ ປະສົງຈະພັກອາໄສ ແລ້ວນຳໄປຈາກທີ່ນັ້ນ

໕. ພິກຂຸໄດ້ຂົນຈຽມທີ່ຖືກຊິງໄປຄືນມາ ແລ້ວນຳໄປອີກ

໖. ພິກຂຸໄດ້ຂົນຈຽມທີ່ສະລະໄປຄືນມາ ແລ້ວນຳໄປອີກ

໗. ພິກຂຸໃຊ້ໃຫ້ຜູ້ອື່ນຊ່ອຍນຳໄປ

໘. ພິກຂຸນຳຂົນຈຽມທີ່ເຮັດເປັນສິ່ງຂອງໄປ

໙. ພິກຂຸວິກົນຈະລິດ

໑໐. ພິກຂຸຕົ້ນບັນຍັດ

**ເອລະກະໂລມະສິກຂາບົດທີ ໖ ຈົບ**

# ໘. ໂກສິຍະວັກ

## ກ. ເອລະກະໂລມະໂທວາປະນະສິກຂາບົດ

### ວ່າດ້ວຍການໃຫ້ຊັກຂົນຈຽມ

### ເລື້ອງພຣະສັບພັກຄີ

[໕ກຜ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ພວກພິກຂຸສັບພັກຄີໃຊ້ພວກພິກຂຸນີໃຫ້ຊັກແດ່ ໃຫ້ຍ້ອມແດ່ ສາງແດ່ ເຊິ່ງຂົນຈຽມ ພວກພິກຂຸນີຊັກ ຍ້ອມ ສາງ ເຊິ່ງຂົນຈຽມ ຈຶ່ງລະເລີຍ ອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິປັນຍາ

ສະໄໝນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດ ແລ້ວປະທັບຢືນໃນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບ ພຣະນາງມະຫາປະຊາບໍດີໂຄຕະມີຜູ້ຢືນຢູ່ວ່າ "ໂຄຕະມີ ພວກພິກຂຸນີຜູ້ບໍ່ຜະໝາດຍັງມີຄວາມພຽນ ມີຄວາມມຸ້ງໝັ້ນຢູ່ບໍ?

ພຣະນາງຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸນີທັງຫຼາຍຈະມີຄວາມບໍ່ຜະໝາດມາແຕ່ໄສໄດ້ ພວກພິກຂຸສັບພັກຄີໃຊ້ພວກພິກຂຸນີໃຫ້ຊັກແດ່ ໃຫ້ຍ້ອມແດ່ ໃຫ້ສາງແດ່ ເຊິ່ງຂົນຈຽມ ພວກພິກຂຸນີນັ້ນຊັກ ຍ້ອມ ສາງ ເຊິ່ງຂົນຈຽມຢູ່ ຈຶ່ງລະເລີຍອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິປັນຍາ"

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະນາງມະຫາປະຊາບໍດີເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ

ລຳດັບນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ພິກຂຸນີໃຫ້ຊັກແດ່

ໃຫ້ຍ້ອມແດ່ ໃຫ້ສາງແດ່ ເຊິ່ງຂົນຈຽມ ແມ່ນບໍ?" ພຣະສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າ ຕັດຖາມວ່າ "ພິກຂຸທັງຫຼາຍ ພິກຂຸນີເຫຼົ່ານັ້ນ ເປັນຍາດຂອງພວກທ່ານຫຼືວ່າບໍ່ແມ່ນຍາດ" ພວກພິກຂຸສັບພັກຄີຂາບທູນວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ບຸກຄົນຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມຫຼືບໍ່ເໝາະສົມ ຄວາມໜ້າເຫຼື້ອມໃສຫຼືບໍ່ໜ້າເຫຼື້ອມໃສ ຂອງບຸກຄົນຜູ້ບໍ່ແມ່ນຍາດ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ພິກຂຸນີໃຫ້ຊັກແດ່ ໃຫ້ຍ້ອມແດ່ ໃຫ້ສາງແດ່ເຊິ່ງຂົນຈຽມນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໗໗] ກໍ ພິກຂຸໃດ ໃຊ້ນາງພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ໃຫ້ຍ້ອມ ຫຼື ໃຫ້ສາງ ຂົນຈຽມ ຕ້ອງອາບັດນິດສັກຄີຍະປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໕໗໘] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ພິກຂຸສັ່ງວ່າ "ຈົ່ງຊັກ" ຕ້ອງອາບັດທຸກກົດ ຂົນຈຽມທີ່ຊັກແລ້ວ ເປັນນິດສັກຄີ

ພິກຂຸສັ່ງວ່າ "ຈົ່ງຍ້ອມ" ຕ້ອງອາບັດທຸກກົດ ຂົນຈຽມທີ່ຍ້ອມແລ້ວ ເປັນນິດສັກຄີ

ພິກຂຸສັ່ງວ່າ "ຈົ່ງສາງ" ຕ້ອງອາບັດທຸກກົດ ຂົນຈຽມທີ່ສາງແລ້ວ ເປັນນິດສັກຄີ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງຮັບສະລະຂົນຈຽມທີ່ເປັນນິດສັກຄີຢ່າງນີ້

# ວິທີສະລະຂົນຈຽມທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຂົນຈຽມເຫຼົ່ານີ້ ຂ້ານ້ອຍໃຊ້ໃຫ້ພິກຂຸນີຜູ້ບໍ່ແມ່ນຍາດຊັກ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຂົນຈຽມເຫຼົ່ານີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຂົນຈຽມເຫຼົ່ານີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຂົນຈຽມເຫຼົ່ານີ້ຂ້ານ້ອຍໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຂົນຈຽມເຫຼົ່ານີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຂົນຈຽມເຫຼົ່ານີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງ ຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຂົນຈຽມເຫຼົ່ານີ້ຂ້ານ້ອຍໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກ ເປັນນິດສັກຄີ ຂ້ານ້ອຍສະລະຂົນຈຽມເຫຼົ່ານີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດ ແລ້ວຄືນຂົນຈຽມທີ່ທ່ານສະລະໃຫ້ດ້ວຍກ່າວວ່າ ຂ້ານ້ອຍຄືນຂົນຈຽມເຫຼົ່ານີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທິ ໑

[໕໗໙] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກຂົນຈຽມ ຕ້ອງອາບັດນິດສັກຄີຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ສາງຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ສາງຂົນຈຽມ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທີ ໒

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມຂົນຈຽມ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ສາງຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ຊັກຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ຍ້ອມ ໃຊ້ໃຫ້ສາງ ໃຊ້ໃຫ້ຊັກຂົນຈຽມ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

## ສຳຄັນວ່າບໍ່ແມ່ນຍາດ ຈະຕຸກກະທີ ໓

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ສາງຂົນຈຽມ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ສາງ ໃຊ້ໃຫ້ຊັກຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ສາງ ໃຊ້ໃຫ້ຍ້ອມຂົນຈຽມ ຕ້ອງອາບັດທຸກກົດກັບອາບັດນິດສັກຄິຍະປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຊ້ໃຫ້ສາງ ໃຊ້ໃຫ້ຊັກ ໃຊ້ໃຫ້ຍ້ອມຂົນຈຽມ ຕ້ອງອາບັດທຸກກົດ ໒ ຕົວ ກັບອາບັດນິດສັກຄິຍະປາຈິດຕີ

### ບໍ່ແນ່ໃຈ ຕ້ອງອາບັດທຸກກົດ

[໕໗໐] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຯລຯ ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຯລຯ

ພິກຂຸໃຊ້ພິກຂຸນີໃຫ້ຊັກຂົນຈຽມຂອງພິກຂຸອື່ນ ຕ້ອງອາບັດທຸກກົດ

ພິກຂຸໃຊ້ພິກຂຸນີຜູ້ອຸປະສົມບົດຈາກສົງຝ່າຍດຽວໃຫ້ຊັກ ຕ້ອງອາບັດທຸກກົດ
ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຕ້ອງອາບັດທຸກກົດ
ພິກຂຸນີທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໗໑] ໑. ພິກຂຸນີຜູ້ເປັນຍາດຊັກໃຫ້ ໂດຍມີເພື່ອນພິກຂຸນີຜູ້ບໍ່ແມ່ນຍາດຖ້າຊ່ວຍເຫຼືອ
໒. ພິກຂຸເຈົ້າຂອງຂົນຈຽມທີ່ພິກຂຸນີອາສາຊັກໃຫ້
໓. ພິກຂຸໃຊ້ໃຫ້ຊັກຂົນຈຽມທີ່ເຮັດເປັນສິ່ງຂອງເຊິ່ງບໍ່ໄດ້ໃຊ້ສອຍ
໔. ພິກຂຸໃຊ້ໃຫ້ສິກຂະມານາຊັກ
໕. ພິກຂຸໃຊ້ໃຫ້ສາມະເນຣີຊັກ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ເອລະກະໂລມະໂທວາປະນະສິກຂາບົດທີ ໗ ຈົບ**

# ໒. ໂກສິຍະວັກ

## ໗. ຣູປິຍະສິກຂາບົດ

## ວ່າດ້ວຍການຮັບຣູປິຍະ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໗໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດເປັນພຣະປະຈຳຕະກູນຂອງຕະກູນໜຶ່ງ ຮັບພັດຕາຫານຢູ່ເປັນປະຈຳ ຫາກຂອງຫຍໍ້າຂອງສັນອັນໃດເກີດຂຶ້ນໃນຕະກູນນັ້ນ ເຂົາກໍຈະເກັບຂອງຫຍໍ້າຂອງສັນອັນນັ້ນໄວ້ເພື່ອທ່ານສ່ວນໜຶ່ງ

ສະໄໝນັ້ນ ໃນເວລາເຢັນ ຊີ້ນເກີດຂຶ້ນໃນຕະກູນນັ້ນ ເຂົາໄດ້ເກັບຊີ້ນນັ້ນໄວ້ເພື່ອທ່ານພຣະອຸປະນັນທະສາກະຍະບຸດສ່ວນໜຶ່ງ ເດັກໃນຕະກູນນັ້ນຕື່ນເຊົ້າມືດ ຮ້ອງໄຫ້ອ້ອນວອນວ່າ "ພວກທ່ານໂຜດໃຫ້ຊີ້ນແກ່ເຮົາ"

ບັດນັ້ນ ສາມີສັ່ງພັນລະຍາວ່າ "ທ່ານຈົ່ງໃຫ້ຊີ້ນສ່ວນຂອງພຣະແກ່ເດັກ ເຮົາຈະຊື້ຂອງອື່ນຖວາຍທ່ານ"

ລຳດັບນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປເຖິງຕະກູນນັ້ນ ນັ່ງເທິງອາສະນະທີ່ເຂົາປູລາດໄວ້ ຊາຍຜູ້ນັ້ນເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງອາສະນະ ເມື່ອເຖິງແລ້ວໄຫວ້ທ່ານແລ້ວນັ່ງລົງໃນທີ່ສົມຄວນ ກ່າວວ່າ "ທ່ານຜູ້ຈະເລີນ ມື້ວານນີ້ໃນເວລາຄ່ຳ ໄດ້ມີຊີ້ນເກີດຂຶ້ນ ພວກຂ້ານ້ອຍໄດ້ເກັບຊີ້ນນັ້ນໄວ້ເພື່ອພຣະຜູ້ເປັນເຈົ້າສ່ວນໜຶ່ງ ເດັກຄົນນີ້ຕື່ນຂຶ້ນມາໃນເວລາເຊົ້າມືດ ຮ້ອງໄຫ້ອ້ອນວອນຮ້ອງຂໍວ່າພວກທ່ານໂຜດໃຫ້ຊີ້ນແກ່ເຮົາ ພວກຂ້ານ້ອຍຈຶ່ງໃຫ້ສ່ວນຂອງພຣະຜູ້ເປັນເຈົ້າແກ່ເດັກນ້ອຍ ພຣະຜູ້ເປັນເຈົ້າຈະໃຫ້ຂ້ານ້ອຍນຳກະຫາປະນະໄປແລກອັນໃດມານໍຂ້ານ້ອຍ" ທ່ານພຣະອຸປະນັນທະສາກະຍະບຸດຖາມວ່າ "ທ່ານບໍລິຈາກຊັບ ໑ ກະຫາປະນະແກ່ອາດຕະມາແມ່ນບໍ?" ເຂົາຕອບວ່າ "ແມ່ນ ຂ້ານ້ອຍ" ທ່ານພຣະອຸປະນັນທະສາກະຍະບຸດ ກ່າວວ່າ "ທ່ານຈົ່ງຖວາຍກະຫາປະນະນັ້ນແກ່ອາດຕະມາເທີ້ນ"

ໃນບັດນັ້ນ ເຂົາຖວາຍກະຫາປະນະແກ່ທ່ານພຣະອຸປະນັນທະສາກະຍະບຸດແລ້ວຕຳໜິປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ຮັບຮູປິຍະ ເໝືອນພວກເຮົາ" ພວກພິກຂຸໄດ້ຍິນບຸຣຸດນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດ ຈຶ່ງຮັບຮູປິຍະແນວນີ້ບໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານຮັບຮູປິຍະແມ່ນບໍ?"

ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງຮັບຮູປິຍະມານໍ ໂມຄະບຸຣຸດການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນ ໄດ້ເລີຍ ฯລฯ" ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໓] ກໍ ພິກຂຸໃດຮັບຫຼືໃຊ້ໃຫ້ຜູ້ອື່ນຮັບຄຳ ແລະເງິນ ຫຼື ຍິນດີຄຳ ແລະ ເງິນທີ່ເຂົາເກັບໄວ້ໃຫ້ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໔໗໔] ຄຳວ່າ ກໍຫລຫໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຫລຫໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຄຳ ພຣະອົງຕັດໝາຍເຖິງວັດຖຸທີ່ມີສີເໝືອນພຣະຜິວກາຍຂອງພຣະສາດສະດາ

ທີ່ຊື່ວ່າ ເງິນ ໄດ້ແກ່ ກະຫາປະນະ ມາສົກທີ່ເຮັດດ້ວຍໂລຫະ ມາສົກທີ່ເຮັດດ້ວຍໄມ້ ມາສົກທີ່ເຮັດດ້ວຍຄັ່ງ ທີ່ໃຊ້ເປັນອັດຕາສຳລັບແລກປ່ຽນຊື້ຂາຍກັນ

ຄຳວ່າ ຮັບ ຄື ພິກຂຸຮັບເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄຳວ່າ ໃຊ້ໃຫ້ຜູ້ອື່ນຮັບ ຄື ພິກຂຸໃຫ້ຄົນອື່ນຮັບແທນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄຳວ່າ ຫຼືຍິນດີຄຳແລະເງິນທີ່ເຂົາເກັບໄວ້ໃຫ້ ຄວາມວ່າ ພິກຂຸຍິນດີຣູປິຍະທີ່ເຂົາເກັບໄວ້ໃຫ້ໂດຍບອກວ່າ "ສິ່ງນີ້ເປັນຂອງທ່ານ" ດັ່ງນີ້ ຣູປິຍະນັ້ນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະໃນທ່າມກາງສົງ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຣູປິຍະທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຣູປິຍະທີ່ເປັນນິດສັກຄີ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຮັບຣູປິຍະໄວ້ ຣູປິຍະນີ້ຂອງຂ້ານ້ອຍເປັນນິດສັກຄີ ຂ້ານ້ອຍສະລະຣູປິຍະນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

## ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ

ຖ້າຄົນງານວັດ ຫຼື ອຸປາສົກຜ່ານມາ ເພິ່ງບອກເຂົາວ່າ "ທ່ານຈົ່ງຮູ້ສິ່ງນີ້" ຖ້າເຂົາກ່າວວ່າ "ຈະໃຫ້ຂ້ານ້ອຍນຳສິ່ງນີ້ໄປແລກອັນໃດມາ" ບໍ່ຄວນບອກເຂົາວ່າ "ຈົ່ງນຳຂອງນີ້ ໆ ມາ" ຄວນບອກແຕ່ຂອງທີ່ເປັນກັບປິຍະ ເຊັ່ນ ເນີຍໃສ ນ້ຳມັນ ນ້ຳເຜິ້ງ ຫຼື ນ້ຳອ້ອຍ

ຖ້າເຂົານຳຣູປີຍະນັ້ນໄປແລກຂອງທີ່ເປັນກັບປີຍະມາຖວາຍ ຍົກເວັ້ນພິກຂຸຜູ້ຮັບຣູປີຍະ ນອກນັ້ນທຸກອົງສັນໄດ້ ຖ້າເຮັດໄດ້ຢ່າງນີ້ ນັ້ນເປັນການດີ ຖ້າເຮັດບໍ່ໄດ້ ເພິ່ງບອກເຂົາວ່າ "ທ່ານໂຜດຖິ້ມຂອງນີ້" ຖ້າເຂົາຖິ້ມໃຫ້ນັ້ນເປັນການດີ ຖ້າບໍ່ຖິ້ມໃຫ້ ເພິ່ງແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍຄຸນສົມບັດ ໕ ຢ່າງໃຫ້ເປັນຜູ້ຖິ້ມຣູປີຍະ

ຄຸນສົມບັດຂອງພິກຂຸຜູ້ຖິ້ມຣູປີຍະ ໕ ຢ່າງ

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ວິທີວ່າຖິ້ມໄດ້ ຫຼື ຖິ້ມຣູປີຍະບໍ່ໄດ້

## ວິທີແຕ່ງຕັ້ງພິກຂຸຜູ້ຖິ້ມຣູປີຍະແລະຄຳແຕ່ງຕັ້ງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງຢ່າງນີ້ ຄື ເບື້ອງຕົ້ນເພິ່ງຂໍໃຫ້ພິກຂຸຮັບ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໕໗໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຣູປີຍະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຣູປີຍະ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຣູປີຍະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ຖິ້ມຣູປີຍະ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າ ຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ພິກຂຸຜູ້ໄດ້ຮັບແຕ່ງຕັ້ງນັ້ນເພິ່ງຖິ້ມຣູປີຍະໄປ ຢ່າກຳນົດທີ່ຕົກ ຖ້າຖິ້ມໂດຍກຳນົດທີ່ຕົກຕ້ອງອາບັດທຸກກົດ

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໕໗໖] ຣູປີຍະ ພິກຂຸສຳຄັນວ່າເປັນຣູປີຍະ ຮັບຣູປີຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ
ຣູປີຍະ ພິກຂຸບໍ່ແນ່ໃຈ ຮັບຣູປີຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ
ຣູປີຍະ ພິກຂຸສຳຄັນວ່າບໍ່ແມ່ນຣູປີຍະ ຮັບຣູປີຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ທຸກກະທຸກກົດ

ສິ່ງທີ່ບໍ່ແມ່ນຣູປິຍະ ພິກຂຸສໍາຄັນວ່າເປັນຣູປິຍະ ຕ້ອງອາບັດທຸກກົດ
ສິ່ງທີ່ບໍ່ແມ່ນຣູປິຍະ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ສິ່ງທີ່ບໍ່ແມ່ນຣູປິຍະ ພິກຂຸສໍາຄັນວ່າບໍ່ແມ່ນຣູປິຍະ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸຈັບເອງຫຼືໃຊ້ໃຫ້ຄົນອື່ນຈັບຣູປິຍະຕົກໃນວັດ ຫຼື ໃນທີ່ຢູ່ເກັບ ໄວ້ດ້ວຍຕັ້ງໃຈວ່າ ເຈົ້າຂອງຈະມາເອົາໄປ
໒. ພິກຂຸວິກົນຈະລິດ
໓. ພິກຂຸຕົ້ນບັນຍັດ

**ຣູປິຍະສິກຂາບົດທີ ໗ ຈົບ**

# ໔. ໂກສິຍະວັກ

## ໙. ຣູປິຍະສັງໂວຫາຣະສິກຂາບົດ

### ວ່າດ້ວຍການແລກປ່ຽນຣູປິຍະ

### ເລື້ອງພຣະສັບພັກຄີ

[໕໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຮັດການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ພວກຊາວບ້ານພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງເຮັດການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ເໝືອນພວກຄະລືຫັດທີ່ຍັງບໍຣິໂພກກາມຢູ່ນໍ?

ພວກພິກຂຸໄດ້ຍິນຊາວບ້ານຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງເຮັດການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕໍາໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຮັດການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງເຮັດການແລກປ່ຽນຣູປິຍະຊະນິດຕ່າງ ໆ ນໍ? ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໘໘] ກໍ ພິກຂຸໃດເຮັດການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ຕ້ອງອາບັດນິດສັກຄີຍະປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໕໘໙] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຄື ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊະນິດຕ່າງ ໆ ຄື ເປັນຮູບປະພັນແດ່ ບໍ່ເປັນຮູບປະພັນແດ່ ເປັນທັງຮູບປະພັນແລະບໍ່ເປັນຮູບປະພັນແດ່

ທີ່ຊື່ວ່າ ເປັນຮູບປະພັນ ໄດ້ແກ່ ເຄື່ອງປະດັບຫົວ ເຄື່ອງປະດັບຄໍ ເຄື່ອງປະດັບມື ເຄື່ອງປະດັບຕີນ ເຄື່ອງປະດັບແອວ

ທີ່ຊື່ວ່າ ບໍ່ເປັນຮູບປະພັນ ພຣະອົງຕັດເຖິງຣູປິຍະທີ່ເຮັດເປັນແທ່ງ

ທີ່ຊື່ວ່າ ເປັນທັງຮູບປະພັນ ແລະບໍ່ເປັນຮູບປະພັນໄດ້ແກ່ເຄື່ອງປະດັບທັງ ໔ ປະເພດນັ້ນ

ທີ່ຊື່ວ່າ ຣູປິຍະ ໄດ້ແກ່ ວັດຖຸທີ່ມີສີເໝືອນພຣະຜິວກາຍຂອງພຣະສາດສະດາ ກະຫາປະນະມາສົກທີ່ເຮັດດ້ວຍໂລຫະ ມາສົກທີ່ເຮັດດ້ວຍໄມ້ ມາສົກທີ່ເຮັດດ້ວຍຄັ່ງ ທີ່ໃຊ້ເປັນອັດຕາສຳລັບແລກປ່ຽນຊື້ຂາຍກັນ

ຄຳວ່າ ເຮັດການ ຄື ເອົາຣູປິຍະທີ່ເປັນຮູບປະພັນແລກປ່ຽນກັບຣູປິຍະທີ່ເປັນຮູບປະພັນເປັນນິດສັກຄີ

ເອົາຮູປິຍະທີ່ເປັນຮູບປະພັນ ແລກປ່ຽນກັບຮູປິຍະທີ່ບໍ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ເປັນຮູບປະພັນແລກປ່ຽນກັບຮູປິຍະທີ່ເປັນທັງຮູບປະພັນ ແລະ ບໍ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ບໍ່ເປັນຮູບປະພັນ ແລກປ່ຽນກັບຮູປິຍະທີ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ບໍ່ເປັນຮູບປະພັນ ແລກປ່ຽນກັບຮູປິຍະທີ່ບໍ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ບໍ່ເປັນຮູບປະພັນ ແລກປ່ຽນກັບຮູປິຍະທີ່ເປັນທັງຮູບປະພັນ ແລະບໍ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ເປັນທັງຮູບປະພັນ ແລະ ບໍ່ເປັນຮູບປະພັນແລກປ່ຽນກັບຮູປິຍະທີ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ເປັນທັງຮູບປະພັນ ແລະ ບໍ່ເປັນຮູບປະພັນແລກປ່ຽນກັບຮູປິຍະທີ່ບໍ່ເປັນຮູບປະພັນ ເປັນນິດສັກຄີ

ເອົາຮູປິຍະທີ່ເປັນທັງຮູບປະພັນ ແລະ ບໍ່ເປັນຮູບປະພັນແລກປ່ຽນກັບຮູປິຍະທີ່ເປັນທັງຮູບປະພັນແລະບໍ່ເປັນຮູບປະພັນ ເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະໃນທ່າມກາງສົງ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຮູປິຍະທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຮູປິຍະທີ່ເປັນນິດສັກຄີ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງປ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍເຮັດການແລກປ່ຽນຮູປິຍະຊະນິດຕ່າງ ໆ ຮູປິຍະນີ້ຂອງຂ້ານ້ອຍເປັນນິດສັກຄີ ຂ້ານ້ອຍສະລະຮູປິຍະນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ

ຖ້າຄົນວັດ ຫຼື ອຸປາສົກຜ່ານມາ ເພິ່ງບອກເຂົາວ່າ "ທ່ານຈົ່ງຮູ້ຂອງນີ້" ຖ້າເຂົາຖາມວ່າ "ຈະໃຫ້ຂ້ານ້ອຍນຳສິ່ງນີ້ໄປແລກອັນໃດມາ" ບໍ່ຄວນບອກເຂົາວ່າ "ຈົ່ງນຳຂອງນີ້ ຫຼື ຂອງນີ້ມາ" ຄວນບອກສະເພາະຂອງທີ່ເປັນກັບປິຍະ ເຊັ່ນ ເນີຍໃສ ນ້ຳມັນ ນ້ຳເຜິ້ງ ຫຼື ນ້ຳອ້ອຍ

ຖ້າເຂົານຳຮູປິຍະນັ້ນໄປແລກຂອງທີ່ເປັນກັບປິຍະມາຖວາຍ ຍົກເວັ້ນພິກຂຸຜູ້ແລກປ່ຽນ ຮູປິຍະ ພິກຂຸນອກນັ້ນທຸກອົງສັນໄດ້ ຖ້າເຮັດໄດ້ຢ່າງນີ້ເປັນການດີ ຖ້າເຮັດບໍ່ໄດ້ ເພິ່ງບອກເຂົາວ່າ "ໂຜດຖິ້ມຂອງນີ້" ຖ້າເຂົາຖິ້ມໃຫ້ ນັ້ນເປັນການດີ ຖ້າບໍ່ຖິ້ມໃຫ້ ເພິ່ງແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍຄຸນສົມບັດ ໕ ຢ່າງໃຫ້ເປັນຜູ້ຖິ້ມຮູປິຍະ ຄື

ຄຸນສົມບັດຂອງພິກຂຸຜູ້ຖິ້ມຮູປິຍະ ໕ ຢ່າງ

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ວິທີວ່າເປັນອັນຖິ້ມ ຫຼື ບໍ່ເປັນອັນຖິ້ມ

## ວິທີແຕ່ງຕັ້ງພິກຂຸຜູ້ຖິ້ມຮູປິຍະແລະຄຳແຕ່ງຕັ້ງ

ສົງເພິ່ງແຕ່ງຕັ້ງຢ່າງນີ້ ຄື ເບື້ອງຕົ້ນເພິ່ງຂໍໃຫ້ພິກຂຸຮັບ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໕໗໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຮູປິຍະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຮູປິຍະ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ຖິ້ມຮູປິຍະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ຖິ້ມຮູປິຍະ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ພິກຂຸຜູ້ໄດ້ຮັບແຕ່ງຕັ້ງນັ້ນເພິ່ງຖິ້ມຮູປິຍະໄປ ຢ່າກຳນົດທີ່ຕົກ ຖ້າຖິ້ມໂດຍກຳນົດທີ່ຕົກຕ້ອງອາບັດທຸກກົດ

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໕໗໑] ຮູປິຍະ ພິກຂຸສຳຄັນວ່າເປັນຮູປິຍະ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຮູປິຍະ ພິກຂຸບໍ່ແນ່ໃຈ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຮູປິຍະ ພິກຂຸສຳຄັນວ່າບໍ່ແມ່ນຮູປິຍະ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸສຳຄັນວ່າເປັນຮູປິຍະ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸບໍ່ແນ່ໃຈ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸສຳຄັນວ່າບໍ່ແມ່ນຮູປິຍະ ແລກປ່ຽນຮູປິຍະ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ທຸກກະທຸກກົດ

ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸສຳຄັນວ່າເປັນຮູປິຍະ ຕ້ອງອາບັດທຸກກົດ
ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ສິ່ງທີ່ບໍ່ແມ່ນຮູປິຍະ ພິກຂຸສຳຄັນວ່າບໍ່ແມ່ນຮູປິຍະ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໙໔] ໑. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ຮູປິຍະສັງໂວຫາຣະສິກຂາບົດທີ ໙ ຈົບ**

# ໔. ໂກສິຍະວັກ

## ໑໐. ກະຍະວິກກະຍະສິກຂາບົດ

## ວ່າດ້ວຍການຊື້ຂາຍ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໙໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຊຳນານການຕັດຫຍິບຈີວອນ ທ່ານໄດ້ເອົາຜ້າເກົ່າ ໆ ເຮັດສັງຄາຕິແລ້ວຍ້ອມ ຈັດແຕ່ງຢ່າງດີແລ້ວໃຊ້ຫົ່ມ

ສະໄໝນັ້ນ ປະຣິພາຊົກຜູ້ໜຶ່ງຫົ່ມຜ້າລາຄາແພງ ເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານວ່າ “ສັງຄາຕິຂອງທ່ານງາມຫຼາຍ ແລກກັບຜ້າຂອງເຮົາເທີ້ນ”

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ “ທ່ານຈົ່ງຮູ້ເອງເທີ້ນ”

ປະຣິພາຊົກຕອບວ່າ “ຂ້າພະເຈົ້າຮູ້ ຂ້ານ້ອຍ”

ທ່ານພຣະອຸປະນັນທະສາກະຍະບຸດຕົກລົງໃຫ້ໄປ ປະຣິພາຊົກທີ່ມສັງຄາຕິຜືນນັ້ນໄປປະຣິພາຊະກາຣາມ ປະຣິພາຊົກທັງຫຼາຍຖາມປະຣິພາຊົກນັ້ນວ່າ "ສັງຄາຕິຂອງທ່ານງາມຫຼາຍ ທ່ານໄດ້ມາແຕ່ໃສ"

ເຂົາຕອບວ່າ "ຂ້າພະເຈົ້າເອົາຜ້າແລກມາ"

ພວກປະຣິພາຊົກກ່າວວ່າ "ສັງຄາຕິຜືນນີ້ຈະທົນຢູ່ໄດ້ຈັກວັນ ຜ້າຜືນນັ້ນດີກວ່າ"

ສະໄໝນັ້ນ ປະຣິພາຊົກນັ້ນຄິດວ່າ "ປະຣິພາຊົກທັງຫຼາຍກ່າວຈິງ ສັງຄາຕິຜືນນີ້ຈະທົນຢູ່ໄດ້ຈັກວັນ ຜ້າຜືນນັ້ນດີກວ່າ" ຈຶ່ງກັບໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານວ່າ "ເອົາສັງຄາຕິຂອງທ່ານໄປ ຈົ່ງໃຫ້ຜ້າຂອງເຮົາຄືນມາ"

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ເຮົາກ່າວກັບທ່ານແລ້ວບໍ່ແມ່ນບໍວ່າ ທ່ານຈົ່ງຮູ້ເອງເທີ້ນ ເຮົາຈະບໍ່ຄືນໃຫ້ທ່ານ

ປະຣິພາຊົກນັ້ນຕໍາໜິ ປະນາມ ໂພນທະນາວ່າ "ແມ່ນພວກຄະລືຫັດຍັງຄືນຂອງໃຫ້ຄະລືຫັດຜູ້ເດືອດຮ້ອນ ແລ້ວເປັນຫຍັງ ບັນພະຊິດຈຶ່ງບໍ່ຍອມຄືນຂອງໃຫ້ບັນພະຊິດດ້ວຍກັນ"

ພວກພິກຂຸໄດ້ຍິນປະຣິພາຊົກນັ້ນຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດຈຶ່ງທໍາການຊື້ຂາຍກັບປະຣິພາຊົກນໍ" ເມື່ອພິກຂຸເຫຼົ່ານັ້ນຕໍາໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າທ່ານເຮັດການຊື້ຂາຍກັບ ປະຣິພາຊົກ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງເຮັດການຊື້ຂາຍກັບປະຣິພາຊົກແນວນີ້ນໍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດ ນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໗໔] ກໍ ພິກຂຸໃດເຮັດການຊື້ຂາຍມີປະການຕ່າງ ໆ ຕ້ອງອາບັດນິດສັກຄິຍະປາຈິດຕິ

**ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ**

## ສິກຂາບົດວິພັງ

[໕໗໕] ຄໍາວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄໍາວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີປະການຕ່າງ ໆ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ໂດຍທີ່ສຸດກະທັ່ງກ້ອນແປ້ງ ໄມ້ຖູແຂ້ວ ຫຼື ດ້າຍຊາຍຜ້າ

ຄໍາວ່າ ເຮັດການຊື້ຂາຍ ຄື ພິກຂຸເວົ້າເປັນເຊີງບັງຄັບວ່າ "ທ່ານຈົ່ງໃຫ້ຂອງສິ່ງນີ້ດ້ວຍຂອງນີ້ ນໍາຂອງສິ່ງນີ້ມາດ້ວຍຂອງນີ້ ແລກປ່ຽນຂອງສິ່ງນີ້ດ້ວຍຂອງນີ້ ຈ່າຍຂອງສິ່ງນີ້ດ້ວຍຂອງນີ້" ດັ່ງນີ້ເປັນຕົ້ນ ຕ້ອງອາບັດທຸກກົດ

ກໍຕໍ່ເມື່ອສິ່ງຂອງຂອງຕົນຕົກໄປຢູ່ໃນມືຂອງຄົນອື່ນ ແລະ ສິ່ງຂອງຂອງຄົນອື່ນຕົກມາຢູ່ໃນມືຂອງຕົນຈັດເປັນການຊື້ຂາຍກັນ ເປັນນິດສັກຄີ ຄື ເປັນຂອງຈໍາຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຂອງທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍໄດ້ທໍາການຊື້ຂາຍມີປະການຕ່າງ ໆ ສິ່ງຂອງນີ້ຂອງຂ້ານ້ອຍເປັນນິດສັກຄີ ຂ້ານ້ອຍສະລະສິ່ງຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເມື່ອຮັບອາບັດແລ້ວ ເພິ່ງຄືນສິ່ງຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກໍາມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສິ່ງຂອງນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສິ່ງຂອງນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍທໍາການຊື້ຂາຍມີປະການ

ຕ່າງ ໆ ສິ່ງຂອງນີ້ຂອງຂ້ານ້ອຍເປັນນິດສັກຄີ ຂ້ານ້ອຍສະລະສິ່ງຂອງນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນສິ່ງຂອງທີ່ທ່ານສະລະໃຫ້ດ້ວຍກ່າວວ່າ ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ສິ່ງຂອງນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ສິ່ງຂອງນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຂ້ານ້ອຍເຮັດການຊື້ຂາຍມີປະການ ຕ່າງ ໆ ສິ່ງຂອງນີ້ຂອງຂ້ານ້ອຍເປັນນິດສັກຄີ ຂ້ານ້ອຍສະລະສິ່ງຂອງນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບເພິ່ງຮັບອາບັດແລ້ວຄືນສິ່ງຂອງທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນສິ່ງຂອງນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໔໙໖] ເປັນການຊື້ຂາຍ ພິກຂຸສຳຄັນວ່າເປັນການຊື້ຂາຍຕ້ອງອາບັດນິດສັກຄິຍະປາຈິດຕີ
ເປັນການຊື້ຂາຍ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ
ເປັນການຊື້ຂາຍ ພິກຂຸສຳຄັນວ່າບໍ່ໄດ້ເປັນການຊື້ຂາຍ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ບໍ່ໄດ້ເປັນການຊື້ຂາຍ ພິກຂຸສຳຄັນວ່າເປັນການຊື້ຂາຍ ຕ້ອງອາບັດທຸກກົດ
ບໍ່ໄດ້ເປັນການຊື້ຂາຍ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ໄດ້ເປັນການຊື້ຂາຍ ພິກຂຸສຳຄັນວ່າບໍ່ໄດ້ເປັນການຊື້ຂາຍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໗] ໑. ພິກຂຸຖາມລາຄາ
໔. ພິກຂຸບອກກັບປິຍະກາຣະກະ

໓. ພິກຂຸກ່າວວ່າ "ເຮົາມີຂອງນີ້ ແຕ່ເຮົາຕ້ອງການຂອງນີ້ ແລະນີ້"
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ກະຍະວິກກະຍະສິກຂາບົດທີ ໑໐ ຈົບ**

**ໂກສິຍະວັກທີ ໑ ຈົບ**

## ລວມສິກຂາບົດທີ່ມີໃນໂກສິຍະວັກ

ໂກສິຍະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ໂກສິຍະສິກຂາບົດ | ວ່າດ້ວຍການເຮັດສັນຖັດໃຍໄໝ |
| ໒. ສຸດທະກາລະກະສິກຂາບົດ | ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳລ້ວນ |
| ໓. ທະເວພາຄະສິກຂາບົດ | ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳ ໒ ສ່ວນ |
| ໔. ສັບພັດສະສິກຂາບົດ | ວ່າດ້ວຍການເກັບສັນຖັດໄວ້ ໖ ປີ |
| ໕. ນິສີທະນະສັນຖະຕະສິກຂາບົດ | ວ່າດ້ວຍການເຮັດສັນຖັດສຳລັບຮອງນັ່ງ |
| ໖. ເອລະກະໂລມະສິກຂາບົດ | ວ່າດ້ວຍການຮັບຂົນຈຽມ |
| ໗. ເອລະກະໂລມະໂທວາປະນະສິກຂາບົດ | ວ່າດ້ວຍການໃຫ້ຊັກຂົນຈຽມ |
| ໘. ຣູປິຍະສິກຂາບົດ | ວ່າດ້ວຍການຮັບຣູປິຍະ |
| ໙. ຣູປິຍະສັງໂວຫາຣະສິກຂາບົດ | ວ່າດ້ວຍການແລກປ່ຽນຣູປິຍະ |
| ໑໐. ກະຍະວິກກະຍະສິກຂາບົດ | ວ່າດ້ວຍການຊື້ຂາຍ |

# ໖. ປັດຕະວັກ

## ໝວດວ່າດ້ວຍບາດ

## ໑. ປັດຕະສິກຂາບົດ

## ວ່າດ້ວຍບາດ

## ເລື້ອງພຣະສັບພັກຄີ

[໕ລຖ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຮັດການສະສົມບາດໄວ້ເປັນຈຳນວນຫຼາຍ ພວກຊາວບ້ານຍ່າງທ່ຽວຕາມວິຫານເຫັນເຂົ້າຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງເຮັດການສະສົມບາດໄວ້ເປັນຈຳນວນຫຼາຍ ຈະເປັນພໍ່ຄ້າຂາຍບາດ ຫຼື ຕັ້ງຮ້ານຂາຍພາຊະນະດິນເຜົາກັນແມ່ນບໍ?"

ພິກຂຸທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຊົງອະຕິເຣກບາດແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກທ່ານຊົງອະຕິເຣກບາດ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຊົງອະຕິເຣກບາດໄວ້ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕ລລ] ກໍ ພິກຂຸໃດຊົງອະຕິເຣກບາດ ຕ້ອງອາບັດນິດສັກຄິຍະປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະສັບພັກຄີ ຈົບ**

## ເລື້ອງພຣະອານົນ

[໖໐໐] ສະໄໝນັ້ນ ອະຕິເຣກບາດເກີດຂຶ້ນແກ່ທ່ານພຣະອານົນ ທ່ານພຣະອານົນຕ້ອງການຈະຖວາຍອະຕິເຣກບາດນັ້ນແກ່ທ່ານພຣະສາຣີບຸດ ແຕ່ທ່ານພຣະສາຣີບຸດຢູ່ທີ່ເມືອງສາເກດ ໃນທີ່ນັ້ນ ທ່ານພຣະອານົນໄດ້ມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸບໍ່ເພິ່ງຊົງອະຕິເຣກບາດ ກໍອະຕິເຣກບາດນີ້ເກີດຂຶ້ນແກ່ເຮົາ ເຮົາຕ້ອງການຈະຖວາຍທ່ານພຣະສາຣີບຸດ ແຕ່ທ່ານຢູ່ທີ່ເມືອງສາເກດ ເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອີກດົນປານໃດ ສາຣີບຸດຈະກັບມາ"

ພຣະອານົນຂາບທູນວ່າ "ອີກ ໙ ຫຼື ໑໐ ວັນ ຈຶ່ງຈະກັບມາ ຂ້ານ້ອຍ"

## ຊົງອະນຸຍາດອະຕິເຣກບາດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຊົງອະຕິເຣກບາດໄວ້ໄດ້ ໑໐ ວັນເປັນຢ່າງຫຼາຍ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໖໐໑] ພິກຂຸເພິ່ງຊົງອະຕິເຣກບາດໄວ້ໄດ້ ໑໐ ວັນເປັນຢ່າງຫຼາຍ ໃຫ້ເກີນກຳນົດນັ້ນໄປຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງພຣະອານົນ ຈົບ

## ສິກຂາບົດວິພັງ

[໖໐໔] ຄຳວ່າ ໑໐ ວັນເປັນຢ່າງຫຼາຍ ຄື ຄອບຄອງໄວ້ໄດ້ ໑໐ ວັນເປັນຢ່າງຫຼາຍ

ທີ່ຊື່ວ່າ ອະຕິເຣກບາດ ໄດ້ແກ່ ບາດທີ່ບໍ່ໄດ້ອະທິຖານ ບໍ່ໄດ້ວິກັບ

ທີ່ຊື່ວ່າ ບາດ ໄດ້ແກ່ບາດ ໒ ຊະນິດ ຄື ບາດເຫຼັກ ແລະບາດດິນເຜົາ

### ຂະໜາດບາດ

ບາດມີ ໓ ຂະໜາດ ຄື (໑) ບາດຂະໜາດໃຫຍ່ (໒) ບາດຂະໜາດກາງ (໓) ບາດຂະໜາດນ້ອຍ

ທີ່ຊື່ວ່າ ບາດຂະໜາດໃຫຍ່ ໃສ່ເຂົ້າສຸກຈາກເຂົ້າສານ ໒ ທະນານ ໃສ່ຂອງຫຍ້ຳເສດໜຶ່ງສ່ວນສີ່ໃສ່ເຄື່ອງກັບພໍສົມຄວນແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາດຂະໜາດກາງ ໃສ່ເຂົ້າສຸກຈາກເຂົ້າສານ ໑ ທະນານ ໃສ່ຂອງຫຍໍ້າເສດໜຶ່ງ ສ່ວນສີ່ໃສ່ເຄື່ອງກັບພໍສົມຄວນແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາດຂະໜາດນ້ອຍ ໃສ່ເຂົ້າສຸກຈາກເຂົ້າສານເຄິ່ງທະນານ ໃສ່ຂອງຫຍໍ້າເສດໜຶ່ງ ສ່ວນສີ່ໃສ່ເຄື່ອງກັບພໍສົມຄວນແກ່ເຂົ້າສຸກນັ້ນ

ບາດມີຂະໜາດໃຫຍ່ກວ່ານັ້ນເປັນບາດທີ່ໃຊ້ບໍ່ໄດ້ ບາດມີຂະໜາດນ້ອຍກວ່ານັ້ນກໍເປັນບາດທີ່ໃຊ້ບໍ່ໄດ້

ຄໍາວ່າ ໃຫ້ເກີນກໍານົດນັ້ນໄປ ຕ້ອງອາບັດນິດສັກຄິຍະປາຈິດຕີ ຄວາມວ່າ ເມື່ອອະຣຸນວັນທີ ໑໑ ບາດໜ່ວຍນັ້ນ ເປັນນິດສັກຄີ ຄື ເປັນຂອງຈໍາຕ້ອງສະລະແກ່ສົງ ແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະບາດທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະບາດທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ບາດໜ່ວຍນີ້ຂອງຂ້ານ້ອຍເກີນກໍານົດ ໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະບາດໜ່ວຍນີ້ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນບາດທີ່ທ່ານສະລະໃຫ້ດ້ວຍຍັດຕິກໍາມະວາຈາວ່າ

[໖໐໓] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບາດໜ່ວຍນີ້ຂອງພິກຂຸຊື່ນີ້ ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ບາດໃບນີ້ແກ່ພິກຂຸຊື່ນີ້”

### ສະລະແກ່ຄະນະ

[໖໐໔] ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ບາດໜ່ວຍນີ້ຂອງຂ້ານ້ອຍເກີນກໍານົດ ໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະບາດໜ່ວຍນີ້ແກ່ທ່ານທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນບາດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ

[໖໐໕] ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ບາດໜ່ວຍນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແລ້ວແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວເພິ່ງໃຫ້ບາດໜ່ວຍນີ້ແກ່ພິກຂຸຊື່ນີ້”

## ສະລະແກ່ບຸກຄົນ

[໖໐໖] ພິກຂຸອີງນັ້ນເພິ່ງເຂົ້າໄປຫາພິກຂຸອີງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ບາດໜ່ວຍນີ້ຂອງຂ້ານ້ອຍເກັບເກີນກຳນົດ ໑໐ ວັນ ເປັນນິດສັກຄີ ຂ້ານ້ອຍສະລະບາດໜ່ວຍນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນບາດທີ່ສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍໃຫ້ບາດໃບນີ້ແກ່ທ່ານ"

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໖໐໗] ບາດທີ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າເກີນກຳນົດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດທີ່ເກີນກຳນົດ ໑໐ ວັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດທີ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າຍັງບໍ່ເກີນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດທີ່ຍັງບໍ່ໄດ້ອະທິຖານ ພິກຂຸສຳຄັນວ່າອະທິຖານແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດທີ່ຍັງບໍ່ໄດ້ວິກັບ ພິກຂຸສຳຄັນວ່າວິກັບແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ໄດ້ສະລະ ພິກຂຸສຳຄັນວ່າສະລະແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ແຕກ ພິກຂຸສຳຄັນວ່າບາດແຕກແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ຖືກໂຈນຊິງເອົາໄປ ພິກຂຸສຳຄັນວ່າຖືກຊິງເອົາໄປ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ຕິກະທຸກກົດ

ບາດທີ່ເປັນນິດສັກຄີ ພິກຂຸຍັງບໍ່ສະລະ ໃຊ້ສອຍ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າເກີນກຳນົດແລ້ວໃຊ້ສອຍ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸບໍ່ແນ່ໃຈ ໃຊ້ສອຍ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດ ໑໐ ວັນ ພິກຂຸສຳຄັນວ່າຍັງບໍ່ເກີນກຳນົດ ໃຊ້ສອຍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໐໗] ໑. ພິກຂຸຜູ້ອະທິຖານພາຍໃນ ໑໐ ວັນ
໒. ພິກຂຸຜູ້ວິກັບໄວ້ພາຍໃນ ໑໐ ວັນ
໓. ພິກຂຸຜູ້ສະລະໃຫ້ໄປພາຍໃນ ໑໐ ວັນ
໔. ພິກຂຸຜູ້ມີບາດເສຍຫາຍພາຍໃນ ໑໐ ວັນ
໕. ພິກຂຸຜູ້ມີບາດສູນຫາຍພາຍໃນ ໑໐ ວັນ
໖. ພິກຂຸຜູ້ມີບາດແຕກພາຍໃນ ໑໐ ວັນ
໗. ພິກຂຸຜູ້ມີບາດຖືກໂຈນຊີງເອົາໄປພາຍໃນ ໑໐ ວັນ
໘. ພິກຂຸຜູ້ມີບາດຖືກຖືເອົາໄປໂດຍວິສາສະພາຍໃນ ໑໐ ວັນ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ຍອມຄືນບາດທີ່ມີຜູ້ສະລະໃຫ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະອົງຮັບສັ່ງວ່າ "ພິກຂຸທັງຫຼາຍ ບາດທີ່ພິກຂຸສະລະໃຫ້ແລ້ວ ຈະບໍ່ຄືນໃຫ້ບໍ່ໄດ້ ພິກຂຸໃດບໍ່ຄືນ ຕ້ອງອາບັດທຸກກົດ"

**ປັດຕະສິກຂາບົດທີ ໑ ຈົບ**

# ໓. ປັດຕະວັກ

## ໔. ອູນະປັນຈະພັນທະນະສິກຂາບົດ

### ວ່າດ້ວຍບາດມີຮອຍຕາບຍ່ອນກວ່າ ໕ ແຫ່ງ

### ເລື້ອງພິກຂຸຫຼາຍອົງ

[໓໐໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ນາຍຊ່າງໝໍ້ຄົນໜຶ່ງປະວາຣະນາພິກຂຸທັງຫຼາຍໄວ້ວ່າ "ຂ້ານ້ອຍຈະຖວາຍບາດແກ່ພຣະຜູ້ເປັນເຈົ້າຜູ້ຕ້ອງການບາດ"

ສະໄໝນັ້ນ ພິກຂຸທັງຫຼາຍບໍ່ຮູ້ຈັກປະມານ ອອກປາກຂໍບາດເປັນຈຳນວນຫຼາຍ ພວກພິກຂຸຜູ້ມີບາດຂະໜາດນ້ອຍກໍອອກປາກຂໍບາດຂະໜາດໃຫຍ່ ພວກພິກຂຸຜູ້ມີບາດຂະໜາດໃຫຍ່ກໍອອກປາກຂໍບາດຂະໜາດນ້ອຍ ນາຍຊ່າງເອົາແຕ່ເຮັດບາດເປັນຈຳນວນຫຼາຍໃຫ້ພິກຂຸທັງຫຼາຍຈົນບໍ່ສາມາດເຮັດການຄ້າຂາຍຢ່າງອື່ນ ຕົນເອງກໍຫາລ້ຽງຊີບບໍ່ພໍ ທັງບຸດພັນລະຍາກໍພາກັນລຳບາກໄປນຳ ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງບໍ່ຮູ້ປະມານ ອອກປາກຂໍບາດເປັນຈຳນວນຫຼາຍແນວນັ້ນນໍ? ນາຍຊ່າງເອົາແຕ່ເຮັດບາດເປັນຈຳນວນຫຼາຍໃຫ້ພິກຂຸທັງຫຼາຍຈົນບໍ່ສາມາດເຮັດການຄ້າຂາຍຢ່າງອື່ນ ຕົນເອງກໍຫາລ້ຽງຊີບບໍ່ພໍ ທັງບຸດພັນລະຍາກໍພາກັນລຳບາກໄປນຳ

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງບໍ່ຮູ້ປະມານ ອອກປາກຂໍບາດເປັນຈຳນວນຫຼາຍນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງຫ້າມຂໍບາດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸບໍ່ຮູ້ປະມານ ອອກປາກຂໍ ບາດເປັນຈຳນວນຫຼາຍ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນຈຶ່ງບໍ່ຮູ້ປະມານອອກປາກຂໍບາດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ເມື່ອຕຳໜິແລ້ວ ຈຶ່ງຊົງສະແດງ

ທຳມີກະຖາແລ້ວຕັດກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງອອກປາກຂໍບາດ ອົງໃດຂໍ ຕ້ອງອາບັດທຸກກົດ

**ເລື້ອງພິກຂຸຫຼາຍອົງ ຈົບ**

## ຊົງອະນຸຍາດໃຫ້ຂໍບາດໄດ້

[໓໑໐] ສະໄໝນັ້ນ ບາດຂອງພິກຂຸອົງໜຶ່ງແຕກ ທ່ານມີຄວາມຢຳເກງວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການອອກປາກຂໍບາດ" ຈຶ່ງບໍ່ອອກປາກຂໍບາດ ທ່ຽວຮັບບິນທະບາດດ້ວຍມືທັງສອງ ພວກຊາວບ້ານຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງທ່ຽວຮັບບິນທະບາດດ້ວຍມືທັງສອງເໝືອນພວກເດຍຣະຖີນໍ"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ມີບາດຫາຍ ຫຼື ບາດແຕກ ອອກປາກຂໍບາດໄດ້"

## ເລື້ອງພຣະສັບພັກຄີ

[໓໑໑] ສະໄໝນັ້ນ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸຜູ້ມີບາດຫາຍ ຫຼື ບາດແຕກອອກປາກຂໍບາດໄດ້" ພວກທ່ານມີບາດແຕກພຽງເລັກໜ້ອຍແດ່ ບາດກະເທາະພຽງເລັກໜ້ອຍແດ່ ບາດມີຮອຍຂູດຂີດພຽງເລັກໜ້ອຍແດ່ ອອກປາກຂໍບາດມາເປັນຈຳນວນຫຼາຍ

ສະໄໝນັ້ນ ນາຍຊ່າງໝໍ້ເອົາແຕ່ເຮັດບາດເປັນຈຳນວນຫຼາຍໃຫ້ພິກຂຸທັງຫຼາຍຢູ່ຢ່າງນັ້ນ ຈົນບໍ່ສາມາດຄ້າຂາຍຢ່າງອື່ນ ຕົນເອງກໍຫາລ້ຽງຊີບບໍ່ພໍ ທັງບຸດພັນລະຍາກໍພາກັນລຳບາກໄປນຳ ພວກຊາວບ້ານຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງບໍ່ຮູ້ປະມານ ອອກປາກຂໍບາດເປັນຈຳນວນຫຼາຍນໍ ນາຍຊ່າງໝໍ້ເອົາແຕ່ເຮັດບາດເປັນຈຳນວນຫຼາຍໃຫ້ພິກຂຸທັງຫຼາຍ ຈົນບໍ່ສາມາດເຮັດການຄ້າຂາຍຢ່າງອື່ນ ຕົນເອງກໍຫາລ້ຽງຊີບບໍ່ພໍ ທັງບຸດພັນລະຍາກໍພາກັນລຳບາກໄປນຳ"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີມີບາດແຕກພຽງເລັກໜ້ອຍແດ່ ບາດກະເທາະພຽງເລັກໜ້ອຍແດ່ ບາດມີຮອຍຂູດຂີດພຽງເລັກໜ້ອຍແດ່ ອອກປາກຂໍ

ບາດມາເປັນຈຳນວນຫຼາຍນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີ ໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານມີບາດແຕກພຽງເລັກໜ້ອຍແດ່ ບາດກະເທາະພຽງເລັກໜ້ອຍແດ່ ບາດມີຮອຍຂູດຂີດພຽງເລັກໜ້ອຍແດ່ ກໍອອກປາກຂໍບາດມາເປັນຈຳນວນຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານທັງທີ່ມີບາດແຕກພຽງເລັກໜ້ອຍແດ່ ບາດກະເທາະພຽງເລັກໜ້ອຍແດ່ ບາດມີຮອຍຂູດຂີດພຽງເລັກໜ້ອຍແດ່ ອອກປາກຂໍບາດມາເປັນຈຳນວນຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໑໘] ກໍ ພິກຂຸໃດມີບາດທີ່ມີຮອຍຕາບຍ່ອນກວ່າ ໕ ແຫ່ງ ຂໍບາດໃໝ່ ໜ່ວຍອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ ພິກຂຸນັ້ນເພິ່ງສະລະບາດໃບນັ້ນໃນພິກຂຸບໍລິສັດ ບາດໜ່ວຍສຸດທ້າຍອັນພິກຂຸບໍລິສັດນັ້ນເພິ່ງມອບໃຫ້ພິກຂຸນັ້ນດ້ວຍສັ່ງວ່າ "ພິກຂຸ ບາດນີ້ເປັນຂອງທ່ານ ເພິ່ງໃຊ້ຈົນກວ່າຈະແຕກ" ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໑໙] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ບາດທີ່ຊື່ວ່າ ມີຮອຍຕາບຍ່ອນກວ່າ ໕ ແຫ່ງ ຄື ບາດບໍ່ມີຮອຍຕາບ ຫຼື ມີຮອຍຕາບພຽງ ໑ ແຫ່ງ ມີຮອຍຕາບພຽງ ໒ ແຫ່ງ ມີຮອຍຕາບພຽງ ໓ ແຫ່ງ ມີຮອຍຕາບພຽງ ໔ ແຫ່ງ

ບາດທີ່ຊື່ວ່າ ບໍ່ມີຮອຍຕາບ ໄດ້ແກ່ ບາດບໍ່ມີຮອຍແຫງເຖິງ ໒ ນີ້ວ

ບາດທີ່ຊື່ວ່າ ມີຮອຍຕາບ ໄດ້ແກ່ ບາດມີຮອຍແຫງຍາວ ໒ ນີ້ວ

ບາດທີ່ຊື່ວ່າ ໃໝ່ ພຣະຜູ້ມີພຣະພາກເຈົ້າຕັດມຸ້ງເອົາການອອກປາກຂໍມາ

ຄຳວ່າ ຂໍ ຄື ອອກປາກຂໍ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ບາດເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະໃນທ່າມກາງສົງ

ພິກຂຸທຸກອົງເພິ່ງຖືບາດທີ່ອະທິຖານໄປປະຊຸມ ບໍ່ຄວນອະທິຖານບາດຄຸນນະພາບບໍ່ດີດ້ວຍຄິດວ່າ "ເຮົາຈະເອົາບາດມີຄ່າຫຼາຍ" ຖ້າອະທິຖານບາດຄຸນນະພາບບໍ່ດີດ້ວຍຄິດວ່າ "ເຮົາຈະເອົາບາດມີຄ່າຫຼາຍ" ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະບາດທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະບາດທີ່ເປັນນິດສັກຄີ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງປ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍມີບາດມີຮອຍຕາບຢ່ອນກວ່າ ໕ ແຫ່ງ ຂໍບາດໜ່ວຍນີ້ມາ ເປັນນິດສັກຄີ ຂ້ານ້ອຍສະລະບາດໜ່ວຍນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ສົງເພິ່ງແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍຄຸນສົມບັດ ໕ ຢ່າງໃຫ້ເປັນຜູ້ປ່ຽນບາດ

ຄຸນສົມບັດຂອງພິກຂຸຜູ້ປ່ຽນບາດໃຫ້ ໕ ຢ່າງ

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຍ້ານ
໕. ຮູ້ຈັກວິທີວ່າເປັນອັນປ່ຽນ ຫຼື ບໍ່ເປັນອັນປ່ຽນ

## ວິທີແຕ່ງຕັ້ງພິກຂຸຜູ້ປ່ຽນບາດແລະກຳມະວາຈາແຕ່ງຕັ້ງ

ສົງເພິ່ງແຕ່ງຕັ້ງຢ່າງນີ້ ຄືເບື້ອງຕົ້ນ ເພິ່ງຂໍໃຫ້ພິກຂຸຮັບ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໖໑໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງສົມມຸດພິກຂຸນີ້ໃຫ້ເປັນຜູ້ປ່ຽນບາດ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ປ່ຽນບາດ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ປ່ຽນບາດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ປ່ຽນບາດ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

[ຜ໑໕] ພິກຂຸຜູ້ໄດ້ຮັບແຕ່ງຕັ້ງເພິ່ງໃຫ້ປ່ຽນບາດ ເພິ່ງຮຽນພຣະເຖຣະວ່າ “ທ່ານ ຜູ້ຈະເລີນ ທ່ານຈົ່ງປ່ຽນບາດ” ຖ້າພຣະເຖຣະປ່ຽນ ກໍເພິ່ງຖວາຍບາດຂອງພຣະເຖຣະໃຫ້ພຣະເຖຣະອົງທີ ໒ ປ່ຽນ ພິກຂຸຈະບໍ່ປ່ຽນຍ້ອນຄວາມສົງສານທ່ານບໍ່ໄດ້ ພິກຂຸໃດບໍ່ຍອມປ່ຽນ ຕ້ອງອາບັດທຸກກົດ ບໍ່ຄວນໃຫ້ພິກຂຸຜູ້ບໍ່ມີບາດປ່ຽນ ຄວນໃຫ້ປ່ຽນເລື່ອນລົງມາໂດຍວິທີນີ້ຈົນເຖິງພິກຂຸໃໝ່ໃນສົງ ບາດໜ່ວຍສຸດທ້າຍທ່າມກາງສົງຄວນມອບແກ່ພິກຂຸນັ້ນດ້ວຍສັ່ງວ່າ “ບາດນີ້ເປັນຂອງທ່ານ ເພິ່ງໃຊ້ຈົນກວ່າຈະແຕກ”

ພິກຂຸນັ້ນບໍ່ຄວນເກັບບາດໄວ້ໃນທີ່ບໍ່ຄວນ ບໍ່ຄວນໃຊ້ສອຍໂດຍວິທີບໍ່ເໝາະ ແລະບໍ່ຄວນປະຖິ້ມໂດຍຄິດວ່າ ເຮັດຢ່າງໃດບາດໜ່ວຍນີ້ຈະເສຍ ສູນຫາຍ ຫຼື ແຕກ ຖ້າທ່ານເກັບໄວ້ໃນທີ່ທີ່ບໍ່ເໝາະ ໃຊ້ສອຍບໍ່ຖືກວິທີ ຫຼື ປ່ອຍຖິ້ມ ຕ້ອງອາບັດທຸກກົດ

ຄຳວ່າ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ ຄື ນີ້ເປັນຄວາມຖືກຕ້ອງໃນເລື້ອງນັ້ນ

## ບົດພາຊະນີ

## ບາດທີ່ບໍ່ມີຮອຍຕາບ

[ຜ໑໖] ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໒ ແຫ່ງ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໓ ແຫ່ງ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດ ນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໑ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໒ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໓ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໒ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໒ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໓ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໓ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໒ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໓ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໔ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໒ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໓ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ບໍ່ມີຮອຍຕາບ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ຍັງບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໑ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ຍັງບໍ່ມີຮອຍຕາບ ຯລຯ ບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໒ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ຍັງບໍ່ມີຮອຍຕາບ ຯລຯບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯພິກຂຸມີບາດທີ່ມີຮອຍ ຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໓ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ຍັງບໍ່ມີຮອຍຕາບ ຯລຯ ບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໔ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ຍັງບໍ່ມີຮອຍຕາບ ຯລຯ ບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ຍັງບໍ່ມີຮອຍຕາບ

ພິກຂຸມີບາດທີ່ຍັງບໍ່ມີຮອຍຕາບ ຂໍບາດທີ່ບໍ່ມີຮອຍຕາບ ຕ້ອງອາບັດນິດສັກຄິຍະປາຈິດຕີ ພິກຂຸມີບາດທີ່ຍັງບໍ່ມີຮອຍຕາບ ຂໍບາດມີຮອຍຕາບ ໑ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ຍັງບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໑ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຯລຯ ບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໒ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດບໍ່ມີຮອຍຕາບ ຯລຯ ບາດທີ່ມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີທີ່ຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໓ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດບໍ່ມີຮອຍຕາບ ຯລຯ ບາດມີຮອຍຕາບ ໑ ແຫ່ງ ຯລຯບາດທີ່ມີຮອຍຕາບ ໒ ແຫ່ງ ຯລຯ ບາດທີ່ມີຮອຍຕາບ ໓ ແຫ່ງ ຯລຯ ພິກຂຸມີບາດທີ່ມີທີ່ ຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໔ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫບາດທີ່ມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ມີຮອຍ ຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ບໍ່ມີຮອຍຕາບ

ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫ ບາດມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ບໍ່ມີຮອຍຕາບ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໑ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ມີຮອຍຕາບ ໑ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໒ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ມີຮອຍຕາບ ໒ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໓ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ມີຮອຍຕາບ ໓ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ບາດທີ່ມີຮອຍຕາບ ໔ ແຫ່ງ

ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ບໍ່ມີຮອຍຕາບ ຫລຫ ບາດທີ່ມີຮອຍຕາບ ໑ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໒ ແຫ່ງ ຫລຫ ບາດທີ່ມີຮອຍຕາບ ໓ ແຫ່ງ ຫລຫ ພິກຂຸມີບາດທີ່ມີຮອຍຕາບ ໔ ແຫ່ງ ຂໍບາດທີ່ມີຮອຍຕາບ ໔ ແຫ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ຜ໑໗] ໑. ພິກຂຸມີບາດສູນຫາຍ
໒. ພິກຂຸມີບາດແຕກ
໓. ພິກຂຸຂໍຈາກຍາດ
໔. ພິກຂຸຂໍຈາກຜູ້ປະວາຣະນາ
໕. ພິກຂຸຂໍເພື່ອພິກຂຸອື່ນ
໖. ພິກຂຸຊື້ມາດ້ວຍຊັບຂອງຕົນ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ອູນະປັນຈະພັນທະນະສິກຂາບົດທີ ໔ ຈົບ**

# ໓. ປັດຕະວັກ

## ໑. ເພສັດຊະສິກຂາບົດ

### ວ່າດ້ວຍເພສັດ

### ເລື່ອງພຣະປິລິນທະວັດສະ

[ຜ໑໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະປິລິນທະວັດສະປະສົງຈະເຮັດທີ່ຫຼົບຫຼີກຈຶ່ງໃຫ້ພິກຂຸທັງຫຼາຍເຮັດຄວາມສະອາດເງື້ອມເຂົາໃນນະຄອນຣາຊະຄຶ ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ສະເດັດເຂົ້າໄປຫາທ່ານພຣະປິລິນທະວັດສະເຖິງທີ່ພັກ ເມື່ອເຖິງແລ້ວໄດ້ຊົງອະພິວາດແລ້ວປະທັບນັ່ງໃນທີ່ສົມຄວນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ປະທັບນັ່ງໃນທີ່ສົມຄວນແລ້ວ ໄດ້ຕັດຖາມທ່ານພຣະປິລິນທະວັດສະວ່າ "ພຣະຜູ້ເປັນເຈົ້າໃຫ້ພິກຂຸ ທັງຫຼາຍເຮັດຫຍັງ"

ຂໍຖວາຍພຣະພອນ ອາຕະມາພາບປະສົງຈະເຮັດທີ່ຫຼົບຫຼີກຈຶ່ງໃຫ້ພິກຂຸທັງຫຼາຍເຮັດຄວາມສະອາດເງື້ອມເຂົາ"

ພຣະຜູ້ເປັນເຈົ້າຕ້ອງການຄົນວັດແດ່ບໍ?

ຂໍຖວາຍພຣະພອນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມີຄົນວັດ"

ຖ້າເຊັ່ນນັ້ນ ພຣະຜູ້ເປັນເຈົ້າເພິ່ງທູນຖາມພຣະຜູ້ມີພຣະພາກເຈົ້າແລ້ວບອກຂ້ານ້ອຍດ້ວຍ"

ທ່ານພຣະປີລິນທະວັດສະທູນສະໜອງພຣະດຳຣັດວ່າ "ຂໍຖວາຍພຣະພອນ ອາຕະມາພາບຈະເຮັດຢ່າງນັ້ນ" ສະໄໝນັ້ນ ທ່ານພຣະປີລິນທະວັດສະໄດ້ຊີ້ແຈ່ງໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ຈາກນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດເຊິ່ງທ່ານພຣະປີລິນທະວັດສະໄດ້ຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ໄດ້ສະເດັດລຸກຈາກຣາຊະອາດ ຊົງອະພິວາດພຣະເຖຣະ ກະທຳປະທັກຂີນແລ້ວສະເດັດກັບໄປ

## ຊົງອະນຸຍາດໃຫ້ມີຄົນເຮັດວຽກວັດ

[ຜ໑໘] ສະໄໝນັ້ນ ທ່ານພຣະປີລິນທະວັດສະສົ່ງທູດໄປສູ່ສຳນັກພຣະຜູ້ມີພຣະພາກເຈົ້າໃຫ້ຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະເຈົ້າພິມພິສານຈອມທັບມະຄົດຣັດມີພຣະຣາຊະປະສົງຈະຊົງຖວາຍຄົນວັດ ຂ້າພຣະອົງຈະເພິ່ງປະຕິບັດຢ່າງໃດ" ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ເຮົາອະນຸຍາດໃຫ້ມີຄົນວັດ" ແມ່ນຄັ້ງທີ ໔ ພຣະເຈົ້າພິມພິສານຈອມທັບມະຄົດຣັດສະເດັດເຂົ້າໄປຫາທ່ານພຣະປີລິນທະວັດສະເຖິງທີ່ພັກ ເມື່ອເຖິງແລ້ວໄດ້ຊົງອະພິວາດທ່ານພຣະປີລິນທະວັດສະແລ້ວປະທັບນັ່ງ ໃນທີ່ສົມຄວນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ປະທັບນັ່ງໃນທີ່ສົມຄວນແລ້ວ ໄດ້ຕັດຖາມທ່ານພຣະປີລິນທະວັດສະວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ມີຄົນວັດແລ້ວບໍ?"

ຂໍຖວາຍພຣະພອນ ຊົງອະນຸຍາດແລ້ວ"

ຖ້າເຊັ່ນນັ້ນ ຂ້ານ້ອຍຈະຖວາຍຄົນວັດແກ່ພຣະຜູ້ເປັນເຈົ້າ"

ພຣະອົງຊົງໃຫ້ສັນຍາທີ່ຈະຖວາຍຄົນວັດແກ່ພຣະເຖຣະແຕ່ຊົງລືມ ເມື່ອເວລາຜ່ານໄປດົນຊົງຣະນຶກໄດ້ ຕັດຖາມມະຫາອຳມາດຜູ້ສະໜອງຣາດຊະກິດຄົນໜຶ່ງວ່າ "ເຮົາຖວາຍຄົນວັດ ທີ່ໃຫ້ສັນຍາໄວ້ແກ່ພຣະຜູ້ເປັນເຈົ້າແລ້ວແມ່ນບໍ?"

ມະຫາອຳມາດຂາບທູນວ່າ "ຂໍເດຊະ ຍັງບໍ່ໄດ້ຖວາຍຄົນວັດແກ່ພຣະຜູ້ເປັນເຈົ້າເລີຍ"

ຜ່ານມາຈັກວັນແລ້ວ"

ມະຫາອຳມາດນັບຣາຕີແລ້ວຂາບທູນວ່າ "ຂໍເດຊະ ຜ່ານມາ ໕໐໐ ຣາຕີ" ພຣະເຈົ້າພິມພິສານຈອມທັບມະຄົດຣັດຮັບສັ່ງວ່າ "ຖ້າຢ່າງນັ້ນ ຈົ່ງຖວາຍຄົນວັດ ໕໐໐ ຄົນ ແກ່ພຣະຜູ້ເປັນເຈົ້າ" ມະຫາອຳມາດຮັບພຣະຣາຊະໂອງການແລ້ວ ຈັດຄົນວັດໄປຖວາຍທ່ານພຣະປີລິນທະວັດສະຈຳນວນ ໕໐໐ ຄົນ ຕັ້ງໝູ່ບ້ານຂຶ້ນມາຕ່າງຫາກມີຊື່ຮຽກວ່າ ອາຣາມິກຄາມແດ່ ປີລິນທະວັດສະຄາມແດ່

[໖໔໐] ສະໄໝນັ້ນ ທ່ານພຣະປິລິນທະວັດສະເປັນພຣະປະຈຳຕະກູນໃນໝູ່ບ້ານນັ້ນ ເຊົ້າວັນ ໜຶ່ງ ທ່ານຊົງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນໝູ່ບ້ານປິລິນທະວັດສະສະໄໝນັ້ນ ໃນໝູ່ບ້ານນັ້ນກຳລັງມີມະໂຫລະສົບ ພວກເດັກຍິງແຕ່ງກາຍປະດັບດອກໄມ້ຫຼິ້ນຢູ່ ພໍດີທ່ານພຣະປິລິນທະວັດສະທ່ຽວບິນທະບາດມາຕາມລຳດັບໃນໝູ່ບ້ານປິລິນທະວັດສະມາເຖິງເຮືອນຄົນວັດຄົນໜຶ່ງ ເມື່ອເຖິງແລ້ວໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍ ຂະນະນັ້ນທິດາຂອງສະຕີຄົນວັດເຫັນພວກເດັກອື່ນແຕ່ງກາຍປະດັບດອກໄມ້ຈຶ່ງຮ້ອງໄຫ້ ຂໍວ່າ "ພໍ່ແມ່ໂຜດໃຫ້ ດອກໄມ້ ໂຜດໃຫ້ເຄື່ອງປະດັບແກ່ລູກ" ພຣະເຖຣະຖາມສະຕີນັ້ນວ່າ "ເດັກຄົນນີ້ຢາກໄດ້ອັນໃດ" ນາງຕອບວ່າ "ທ່ານຜູ້ຈະເລີນ ເດັກຄົນນີ້ເຫັນພວກເດັກນ້ອຍຄົນອື່ນແຕ່ງກາຍປະດັບດອກໄມ້ຈຶ່ງຮ້ອງໄຫ້ ຂໍພວງດອກໄມ້ ແລະ ເຄື່ອງປະດັບວ່າ ພໍ່ແມ່ໂຜດໃຫ້ດອກໄມ້ ໂຜດໃຫ້ເຄື່ອງປະດັບແກ່ລູກແດ່ ເຮົາເປັນຄົນຈົນຈະໄດ້ດອກໄມ້ແລະເຄື່ອງປະດັບມາຈາກໄສໄດ້

ທ່ານພຣະປິລິນທະວັດສະຈຶ່ງຈັບວົງຫຍ້າ ອັນໜຶ່ງ ສັ່ງໃຫ້ພ້ອມກ່າວວ່າ "ເຈົ້າຈົ່ງສວມວົງຫຍ້າອັນນີ້ໃສ່ຫົວເດັກຍິງນັ້ນ" ແມ່ຍິງຄົນວັດຈັບວົງຫຍ້າສວມໃສ່ຫົວເດັກນ້ອຍ ວົງຫຍ້າກາຍເປັນພວງດອກໄມ້ຄຳງົດງາມໜ້າເບິ່ງໜ້າຊົມ ພວງດອກໄມ້ຄຳຢ່າງນີ້ແມ່ນໃນພຣະຣາດຊະຖານກໍຍັງບໍ່ມີ ພວກຊາວບ້ານຂາບທູນພຣະເຈົ້າພິມພິສານວ່າ "ຂໍເດຊະ ຢູ່ເຮືອນຄົນວັດນັ້ນມີພວງດອກໄມ້ຄຳງົດງາມ ໜ້າເບິ່ງ ໜ້າຊົມ ພວງດອກໄມ້ຄຳຢ່າງນີ້ແມ່ນໃນພຣະຣາດຊະຖານກໍຍັງບໍ່ມີ ເຂົາເປັນຄົນຈົນທຸກຍາກເຂັ້ນໃຈຈະໄດ້ມາຈາກໄສ ຖ້າວ່າຈະໄດ້ ຕ້ອງໄດ້ມາຍ້ອນການລັກຢ່າງແນ່ນອນ" ພຣະເຈົ້າພິມພິສານຮັບສັ່ງໃຫ້ຈອງຈຳຕະກູນຄົນວັດນັ້ນ ຕໍ່ມາ ເຊົ້າວັນທີ ໔ ທ່ານພຣະປິລິນທະວັດສະຊົງອັນຕະຣະວາສົກຖືບາດ ແລະ ຈີວອນໄປບິນທະບາດທີ່ປິລິນທະວັດສະຄາມອີກ ເມື່ອທ່ຽວບິນທະບາດໄປຕາມລຳດັບໃນໝູ່ບ້ານປິລິນທະວັດສະ ຍ່າງຜ່ານໄປທາງທີ່ຢູ່ຄົນວັດຄົນນັ້ນ ຖາມຄົນຄຸ້ນເຄີຍວ່າ "ຄອບຄົວຄົນວັດນີ້ໄປໄສ" ຊາວບ້ານຕອບວ່າ "ຄອບຄົວນີ້ຖືກຈອງຈຳຍ້ອນພວງດອກໄມ້ຄຳ ຂ້ານ້ອຍ"

[໖໔໑] ສະໄໝນັ້ນ ທ່ານພຣະປິລິນທະວັດສະເຂົ້າໄປເຖິງພຣະຣາຊະນິເວດຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດ ເມື່ອເຖິງແລ້ວໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍ ລຳດັບນັ້ນພຣະເຈົ້າພິມພິສານຈອມທັບມະຄົດຣັດສະເດັດເຂົ້າໄປຫາພຣະເຖຣະຈົນເຖິງທີ່ນັ່ງ ຊົງອະພິວາດແລ້ວ ປະທັບນັ່ງ ໃນທີ່ສົມຄວນ ທ່ານພຣະປິລິນທະວັດສະທູນຖາມພຣະເຈົ້າພິມພິສານຈອມທັບມະຄົດຣັດວ່າ "ຂໍຖວາຍພຣະພອນ ຄອບຄົວຄົນວັດຖືກຈອງຈຳຍ້ອນເລື້ອງອັນໃດ" ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດວ່າ "ຢູ່ບ້ານເຂົາມີພວງດອກໄມ້ຄຳງົດງາມໜ້າເບິ່ງໜ້າຊົມ ພວງດອກໄມ້ຄຳຢ່າງນີ້ແມ່ນໃນວັງກໍຍັງບໍ່ມີ ເຂົາເປັນຄົນຈົນຈະໄດ້ມາຈາກໄສໄດ້ ນອກຈາກລັກຂອງຄົນອື່ນມາແນ່ນອນ"

ໃນບັດນັ້ນທ່ານພຣະປິລິນທະວັດສະໄດ້ອະທິຖານໃຫ້ຜາສາດຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດເປັນຄໍາ ຜາສາດກາຍເປັນຄໍາໄປທັງຫຼັງ ແລ້ວທ່ານກໍຖວາຍພຣະພອນວ່າ "ຄໍາຫຼວງຫຼາຍ ມະຫາບໍພິດໄດ້ມາຈາກໄສ" ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດວ່າ "ທ່ານຮູ້ແລ້ວ ນີ້ເປັນລິດທານຸພາບຂອງພຣະຜູ້ເປັນເຈົ້າ" ແລ້ວຮັບສັ່ງໃຫ້ປ່ອຍຄອບຄົວນັ້ນ ພວກຊາວບ້ານຮູ້ຂ່າວວ່າ "ພຣະປິລິນທະວັດສະສະແດງອິດທິປາຕິຫານ ອັນເປັນອຸດຕະຣິມະນຸດສະທໍາໃນທ່າມກາງຣາດຊະບໍລິສັດ" ພາກັນພໍໃຈເຫຼື້ອມໃສໄດ້ນໍາເພສັດ ໕ ຄື ເນີຍໃສ ເນີຍຂຸ້ນ ນໍ້າມັນ ນໍ້າເຜີ້ງ ນໍ້າອ້ອຍມາຖວາຍ ຕາມປົກກະຕິທ່ານພຣະປິລິນທະວັດສະກໍໄດ້ເພສັດ ໕ ຢູ່ສະເໝີ ທ່ານຈຶ່ງແບ່ງເພສັດໃຫ້ບໍລິສັດຂອງທ່ານ ແຕ່ບໍລິສັດຂອງທ່ານມັກຫຼາຍ ບັນຈຸເພສັດທີ່ໄດ້ມາແລ້ວໆ ໄວ້ໃນໄຫແດ່ ໃນໝໍ້ນໍ້າແດ່ ຈົນເຕັມແລ້ວເກັບໄວ້ ບັນຈຸລົງໃນໝໍ້ກອງນໍ້າແດ່ ໃນຖົງຍ່າມແດ່ ແລ້ວແຂວນໄວ້ທີ່ໜ້າຕ່າງ ເພສັດເຫຼົ່ານັ້ນໄຫຼຍ້ອຍຊຶມ ຈຶ່ງມີສັດພວກໜູເຕັມທົ່ວວິຫານ ພວກຊາວບ້ານທ່ຽວໄປວິຫານພົບເຂົ້າຈຶ່ງພາກັນຕໍາໜິປະນາມ ໂພນທະນາວ່າ "ພວກພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມີເຮືອນຄັງເກັບຂອງເໝືອນພຣະເຈົ້າພິມພິສານຈອມທັບມະຄົດຣັດ" ພວກພິກຂຸໄດ້ຍິນຊາວບ້ານຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງຄິດເພື່ອຄວາມມັກຫຼາຍເຊັ່ນນີ້ນໍ"

ເມື່ອພິກຂຸທັງຫຼາຍຕໍາໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸຄິດເພື່ອຄວາມມັກຫຼາຍ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ໆລໆ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງຄິດເພື່ອຄວາມມັກຫຼາຍນໍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໔໘] ກໍ ເພສັດໃດຄວນສັນໄດ້ ສໍາລັບພິກຂຸ ຜູ້ເປັນໄຂ້ ຄື ເນີຍໃສ ເນີຍຂຸ້ນ ນໍ້າມັນ ນໍ້າເຜີ້ງ ນໍ້າອ້ອຍ ພິກຂຸຮັບປະເຄນເພສັດນັ້ນແລ້ວເກັບໄວ້ສັນໄດ້ ໗ ວັນ ເປັນຢ່າງຫຼາຍໃຫ້ເກີນກໍານົດນັ້ນໄປ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພຣະປິລິນທະວັດສະ ຈົບ**

## ສິກຂາບົດວິພັງ

[໖໔໓] ຄຳວ່າ ເພສັດໃດຄວນຊິມສຳລັບພິກຂຸຜູ້ເປັນໄຂ້ ມີອະທິບາຍດັ່ງນີ້

ທີ່ຊື່ວ່າ ເນີຍໃສ ໄດ້ແກ່ ເນີຍໃສເຮັດຈາກນ້ຳນົມງົວແດ່ ເນີຍໃສເຮັດຈາກນ້ຳນົມແບ້ແດ່ ເນີຍໃສເຮັດຈາກນ້ຳນົມຄວາຍແດ່ ຫຼື ເນີຍໃສເຮັດຈາກນ້ຳນົມສັດທີ່ມີມັງສະເປັນກັບປິຍະ

ທີ່ຊື່ວ່າ ເນີຍຂຸ້ນ ໄດ້ແກ່ ເນີຍຂຸ້ນເຮັດຈາກນ້ຳນົມສັດທຸກຊະນິດ

ທີ່ຊື່ວ່າ ນ້ຳມັນ ໄດ້ແກ່ ນ້ຳມັນທີ່ສະກັດຈາກເມັດງາ ນ້ຳມັນທີ່ສະກັດຈາກເມັດຜັກກາດ ນ້ຳມັນທີ່ສະກັດຈາກເມັດໝາກຊາງ ນ້ຳມັນທີ່ສະກັດຈາກເມັດທຸ່ງສາ ຫຼື ນ້ຳມັນໄຂສັດ

ທີ່ຊື່ວ່າ ນ້ຳເຜີ້ງ ໄດ້ແກ່ ນ້ຳຫວານທີ່ໂຕເຜີ້ງຜະລິດອອກມາ

ທີ່ຊື່ວ່າ ນ້ຳອ້ອຍ ໄດ້ແກ່ ນ້ຳຫວານທີ່ເກີດຈາກອ້ອຍ

ຄຳວ່າ ພິກຂຸຮັບປະເຄນເພສັດນັ້ນແລ້ວເກັບໄວ້ສັນໄດ້ ໗ ວັນເປັນຢ່າງຫຼາຍ ຄື ພິກຂຸເພິ່ງສັນໄດ້ ໗ ວັນເປັນຢ່າງຫຼາຍ

ຄຳວ່າ ໃຫ້ເກີນກຳນົດນັ້ນໄປ ຕ້ອງອາບັດນິດສັກຄີຍະປາຈິດຕີ ຄວາມວ່າ ເມື່ອອະຣຸນວັນທີ ໘ ເພສັດນັ້ນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະເພສັດທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະເພສັດທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ເພສັດຂອງຂ້ານ້ອຍນີ້ເກີນກຳນົດ ໗ ວັນ ເປັນນິດສັກຄີ ຂ້ານ້ອຍສະລະເພສັດນີ້ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນເພສັດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເພສັດຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ເພສັດນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ “ທ່ານຜູ້ຈະເລີນ ເພສັດຂອງຂ້ານ້ອຍນີ້ເກີນກຳນົດ ໗ ວັນ ເປັນນິດສັກຄີ ຂ້ານ້ອຍສະລະເພສັດນີ້ແກ່ທ່ານທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນເພສັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ເພສັດຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ເພສັດນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ເພສັດຂອງຂ້ານ້ອຍນີ້ເກີນກໍານົດ ໗ ວັນ ເປັນນິດສັກຄີ ຂ້ານ້ອຍສະລະເພສັດນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນເພສັດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນເພສັດນີ້ໃຫ້ແກ່ທ່ານ"

## ບົດພາຊະນີ
## ນິດສັກຄີຍະປາຈິດຕີ

[໖໘໔] ເພສັດທີ່ເກີນກໍານົດ ໗ ວັນ ພິກຂຸສໍາຄັນວ່າເກີນກໍານົດແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດເກີນກໍານົດ ໗ ວັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດເກີນກໍານົດ ໗ ວັນ ພິກຂຸສໍາຄັນວ່າຍັງບໍ່ເກີນກໍານົດ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ໄດ້ອະທິຖານ ພິກຂຸສໍາຄັນວ່າອະທິຖານແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ໄດ້ສະລະ ພິກຂຸສໍາຄັນວ່າໄດ້ສະລະແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ສູນຫາຍ ພິກຂຸສໍາຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ສູນຫາຍ ພິກຂຸສໍາຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ຖືກໄຟໄໝ້ ພິກຂຸສໍາຄັນວ່າຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດຍັງບໍ່ຖືກຊິງໄປ ພິກຂຸສໍາຄັນວ່າຖືກຊິງໄປແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ເພສັດທີ່ສະລະແລ້ວ ພິກຂຸໄດ້ຄືນມາ ບໍ່ເພິ່ງໃຊ້ດ້ວຍກິດທີ່ກ່ຽວກັບຮ່າງກາຍ ແລະ ບໍ່ຄວນ ສັນ ເພິ່ງນ້ອມເຂົ້າໄປໃນການໄຕ້ປະທີບ ຫຼື ການປະສົມສີ ພິກຂຸອື່ນຈະໃຊ້ດ້ວຍກິດທີ່ກ່ຽວກັບຮ່າງກາຍກໍໄດ້ ແຕ່ບໍ່ຄວນສັນ

## ທຸກະທຸກກົດ

ເພສັດຍັງບໍ່ເກີນກໍານົດ ໗ ວັນ ພິກຂຸສໍາຄັນວ່າເກີນກໍານົດແລ້ວ ຕ້ອງອາບັດທຸກກົດ

ເພສັດຍັງບໍ່ເກີນກຳນົດ ໗ ວັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ເພສັດຍັງບໍ່ເກີນກຳນົດ ໗ ວັນ ພິກຂຸສຳຄັນວ່າຍັງບໍ່ເກີນກຳນົດ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໔໕] ໑. ພິກຂຸອະທິຖານພາຍໃນ ໗ ວັນ
໒. ພິກຂຸສະລະໃຫ້ໄປ
໓. ພິກຂຸຜູ້ມີເພສັດສູນຫາຍພາຍໃນ ໗ ວັນ
໔. ພິກຂຸຜູ້ມີເພສັດເສຍພາຍໃນ ໗ ວັນ
໕. ພິກຂຸຜູ້ມີເພສັດຖືກໄຟໄໝ້ພາຍໃນ ໗ ວັນ
໖. ພິກຂຸຜູ້ມີເພສັດຖືກໂຈນຊິງໄປພາຍໃນ ໗ ວັນ
໗. ພິກຂຸຜູ້ມີເພສັດຖືກຖືເອົາໄປໂດຍວິສາສະພາຍໃນ ໗ ວັນ
໘. ພິກຂຸຜູ້ບໍ່ມີເຍື່ອໃຍ ໃຫ້ແກ່ອະນຸປະສຳບັນດ້ວຍຈິດສະລະລະວາງແລ້ວກັບໄດ້ຂອງນັ້ນມາສັນອີກ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ເພສັດຊະສິກຂາບົດທີ ໓ ຈົບ**

# ໓. ປັດຕະວັກ

## ໔. ວັດສິກະສາຕິກະສິກຂາບົດ

### ວ່າດ້ວຍຜ້າອາບນ້ຳຝົນ

### ເລື້ອງພຣະສັບພັກຄີ

[໖໔໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າອາບນ້ຳຝົນແກ່ພິກຂຸທັງຫຼາຍ ພວກພິກຂຸສັບພັກຄີໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າອາບນ້ຳຝົນ ຈຶ່ງສະແຫວງຫາຜ້າອາບນ້ຳຝົນກ່ອນແດ່ ເຮັດນຸ່ງກ່ອນແດ່ ເມື່ອຜ້າອາບນ້ຳຝົນເກົ່າສີຕົກໄປແລ້ວຈຶ່ງເປືອຍກາຍອາບນ້ຳຝົນ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ

ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງສະແຫວງຫາຜ້າອາບນໍ້າຝົນກ່ອນແດ່ ເຮັດນຸ່ງລ່ວງໜ້າກ່ອນແດ່ ເມື່ອຜ້າອາບນໍ້າຝົນເກົ່າສີຕົກໄປແລ້ວຈຶ່ງເປືອຍກາຍອາບນໍ້າຝົນແນວນີ້ນໍ" ເມື່ອພິກຂຸເຫຼົ່ານັ້ນຕໍາໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສະແຫວງຫາຜ້າອາບນໍ້າຝົນກ່ອນແດ່ ເຮັດນຸ່ງກ່ອນແດ່ ເມື່ອຜ້າອາບນໍ້າຝົນເກົ່າສີຕົກໄປແລ້ວໄດ້ເປືອຍກາຍອາບນໍ້າຝົນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕໍາໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງສະແຫວງຫາຜ້າອາບນໍ້າຝົນກ່ອນແດ່ ເຮັດນຸ່ງລ່ວງໜ້າກ່ອນແດ່ ເມື່ອຜ້າອາບນໍ້າຝົນເກົ່າສີຕົກໄປແລ້ວໄດ້ເປືອຍກາຍອາບນໍ້າຝົນນໍ? ໂມຄະບຸຣຸດທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໔໗] ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອອີກ ໑ ເດືອນ" ເພິ່ງສະແຫວງຫາຈີວອນຄືຜ້າອາບນໍ້າຝົນໄດ້ ຮູ້ວ່າ "ລະດູຮ້ອນຍັງເຫຼືອອີກເຄິ່ງເດືອນ" ເພິ່ງເຮັດນຸ່ງໄດ້ ຖ້າຮູ້ວ່າ "ຍັງບໍ່ເຖິງເດືອນສຸດທ້າຍແຫ່ງລະດູຮ້ອນ" ເພິ່ງສະແຫວງຫາຈີວອນຄືຜ້າອາບນໍ້າຝົນ ຮູ້ວ່າ "ຍັງບໍ່ເຖິງເຄິ່ງເດືອນສຸດທ້າຍແຫ່ງລະດູຮ້ອນ" ເພິ່ງເຮັດນຸ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໔໘] ຄໍາວ່າ ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອອີກ ໑ ເດືອນ" ເພິ່ງສະແຫວງຫາຈີວອນຄືຜ້າອາບນໍ້າຝົນໄດ້ ອະທິບາຍວ່າ ພິກຂຸເຂົ້າໄປຫາພວກຊາວບ້ານທີ່ເຄີຍຖວາຍຜ້າອາບນໍ້າຝົນເພິ່ງກ່າວຢ່າງນີ້ວ່າ "ເຖິງເວລາຜ້າອາບນໍ້າຝົນແລ້ວ ເຖິງເວລາຜ້າອາບນໍ້າຝົນແລ້ວ ພວກຊາວບ້ານແມ່ນອື່ນກໍພາກັນຖວາຍຜ້າອາບນໍ້າຝົນ" ແຕ່ບໍ່ຄວນກ່າວວ່າ "ທ່ານທັງຫຼາຍຈົ່ງຖວາຍຜ້າອາບນໍ້າຝົນແກ່ອາດຕະມາ ຈົ່ງນໍາຜ້າອາບນໍ້າຝົນມາໃຫ້ອາດຕະມາ ຈົ່ງແລກປ່ຽນຜ້າອາບນໍ້າຝົນມາໃຫ້ອາດຕະມາ ຈົ່ງຊື້ຜ້າອາບນໍ້າຝົນມາໃຫ້ອາດຕະມາ"

ຄຳວ່າ ຮູ້ວ່າ "ລະດູຮ້ອນຍັງເຫຼືອອີກເຄິ່ງເດືອນ" ເພິ່ງເຮັດນຸ່ງໄດ້ ຄື ເມື່ອລະດູຮ້ອນຍັງເຫຼືອຢູ່ເຄິ່ງເດືອນ ພິກຂຸເພິ່ງເຮັດຜ້າອາບນ້ຳຝົນນຸ່ງໄດ້

ຄຳວ່າ ຖ້າຮູ້ວ່າ "ຍັງບໍ່ເຖິງເດືອນສຸດທ້າຍແຫ່ງລະດູຮ້ອນ" ຄື ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ພິກຂຸສະແຫວງຫາຜ້າອາບນ້ຳຝົນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄຳວ່າ ຮູ້ວ່າ "ຍັງບໍ່ເຖິງເຄິ່ງເດືອນສຸດທ້າຍແຫ່ງລະດູຮ້ອນ" ຄື ເມື່ອລະດູຮ້ອນຍັງເຫຼືອເກີນກວ່າເຄິ່ງເດືອນ ພິກຂຸເຮັດຜ້າອາບນ້ຳຝົນນຸ່ງເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຜ້າອາບນ້ຳຝົນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຜ້າອາບນ້ຳຝົນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຜ້າອາບນ້ຳຝົນຜືນນີ້ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ຂ້ານ້ອຍສະແຫວງຫາແລ້ວ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າເຄິ່ງເດືອນເຮັດນຸ່ງແລ້ວ ເປັນນິດສັກຄີ ຂ້ານ້ອຍສະລະຜ້າອາບນ້ຳຝົນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຜ້າອາບນ້ຳຝົນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜ້າອາບນ້ຳຝົນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຜ້າອາບນ້ຳຝົນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຜ້າອາບນ້ຳຝົນຜືນນີ້ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ຂ້ານ້ອຍສະແຫວງຫາແລ້ວ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າເຄິ່ງເດືອນ ເຮັດນຸ່ງແລ້ວ ເປັນນິດສັກຄີ ຂ້ານ້ອຍສະລະຜ້າອາບນ້ຳຝົນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຜ້າອາບນ້ຳຝົນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍ ຈົ່ງຟັງຂ້າພະເຈົ້າ ຜ້າອາບນ້ຳຝົນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍ ພ້ອມກັນແລ້ວກໍເພິ່ງໃຫ້ຜ້າອາບນ້ຳຝົນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຜ້າອາບນໍ້າຝົນຜືນນີ້ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ຂ້ານ້ອຍສະແຫວງຫາແລ້ວ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າເຄິ່ງເດືອນ ເຮັດນຸ່ງແລ້ວ ເປັນນິດສັກຄີ ຂ້ານ້ອຍສະລະຜ້າອາບນໍ້າຝົນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວ ເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຜ້າອາບນໍ້າຝົນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຜ້າອາບນໍ້າຝົນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ
## ຕິກະນິດສັກຄິຍະປາຈິດຕີ

[໖໔໙] ລະດູຮ້ອນຍັງເຫຼືອເກີນ ໑ ເດືອນ ພິກຂຸສຳຄັນວ່າເກີນ ສະແຫວງຫາຜ້າອາບນໍ້າຝົນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ລະດູຮ້ອນຍັງເຫຼືອເກີນ ໑ ເດືອນ ພິກຂຸບໍ່ແນ່ໃຈ ສະແຫວງຫາຜ້າອາບນໍ້າຝົນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ລະດູຮ້ອນຍັງເຫຼືອເກີນ ໑ ເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ສະແຫວງຫາຜ້າອາບນໍ້າຝົນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ຕິກະນິດສັກຄິຍະປາຈິດຕີ

ລະດູຮ້ອນຍັງເຫຼືອເກີນເຄິ່ງເດືອນ ພິກຂຸສຳຄັນວ່າເກີນເຮັດນຸ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ລະດູຮ້ອນຍັງເຫຼືອເກີນເຄິ່ງເດືອນ ພິກຂຸບໍ່ແນ່ໃຈ ເຮັດນຸ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ລະດູຮ້ອນຍັງເຫຼືອເກີນເຄິ່ງເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ເຮັດນຸ່ງ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກກົດ

ເມື່ອມີຜ້າອາບນໍ້າຝົນ ພິກຂຸເປືອຍກາຍອາບນໍ້າຝົນ ຕ້ອງອາບັດທຸກກົດ

ລະດູຮ້ອນຍັງເຫຼືອຢ່ອນກວ່າ ໑ ເດືອນ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກົດ

ລະດູຮ້ອນຍັງເຫຼືອຢ່ອນກວ່າ ໑ ເດືອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ລະດູຮ້ອນຍັງເຫຼືອຢ່ອນກວ່າ ໑ ເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ບໍ່ຕ້ອງອາບັດ
ລະດູຮ້ອນຍັງເຫຼືອຢ່ອນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກົດ
ລະດູຮ້ອນທີ່ຍັງເຫຼືອຢ່ອນກວ່າເຄິ່ງເດືອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ລະດູຮ້ອນຍັງເຫຼືອຢ່ອນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໓໐] ໑. ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອອີກ ໑ ເດືອນ" ສະແຫວງຫາຜ້າອາບນ້ຳຝົນ
໒. ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອອີກເຄິ່ງເດືອນ" ເຮັດຜ້າອາບນ້ຳຝົນນຸ່ງ
໓. ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອຢ່ອນກວ່າ ໑ ເດືອນ" ສະແຫວງຫາຜ້າອາບນ້ຳຝົນ
໔. ພິກຂຸຮູ້ວ່າ "ລະດູຮ້ອນຍັງເຫຼືອຢ່ອນກວ່າເຄິ່ງເດືອນ" ເຮັດຜ້າອາບນ້ຳຝົນນຸ່ງ ເມື່ອພິກຂຸສະແຫວງຫາໄດ້ຜ້າອາບນ້ຳຝົນແລ້ວ ລະດູຝົນເລື່ອນອອກໄປ ເມື່ອພິກຂຸເຮັດຜ້າອາບນ້ຳຝົນນຸ່ງແລ້ວ ລະດູຝົນເລື່ອນອອກໄປ ຄວນຊັກເກັບໄວ້ແລ້ວນຸ່ງໃນສະໄໝ
໕. ພິກຂຸຖືກໂຈນຊິງຍາດຈີວອນໄປ
໖. ພິກຂຸຈີວອນສູນຫາຍ
໗. ພິກຂຸຜູ້ຕົກຢູ່ໃນອັນຕະລາຍ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ວັດສິກະສາຕິກະສິກຂາບົດທີ ໔ ຈົບ**

# ໓. ປັດຕະວັກ

## ໕. ຈີວະຣະອັດສິນທະນະສິກຂາບົດ
## ວ່າດ້ວຍການໃຫ້ຈີວອນແລ້ວຊິງຍາດເອົາຄືນ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໖໓໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸ

ດ ກ່າວຊັກຊວນສັດທິວິຫາຣິກຂອງພິກຂຸຜູ້ເປັນອ້າຍວ່າ "ມານີ້ເທີ້ນ ທ່ານ ພວກເຮົາຈັກໄປທ່ຽວຊົນນະບົດດ້ວຍກັນ" ພິກຂຸນັ້ນກ່າວຕອບວ່າ "ຂ້ານ້ອຍບໍ່ໄປ ຂ້ານ້ອຍມີຈີວອນເສຍຫາຍ" ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ໄປເທີ້ນທ່ານ ເຮົາຈະຖວາຍຈີວອນແກ່ທ່ານ" ແລ້ວຖວາຍຈີວອນແກ່ພິກຂຸນັ້ນ ພິກຂຸນັ້ນຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າຈັກສະເດັດຈາຣິກໄປໃນຊົນນະບົດ" ໃນບັດນັ້ນ ທ່ານໄດ້ມີຄວາມຄິດວ່າ ບັດນີ້ເຮົາຈັກບໍ່ໄປທ່ຽວຊົນນະບົດກັບທ່ານພຣະອຸປະນັນທະສາກະຍະບຸດ ແຕ່ຈະໄປທ່ຽວຊົນນະບົດກັບພຣະຜູ້ມີພຣະພາກເຈົ້າ ເມື່ອທ່ານພຣະອຸປະນັນທະສາກະຍະບຸດກ່າວຊັກຊວນພິກຂຸນັ້ນວ່າ "ມາເທີ້ນທ່ານ ບັດນີ້ພວກເຮົາຈະໄປທ່ຽວຊົນນະບົດນຳກັນ" ພິກຂຸນັ້ນປະຕິເສດວ່າ "ຂ້ານ້ອຍບໍ່ໄປທ່ຽວຊົນນະບົດກັບທ່ານດອກ ຂ້ານ້ອຍຈະໄປທ່ຽວຊົນນະບົດກັບພຣະຜູ້ມີພຣະພາກເຈົ້າ" ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ເຮົາຖວາຍຈີວອນແກ່ທ່ານຍ້ອນຕັ້ງໃຈວ່າ ທ່ານຈະໄປທ່ຽວຊົນນະບົດນຳກັນກັບເຮົາ" ຈຶ່ງໂກດບໍ່ພໍໃຈ ຊິງຍາດຈີວອນຄືນມາ

ຕໍ່ມາ ພິກຂຸນັ້ນໄດ້ເລົ່າເລື່ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດໃຫ້ຈີວອນແກ່ພິກຂຸເອງແລ້ວໂກດ ບໍ່ພໍໃຈ ຊິງຍາດເອົາຄືນມານໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານໃຫ້ຈີວອນແກ່ພິກຂຸເອງແລ້ວໂກດ ບໍ່ພໍໃຈ ຊິງຍາດເອົາຄືນມາ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດເປັນຫຍັງ ທ່ານໃຫ້ຈີວອນພິກຂຸເອງແລ້ວໂກດ ບໍ່ພໍໃຈ ຊິງຍາດເອົາຄືນມານໍ? ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໓໔] ກໍ ພິກຂຸໃດໃຫ້ຈີວອນແກ່ພິກຂຸເອງແລ້ວໂກດ ບໍ່ພໍໃຈ ຊິງຍາດເອົາມາ ຫຼື ໃຊ້ໃຫ້ຊິງຍາດເອົາມາ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ**

## ສິກຂາບົດວິພັງ

[໖໖໖] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ແກ່ພິກຂຸ ຄື ແກ່ພິກຂຸອົງອື່ນ

ຄຳວ່າ ເອງ ຄື ໃຫ້ດ້ວຍຕົນເອງ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະວິກັບ ໄດ້ເປັນຢ່າງຕ່ຳ

ຄຳວ່າ ໂກດ ບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ຊິງຍາດເອົາມາ ຄື ຍາດເອົາມາດ້ວຍມືຂອງຕົນເອງ ຈີວອນນັ້ນເປັນນິດສັກຄີ

ຄຳວ່າ ໃຊ້ໃຫ້ຊິງຍາດເອົາມາ ຄື ສັ່ງຜູ້ອື່ນໃຫ້ເຮັດແທນຕົນ ຕ້ອງອາບັດທຸກກົດ

ພິກຂຸຜູ້ຮັບຄຳສັ່ງຄັ້ງດຽວແຕ່ຊິງເອົາມາຫຼາຍຄັ້ງ ຈີວອນນັ້ນເປັນນິດສັກຄີ ຄື ເປັນຂອງ ຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍ ໃຫ້ພິກຂຸເອງແລ້ວ ຊິງຄືນມາເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະ ວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານ ສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນ ພິກຂຸຜູ້ແກ່ພັນສາ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນ ນີ້ຂ້າພະເຈົ້າ

ໃຫ້ພິກຂຸເອງແລ້ວຊິງຄືນມາ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຢໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂ້ານ້ອຍໃຫ້ພິກຂຸເອງແລ້ວຊິງຄືນມາ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໖໓໔] ອຸປະສໍາບັນ ພິກຂຸສໍາຄັນວ່າເປັນອຸປະສໍາບັນ ໃຫ້ຈີວອນເອງແລ້ວໂກດ ບໍ່ພໍໃຈ ຊິງເອົາມາເອງ ຫຼື ໃຊ້ໃຫ້ຊິງເອົາມາ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອຸປະສໍາບັນ ພິກຂຸບໍ່ແນ່ໃຈ ໃຫ້ຈີວອນເອງແລ້ວໂກດ ບໍ່ພໍໃຈ ຊິງເອົາມາເອງ ຫຼື ໃຊ້ໃຫ້ຊິງ ເອົາມາ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອຸປະສໍາບັນ ພິກຂຸສໍາຄັນວ່າເປັນອະນຸປະສໍາບັນ ໃຫ້ຈີວອນເອງແລ້ວໂກດ ບໍ່ພໍໃຈ ຊິງເອົາມາເອງ ຫຼື ໃຊ້ໃຫ້ຊິງເອົາມາ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກກົດ

ພິກຂຸໃຫ້ບໍຣິຂານຢ່າງອື່ນແລ້ວໂກດ ບໍ່ພໍໃຈ ຊິງເອົາມາເອງ ຫຼື ໃຊ້ໃຫ້ຊິງເອົາມາ ຕ້ອງອາບັດທຸກກົດ

ພິກຂຸໃຫ້ຈີວອນ ຫຼື ບໍຣິຂານຢ່າງອື່ນແກ່ອະນຸປະສໍາບັນແລ້ວໂກດ ບໍ່ພໍໃຈ ຊິງເອົາມາເອງ ຫຼືໃຊ້ໃຫ້ຊິງເອົາມາ ຕ້ອງອາບັດທຸກກົດ

ອະນຸປະສໍາບັນ ພິກຂຸສໍາຄັນວ່າເປັນອຸປະສໍາບັນ ຕ້ອງອາບັດທຸກກົດ

ອະນຸປະສໍາບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສໍາບັນ ພິກຂຸສໍາຄັນວ່າເປັນອະນຸປະສໍາບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໓໕] ໑. ພິກຂຸຜູ້ເປັນເຈົ້າຂອງເດີມຮັບຈີວອນທີ່ເຂົາໃຫ້ຄືນເອງ ຫຼື ຖືເອົາໂດຍວິສາສະກັບພິກຂຸຜູ້ຮັບໄປ

໘. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ຈີວອນອັດສິນທະນະສິກຂາບົດທີ ໕ ຈົບ**

# ໓. ປັດຕະວັກ

# ໙. ສຸດຕະວິນຍັດຕິສິກຂາບົດ

## ວ່າດ້ວຍການອອກປາກຂໍດ້າຍ

## ເລື້ອງພຣະສັບພັກຄີ

[໙໓໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ເມື່ອເຖິງເວລາເຮັດຈີວອນ ພວກພິກຂຸສັບພັກຄີອອກປາກຂໍດ້າຍມາເປັນຈຳນວນຫຼາຍ ເມື່ອເຮັດຈີວອນສຳເລັດແລ້ວ ດ້າຍເຫຼືອຢູ່ເປັນຈຳນວນຫຼາຍ ບັດນັ້ນ ພວກພິກຂຸສັບພັກຄີໄດ້ມີຄວາມຄິດວ່າ “ຖ້າຈັ່ງຊັ້ນ ພວກເຮົາຈະອອກປາກຂໍດ້າຍອື່ນມາໃຊ້ຊ່າງຫູກໃຫ້ທໍຈີວອນ” ຕໍ່ມາ ພວກພິກຂຸສັບພັກຄີໄດ້ໄປຂໍດ້າຍເປັນຈຳນວນຫຼາຍມາແລ້ວ ໃຊ້ໃຫ້ຊ່າງຫູກທໍຈີວອນ ເມື່ອທໍຈີວອນແລ້ວ ດ້າຍກໍຍັງເຫຼືອອີກຫຼາຍ ແມ່ນຄັ້ງທີ ໘ ພວກພິກຂຸສັບພັກຄີໄດ້ໄປອອກປາກຂໍດ້າຍອື່ນອີກເປັນຈຳນວນຫຼາຍມາໃຫ້ໃຊ້ຊ່າງຫູກໃຫ້ທໍຈີວອນ ເມື່ອທໍຈີວອນແລ້ວ ດ້າຍກໍຍັງເຫຼືອຢູ່ຫຼາຍ ແມ່ນຄັ້ງທີ ໓ ພວກພິກຂຸສັບພັກຄີໄດ້ໄປຂໍດ້າຍອື່ນອີກເປັນຈຳນວນຫຼາຍມາໃຫ້ຊ່າງຫູກທໍຈີວອນ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍຈີວອນແນວນັ້ນນໍ?”

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງອອກປາກຂໍດ້າຍມາ

ເອງແລ້ວໃຊ້ຊ່າງຫູກໃຫ້ທໍຈີວອນບໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍຈີວອນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍຈີວອນບໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໖໓໗] ກໍ ພິກຂຸໃດ ອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕິ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໓໘] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ເອງ ຄື ອອກປາກຂໍເຂົາມາດ້ວຍຕົນເອງ

ທີ່ຊື່ວ່າ ດ້າຍ ໄດ້ແກ່ ດ້າຍ ໖ ຊະນິດ ຄື (໑) ດ້າຍທີ່ເຮັດດ້ວຍເປືອກໄມ້ (໒) ດ້າຍທີ່ເຮັດດ້ວຍຝ້າຍ (໓) ດ້າຍທີ່ເຮັດດ້ວຍໄໝ (໔) ດ້າຍທີ່ເຮັດດ້ວຍຂົນສັດ (໕) ດ້າຍທີ່ເຮັດດ້ວຍປ່ານ (໖) ດ້າຍທີ່ເຮັດດ້ວຍວັດຖຸທັງ ໕ ຊະນິດປະສົມກັນ

ຄຳວ່າ ຊ່າງຫູກ ຄື ເປັນຜູ້ສາມາດທໍເສັ້ນໄໝໃຫ້ເປັນຜືນຜ້າ

ຕ້ອງອາບັດທຸກກົດທຸກຂະນະທີ່ພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

# ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກທໍ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວ ກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂ້ານ້ອຍອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂ້ານ້ອຍອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ທໍ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນ ເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໖໓໙] ຈີວອນທີ່ໃຊ້ເຂົາໃຫ້ທໍ ພິກຂຸສໍາຄັນວ່າໃຊ້ເຂົາໃຫ້ທໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນທີ່ໃຊ້ເຂົາໃຫ້ທໍ ພິກຂຸບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນທີ່ໃຊ້ເຂົາໃຫ້ທໍ ພິກຂຸສໍາຄັນວ່າບໍ່ໄດ້ໃຊ້ເຂົາໃຫ້ທໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຈີວອນທີ່ບໍ່ໄດ້ໃຊ້ເຂົາໃຫ້ທໍ ພິກຂຸສໍາຄັນວ່າໃຊ້ເຂົາໃຫ້ທໍ ຕ້ອງອາບັດທຸກກົດ

ຈີວອນທີ່ບໍ່ໄດ້ໃຊ້ເຂົາໃຫ້ທໍ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຈີວອນທີ່ບໍ່ໄດ້ໃຊ້ເຂົາໃຫ້ທໍ ພິກຂຸສໍາຄັນວ່າບໍ່ໄດ້ໃຊ້ເຂົາໃຫ້ທໍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໔໐] ໑. ພິກຂຸຂໍດ້າຍມາຫຍິບຈີວອນ

໒. ພິກຂຸຂໍດ້າຍມາເຮັດຜ້າຮັດເຂົ່າ

໓. ພິກຂຸຂໍດ້າຍມາເຮັດປະຄົດແອວ

໔. ພິກຂຸຂໍດ້າຍມາເຮັດຜ້າອັງສະ

໕. ພິກຂຸຂໍດ້າຍມາເຮັດຖົງບາດ

໖. ພິກຂຸຂໍດ້າຍມາເຮັດຜ້າກອງນໍ້າ

໗. ພິກຂຸຂໍຈາກຍາດ

໘. ພິກຂຸຂໍຈາກຄົນປະວາຣະນາ

໙. ພິກຂຸຂໍເພື່ອພິກຂຸອື່ນ

໑໐. ພິກຂຸຊື້ມາດ້ວຍຊັບຂອງຕົນ

໑໑. ພິກຂຸວິກົນຈະລິດ

໑໒. ພິກຂຸຕົ້ນບັນຍັດ

**ສຸດຕະວິນຍັດຕິສິກຂາບົດທີ ໖ ຈົບ**

# ໓. ປັດຕະວັກ

## ໗. ມະຫາເປສະກາຣະສິກຂາບົດ

### ວ່າດ້ວຍການສັ່ງຊ່າງຫູກທໍຈີວອນ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໓໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຊາຍຄົນໜຶ່ງຈະໄປຄ້າງຄືນຕ່າງຖິ່ນ ກ່າວກັບພັນລະຍາວ່າ "ເຈົ້າຈົ່ງກະດ້າຍແລ້ວມອບໃຫ້ຊ່າງຫູກຊື່ນັ້ນ ຂໍໃຫ້ເຂົາທໍຈີວອນເກັບໄວ້ ເຮົາກັບມາແລ້ວຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ"

ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອົງໜຶ່ງໄດ້ຍິນຊາຍຄົນນັ້ນກ່າວ ຈຶ່ງເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວວ່າ "ທ່ານອຸປະນັນທະ ທ່ານມີບຸນຫຼາຍ ຊາຍຄົນ ໜຶ່ງໃນທີ່ນັ້ນເມື່ອຈະໄປຄ້າງຄືນຕ່າງຖິ່ນ ກ່າວກັບພັນລະຍາວ່າ ເຈົ້າຈົ່ງກະດ້າຍແລ້ວມອບໃຫ້ຊ່າງຫູກຊື່ນັ້ນ ຂໍໃຫ້ເຂົາທໍຈີວອນເກັບໄວ້ ເຮົາກັບມາແລ້ວຈະນິມົນພຣະອຸປະນັນທະໃຫ້ຄອງຈີວອນ"

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ແມ່ນ ຂ້ານ້ອຍ ເຂົາເປັນອຸປັດຖາກຂອງຂ້ານ້ອຍ"

ແມ່ນຊ່າງຫູກນັ້ນກໍເປັນອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະບຸດ ຕໍ່ມາ ທ່ານພຣະ ອຸປະນັນທະສາກະຍະບຸດໄດ້ເຂົ້າໄປຫາຊ່າງຫູກນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບຊ່າງຫູກວ່າ "ຈີວອນຜືນນີ້ເຂົາໃຫ້ທ່ານທໍເຈາະຈົງອາດຕະມາ ທ່ານຈົ່ງເຮັດໃຫ້ຍາວ ໃຫ້ກວ້າງ ໃຫ້ເນື້ອແໜ້ນ ຂຶງໃຫ້ດີ ທໍໃຫ້ດີ ສາງໃຫ້ດີ ແລະຫຍິບໃຫ້ດີ

ຊ່າງຫູກກ່າວວ່າ "ພຣະຜູ້ເປັນເຈົ້າ ເຂົາກໍານົດດ້າຍສົ່ງມາໃຫ້ເທົ່ານີ້ ທັງສັ່ງກໍາກັບວ່າ ຈົ່ງເອົາດ້າຍນີ້ທໍຈີວອນ ຂ້ານ້ອຍບໍ່ສາມາດຈະເຮັດໃຫ້ຍາວ ໃຫ້ກວ້າງ ຫຼື ໃຫ້ເນື້ອແໜ້ນໄດ້ ແຕ່ຈະຂຶງໃຫ້ດີ ທໍໃຫ້ດີ ສາງໃຫ້ດີ ແລະຫຍິບໃຫ້ດີໄດ້ ຂ້ານ້ອຍ"

ທ່ານພຣະອຸປະນັນທະສາກະຍະບຸດກ່າວວ່າ "ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງເຮັດໃຫ້ຍາວ ໃຫ້ກວ້າງ ແລະໃຫ້ເນື້ອແໜ້ນເທີ້ນ ບໍ່ຕ້ອງກັງວົນເລື້ອງດ້າຍ

ເມື່ອຊ່າງຫູກນໍາດ້າຍຕາມທີ່ເຂົາສົ່ງມາເຂົ້າເຄື່ອງທໍ ຈຶ່ງເຂົ້າໄປຫາແມ່ຍິງນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບແມ່ຍິງນັ້ນວ່າ "ຂ້ອຍ ຕ້ອງການດ້າຍຕື່ມ"

ແມ່ຍິງນັ້ນກ່າວວ່າ "ຂ້ອຍສັ່ງເຈົ້າແລ້ວບໍ່ແມ່ນບໍວ່າ ຈົ່ງເອົາດ້າຍນີ້ທໍຈີວອນ

ຊ່າງຫູກຕອບວ່າ "ແມ່ນຢູ່ ເຈົ້າສັ່ງຂ້ອຍວ່າ ຈົ່ງເອົາດ້າຍນີ້ທໍຈີວອນ ແຕ່ພຣະອຸປະນັນທະສາກະຍະບຸດກ່າວຢ່າງນີ້ວ່າ ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງເຮັດໃຫ້ຍາວ ໃຫ້ກວ້າງແລະໃຫ້ເນື້ອແໜ້ນ ບໍ່ຕ້ອງກັງວົນເລື້ອງດ້າຍ" ແມ່ຍິງນັ້ນຈຶ່ງໃຫ້ດ້າຍເພີ່ມຕື່ມເທົ່າກັບທີ່ໃຫ້ເທື່ອທຳອິດ

ທ່ານພຣະອຸປະນັນທະສາກະຍະບຸດໄດ້ຂ່າວວ່າ "ຊາຍຄົນນັ້ນກັບມາຈາກການຄ້າງຄືນຕ່າງຖິ່ນ" ຈຶ່ງເຂົ້າໄປຫາເຖິງທີ່ຢູ່ ເມື່ອເຖິງແລ້ວຈຶ່ງນັ່ງເທິງອາສະນະທີ່ເຂົາຈັດໄວ້ ຊາຍນັ້ນເຂົ້າໄປຫາທ່ານພຣະອຸປະນັນທະສາກະຍະບຸດເຖິງທີ່ນັ່ງ ເມື່ອເຖິງແລ້ວຈຶ່ງໄຫວ້ແລ້ວນັ່ງ ໃນທີ່ສົມຄວນ ຖາມພັນລະຍາວ່າ "ຈີວອນທໍສຳເລັດແລ້ວບໍ?" ພັນລະຍາຕອບວ່າ "ສຳເລັດແລ້ວ" ເຂົາສັ່ງວ່າ "ເຈົ້າຈົ່ງນຳມາເຮົາຈະນິມົນພຣະອຸປະນັນທະສາກະຍະບຸດໃຫ້ຄອງຈີວອນ" ພັນລະຍານຳຈີວອນຜືນນັ້ນອອກມາໃຫ້ສາມີແລ້ວເລົ່າເລື່ອງໃຫ້ຮູ້ ຊາຍນັ້ນຖວາຍຈີວອນນັ້ນແກ່ທ່ານພຣະອຸປະນັນທະສາກະຍະບຸດແລ້ວຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມັກຫຼາຍ ບໍ່ສັນໂດດ ຈະນິມົນໃຫ້ຄອງຈີວອນ ບໍ່ແມ່ນຈະເຮັດໄດ້ງ່າຍ ເປັນຫຍັງ ພຣະອຸປະນັນທະສາກະຍະບຸດທີ່ເຮົາບໍ່ໄດ້ປະວາຣະນາໄວ້ກ່ອນ ຈຶ່ງເຂົ້າໄປຫາຊ່າງຫູກແລ້ວກຳນົດຈີວອນແນວນັ້ນນໍ?

ພິກຂຸທັງຫຼາຍໄດ້ຍິນບຸຣຸດນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດທີ່ເຂົາບໍ່ໄດ້ ປະວາຣະນາໄວ້ກ່ອນ ຈຶ່ງເຂົ້າໄປຫາຊ່າງຫູກແລ້ວກຳນົດຈີວອນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ແຕ່ທ່ານເຂົ້າໄປຫາຊ່າງຫູກຂອງຄະລືຫັດແລ້ວກຳນົດຈີວອນ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ

ອຸປະນັນທະ ເຂົາເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ" ທ່ານພຣະອຸປະນັນທະສາກະຍະບຸດທູນຕອບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ຄະລືຫັດຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຂອງທີ່ມີຢູ່ ຫຼື ບໍ່ມີຂອງຜູ້ບໍ່ແມ່ນຍາດທ່ານນັ້ນ ເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກຂອງຄະລືຫັດຜູ້ບໍ່ແມ່ນຍາດແລ້ວ

ກຳນົດຈີວອນນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໘] ກໍ ຄະລິຫັດຊາຍ ຫຼື ຄະລິຫັດຍິງຜູ້ບໍ່ແມ່ນຍາດ ສັ່ງຊ່າງຫູກໃຫ້ທໍຈີວອນເຈາະຈົງພິກຂຸ ຖ້າພິກຂຸນັ້ນເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກແລ້ວກຳນົດຊະນິດຈີວອນໃນສຳນັກຂອງເຂົາວ່າ "ທ່ານ ຈີວອນຜືນນີ້ເຂົາໃຫ້ທໍເຈາະຈົງອາດຕະມາ ທ່ານຈົ່ງເຮັດໃຫ້ຍາວ ທ່ານຈົ່ງເຮັດໃຫ້ກວ້າງ ໃຫ້ເນື້ອແໜ້ນ ຂຶງໃຫ້ດີ ທໍໃຫ້ດີ ສາງໃຫ້ດີ ແລະຫຍິບໃຫ້ດີ ເມື່ອແລ້ວອາດຕະມາຈະໃຫ້ຂອງເລັກໜ້ອຍເປັນລາງວັນແກ່ທ່ານ" ເມື່ອກ່າວຢ່າງນີ້ແລ້ວ ຖ້າພິກຂຸນັ້ນໃຫ້ຂອງເລັກໜ້ອຍເປັນລາງວັນ ໂດຍທີ່ສຸດແມ່ນແຕ່ອາຫານບິນທະບາດ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໕໔໙] ຄຳວ່າ ກໍຯລຯເຈາະຈົງພິກຂຸ ຄວາມວ່າ ເພື່ອປະໂຫຍດຂອງພິກຂຸ ຄື ມຸ້ງສະເພາະພິກຂຸ ປາຖະໜາຈະໃຫ້ພິກຂຸຄອງຈີວອນ

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ຄະລິຫັດຊາຍ ໄດ້ແກ່ ບຸຣຸດຜູ້ຄອງເຮືອນ

ທີ່ຊື່ວ່າ ຄະລິຫັດຍິງ ໄດ້ແກ່ ສະຕີຜູ້ຄອງເຮືອນ

ທີ່ຊື່ວ່າ ຊ່າງຫູກ ໄດ້ແກ່ ຄົນທໍຜ້າ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ສັ່ງຯລຯໃຫ້ທໍ ຄື ໃຊ້ໃຫ້ທໍ

ຄຳວ່າ ຖ້າພິກຂຸນັ້ນຯລຯໃນສຳນັກຂອງເຂົາ ໄດ້ແກ່ ພິກຂຸທີ່ເຂົາສັ່ງໃຫ້ຊ່າງຫູກທໍຈີວອນເຈາະຈົງ

ຄຳວ່າ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຄື ທາຍົກບໍ່ໄດ້ກ່າວໄວ້ກ່ອນວ່າ "ທ່ານຜູ້ຈະເລີນທ່ານຕ້ອງການຈີວອນຊະນິດໃດ ຂ້າພະເຈົ້າຈະໃຫ້ທໍຈີວອນຊະນິດໃດຖວາຍທ່ານ

ຄຳວ່າ ເຂົ້າໄປຫາຊ່າງຫູກ ຄື ໄປເຖິງເຮືອນແລ້ວເຂົ້າໄປຫາທີ່ໃດທີ່ໜຶ່ງ

ຄຳວ່າ ກຳນົດຊະນິດຈີວອນ ຄື ກຳນົດວ່າ "ຈີວອນຜືນນີ້ທໍເຈາະຈົງອາດຕະມາ ທ່ານຈົ່ງເຮັດໃຫ້ຍາວ ໃຫ້ກວ້າງ ໃຫ້ເນື້ອແໜ້ນ ຂຶງໃຫ້ດີ ທໍໃຫ້ດີ ສາງໃຫ້ດີ ແລະຫຍິບໃຫ້ດີ ເມື່ອແລ້ວອາດຕະມາຈະໃຫ້ຂອງເລັກໜ້ອຍເປັນລາງວັນແກ່ທ່ານ"

ຄຳວ່າ ເມື່ອກ່າວຢ່າງນີ້ແລ້ວ ຖ້າພິກຂຸນັ້ນໃຫ້ຂອງເລັກໜ້ອຍເປັນລາງວັນໂດຍທີ່ສຸດແມ່ນແຕ່ອາຫານບິນທະບາດ ມີຄວາມວ່າ ທີ່ຊື່ວ່າບິນທະບາດ ໄດ້ແກ່ ເຂົ້າຕົ້ມ ເຂົ້າສຸກ ຂອງຫຍໍ້າກ້ອນແປ້ງ ໄມ້ຖູແຂ້ວ ຫຼື ດ້າຍຊາຍຜ້າ ໂດຍທີ່ສຸດແມ່ນວ່າກ່າວທຳ

ຊ່າງຫູກເຮັດໃຫ້ຍາວ ໃຫ້ກວ້າງ ໃຫ້ເນື້ອແໜ້ນຕາມຄຳພິກຂຸ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ຈີວອນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະຈີວອນແກ່ສົງ ແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸ ຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ເຂົາ ບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຊ່າງຫູກຂອງຄະລືຫັດຜູ້ບໍ່ແມ່ນຍາດ ກຳນົດຊະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍເຂົ້າໄປຫາຊ່າງຫູກຂອງຄະລືຫັດຜູ້ບໍ່ແມ່ນຍາດ ກຳນົດຊະນິດຈີວອນເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ຂ້ານ້ອຍ ເຂົ້າໄປຫາຊ່າງຫູກຂອງຄະລິຫັດຜູ້ບໍ່ແມ່ນຍາດ ກຳນົດຂະນິດຈີວອນ ເປັນນິດສັກຄີ ຂ້ານ້ອຍ ສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍ ຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໖໔໔] ຄະລິຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກຂອງຄະລິຫັດກຳນົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລິຫັດທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກຂອງຄະລິຫັດກຳນົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄະລິຫັດທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກຂອງຄະລິຫັດກຳນົດຂະນິດຈີວອນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຄະລິຫັດທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ເຂົ້າໄປກຳນົດຂະນິດຈີວອນ ຕ້ອງອາບັດທຸກກົດ

ຄະລິຫັດທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ເຂົ້າໄປກຳນົດຂະນິດຈີວອນ ຕ້ອງອາບັດທຸກກົດ

ຄະລິຫັດທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ເຂົ້າໄປກຳນົດຂະນິດຈີວອນບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໔໕] ໑. ພິກຂຸກຳນົດຂະນິດຈີວອນກັບຊ່າງຫູກຂອງຍາດ

໔. ພິກຂຸກຳນົດຂະນິດຈີວອນກັບຊ່າງຫູກຂອງຄົນປະວາຣະນາ

໖. ພິກຂຸກຳນົດຂະນິດຈີວອນເພື່ອພິກຂຸອື່ນ

໔. ພິກຂຸກຳນົດຂະໜົດຈີວອນດ້ວຍຊັບຂອງຕົນ
໕. ຄະລິຫັດຈະໃຫ້ທໍຈີວອນລາຄາແພງແຕ່ພິກຂຸໃຫ້ທໍຈີວອນລາຄາຖືກ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ມະຫາເປສະກາຣະສິກຂາບົດທີ ໗ ຈົບ**

# ໓. ປັດຕະວັກ

## ໘. ອັດເຈກະຈີວອນສິກຂາບົດ

### ວ່າດ້ວຍອັດເຈກະຈີວອນ

### ເລື້ອງມະຫາອຳມາດຖວາຍຜ້າຈຳນຳພັນສາ

[໖໔໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ມະຫາອຳມາດຄົນໜຶ່ງຈະໄປຄ້າງຄືນ ຕ່າງຖິ່ນ ສົ່ງທູດໄປຫາພິກຂຸວ່າ "ຂໍຄູບາທັງຫຼາຍມາເທີ້ນ ຂ້າພະເຈົ້າຈະຖວາຍຜ້າຈຳນຳພັນສາ" ພິກຂຸທັງຫຼາຍລັງກຽດວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດຜ້າຈຳນຳພັນສາແກ່ພິກຂຸຜູ້ຢູ່ຈຳພັນສາເທົ່ານັ້ນ" ຈຶ່ງບໍ່ໄປ

ມະຫາອຳມາດຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ຄູບາທັງຫຼາຍເມື່ອເຮົາສົ່ງທູດໄປຈຶ່ງບໍ່ມານໍ ເຮົາຈະເດີນທາງອອກໄປຮົບ ຈະເປັນຫຼືຕາຍກໍຍາກທີ່ຈະຮູ້ໄດ້

ພວກພິກຂຸໄດ້ຮູ້ຂ່າວທີ່ມະຫາອຳມາດຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງອະນຸຍາດອັດເຈກະຈີວອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບອັດເຈກະຈີວອນເກັບໄວ້ໄດ້"

[໖໔໗] ສະໄໝນັ້ນ ພິກຂຸທັງຫຼາຍຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ຮັບອັດເຈກະຈີວອນເກັບໄວ້ໄດ້" ຈຶ່ງຮັບອັດເຈກະຈີວອນເກັບໄວ້ຈົນເກີນສະໄໝຈີວອນການ ຈີວອນເຫຼົ່ານັ້ນພິກຂຸທໍ່ແຂວນໄວ້ທີ່ສາຍຫຍຽກຕາກຈີວອນ

ທ່ານພຣະອານົນທ່ຽວຈາຣິກໄປຕາມເສນາສະນະເຫັນຈີວອນເຫຼົ່ານັ້ນແຂວນຢູ່ທີ່ສາຍຫຼຽກຕາກຈີວອນ ຈຶ່ງກ່າວກັບພິກຂຸທັງຫຼາຍວ່າ "ຈີວອນເຫຼົ່ານີ້ຂອງໃຜແຂວນໄວ້ທີ່ສາຍຫຼຽກຕາກຈີວອນ"

ພິກຂຸທັງຫຼາຍຕອບວ່າ "ອັດເຈກະຈີວອນຂອງພວກຂ້ານ້ອຍ"

ທ່ານພຣະອານົນຖາມວ່າ "ທ່ານທັງຫຼາຍ ພວກທ່ານເກັບຈີວອນເຫຼົ່ານີ້ໄວ້ດົນຈັກວັນແລ້ວ" ພິກຂຸເຫຼົ່ານັ້ນບອກພຣະອານົນຕາມທີ່ໄດ້ເກັບໄວ້

ທ່ານພຣະອານົນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍຮັບອັດເຈກຈີວອນແລ້ວເກັບໄວ້ຈົນເກີນສະໄໝຈີວອນການນໍ" ເມື່ອພຣະອານົນ ຕຳໜິພວກພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພວກພິກຂຸຮັບອັດເຈກະຈີວອນເກັບໄວ້ຈົນເກີນສະໄໝຈີວອນການ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຮັບອັດເຈກະຈີວອນເກັບໄວ້ຈົນເກີນສະໄໝຈີວອນການນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໔໗] ກໍ ເມື່ອຍັງເຫຼືອອີກ ໑໐ ວັນຈຶ່ງຈະເຖິງວັນເພັງເດືອນ ໑໑ ເຊິ່ງເປັນວັນຄົບໄຕຣມາດ[1] ອັດເຈກະຈີວອນເກີດຂຶ້ນແກ່ພິກຂຸ ພິກຂຸຮູ້ຢູ່ວ່າເປັນອັດເຈກະຈີວອນເພິ່ງຮັບໄວ້ ເມື່ອຮັບໄວ້ແລ້ວຄວນເກັບໄວ້ໄດ້ໃນສະໄໝທີ່ເປັນຈີວອນການ ຖ້າເກັບໄວ້ເກີນກຳນົດນັ້ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງມະຫາອຳມາດຖວາຍຜ້າຈຳນຳພັນສາ ຈົບ

## ສິກຂາບົດວິພັງ

[໖໔໘] ຄຳວ່າ ເມື່ອຍັງເຫຼືອອີກ ໑໐ ວັນ ຄື ອີກ ໑໐ ວັນຈະເຖິງວັນປະວາຣະນາ

ຄຳວ່າ ວັນເພັງເດືອນ ໑໑ ເຊິ່ງເປັນວັນຄົບໄຕຣມາດ ທ່ານກ່າວໝາຍເອົາວັນປະວາຣະນາເດືອນ ໑໑

ທີ່ຊື່ວ່າ ອັດເຈກະຈີວອນ ອະທິບາຍວ່າ ຜູ້ປະສົງຈະໄປໃນກອງທັບ ປະສົງຈະໄປພັກແຮມຕ່າງຖິ່ນ ເຈັບໄຂ້ ສະຕິຖືພາ ຜູ້ບໍ່ມີສັດທາໄດ້ເກີດສັດທາຂຶ້ນ ຫຼື ຜູ້ບໍ່ເຫຼື້ອມໃສໄດ້ເກີດຄວາມເຫຼື້ອມໃສຂຶ້ນ ຖ້າເຂົາສົ່ງທູດໄປບອກພິກຂຸວ່າ "ນິມົນຄູບາທັງຫຼາຍມາເທີ້ນ ຂ້ານ້ອຍຈະຖວາຍຜ້າຈຳນຳພັນສາ" ຜ້າເຊັ່ນນີ້ຊື່ວ່າອັດເຈກະຈີວອນ

ຄຳວ່າ ຮູ້ຢູ່ວ່າເປັນອັດເຈກະຈີວອນເພິ່ງຮັບໄວ້ ເມື່ອຮັບໄວ້ແລ້ວຄວນເກັບໄວ້ໄດ້ຊົ່ວສະໄໝທີ່ເປັນຈີວອນການ ຄື ພິກຂຸເພິ່ງເຮັດເຄື່ອງໝາຍວ່າ "ນີ້ຄືອັດເຈກະຈີວອນ" ແລ້ວເກັບໄວ້

ທີ່ຊື່ວ່າ ສະໄໝທີ່ເປັນຈີວອນການ ຄື ເມື່ອຍັງບໍ່ໄດ້ການກະຖິນມີເວລາທ້າຍລະດູຝົນ ໑ ເດືອນ ເມື່ອການກະຖິນແລ້ວ ຂະຫຍາຍເວລາອອກໄປອີກເປັນ ໕ ເດືອນ

ຄຳວ່າ ຖ້າເກັບໄວ້ເກີນກຳນົດນັ້ນ ຄື ເມື່ອບໍ່ການກະຖິນ ໃຫ້ເກີນວັນສຸດທ້າຍລະດູຝົນຕ້ອງອາບັດນິດສັກຄິຍະປາຈິດຕີ ເມື່ອໄດ້ການກະຖິນແລ້ວເກັບໄວ້ເລີຍວັນກະຖິນເດາະ ເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະຫຼືແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະອັດເຈກະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະອັດເຈກະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ງງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສານັ່ງຢອງຍໍ່ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຜ້າອັດເຈກະຈີວອນຜືນນີ້ຂ້ານ້ອຍເຮັດໃຫ້ເກີນສະ ໄໝທີ່ເປັນຈີວອນການ ເປັນນິດສັກຄີ ຂ້ານ້ອຍສະລະອັດເຈກະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນອັດເຈກະຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ອັດເຈກະຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ອັດເຈກະຈີວອນຜືນນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ງງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ່ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຜ້າອັດເຈກະຈີວອນຜືນນີ້ຂ້ານ້ອຍເຮັດໃຫ້ເກີນສະໄໝທີ່ເປັນຈີວອນການ ເປັນນິດສັກຄີ ຂ້ານ້ອຍສະລະອັດເຈກະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເມື່ອຮັບອາບັດແລ້ວ ເພິ່ງຄືນອັດເຈກະຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ອັດເຈກະຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວເພິ່ງໃຫ້ອັດເຈກະຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຜ້າອັດເຈກະຈີວອນຜືນນີ້ຂ້ານ້ອຍເຮັດໃຫ້ເກີນສະໄໝທີ່ເປັນຈີວອນການເປັນນິດສັກຄີ ຂ້ານ້ອຍສະລະອັດເຈກະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດ ແລ້ວຄືນອັດເຈກະຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນອັດເຈກະຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ
## ນິດສັກຄີຍະປາຈິດຕີ

[໖໕໐] ອັດເຈກະຈີວອນ ພິກຂຸສຳຄັນວ່າອັດເຈກະຈີວອນ ເຮັດໃຫ້ເກີນສະໄໝທີ່ເປັນຈີວອນການ ຕ້ອງອາບັດນິດສັກຄີຍະປາຈິດຕີ

ອັດເຈກະຈີວອນ ພິກຂຸບໍ່ແນ່ໃຈ ເຮັດໃຫ້ເກີນສະໄໝທີ່ເປັນຈີວອນການ ຕ້ອງອາບັດນິດສັກຄີຍະປາຈິດຕີ

ອັດເຈກະຈີວອນ ພິກຂຸສຳຄັນວ່າບໍ່ແມ່ນອັດເຈກະຈີວອນ ເຮັດໃຫ້ເກີນສະໄໝທີ່ເປັນຈີວອນການ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ໄດ້ອະທິຖານ ພິກຂຸສຳຄັນວ່າອະທິຖານແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ໄດ້ວິກັບ ພິກຂຸສຳຄັນວ່າວິກັບແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ໄດ້ສະລະ ພິກຂຸສຳຄັນວ່າສະລະແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ເສຍຫາຍ ພິກຂຸສຳຄັນວ່າເສຍຫາຍແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ຖືກໄຟໄໝ້ ພິກຂຸສຳຄັນວ່າຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນທີ່ຍັງບໍ່ຖືກໂຈນຊິງໄປ ພິກຂຸສຳຄັນວ່າຖືກໂຈນຊິງໄປແລ້ວ ໃຫ້ເກີນສະໄໝທີ່ເປັນຈີວອນການ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ຕິກະທຸກກົດ

ພິກຂຸຍັງບໍ່ໄດ້ສະລະຈີວອນທີ່ເປັນນິດສັກຄີ ໃຊ້ສອຍ ຕ້ອງອາບັດທຸກກົດ
ຈີວອນທີ່ບໍ່ແມ່ນອັດເຈກະຈີວອນ ພິກຂຸສຳຄັນວ່າອັດເຈກະຈີວອນ ຕ້ອງອາບັດທຸກກົດ
ຈີວອນທີ່ບໍ່ແມ່ນອັດເຈກະຈີວອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ຈີວອນທີ່ບໍ່ແມ່ນອັດເຈກະຈີວອນ ພິກຂຸສຳຄັນວ່າບໍ່ແມ່ນອັດເຈກະຈີວອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໕໑] ໑. ພິກຂຸອະທິຖານພາຍໃນເວລາທີ່ກຳນົດ
໒. ພິກຂຸວິກັບໄວ້ພາຍໃນເວລາທີ່ກຳນົດ
໓. ພິກຂຸສະລະໃຫ້ໄປພາຍໃນເວລາທີ່ກຳນົດ
໔. ພິກຂຸທີ່ມີຈີວອນສູນຫາຍພາຍໃນເວລາທີ່ກຳນົດ
໕. ພິກຂຸທີ່ມີຈີວອນເສຍຫາຍພາຍໃນເວລາທີ່ກຳນົດ
໖. ພິກຂຸທີ່ມີຈີວອນຖືກໄຟໄໝ້
໗. ພິກຂຸທີ່ມີຈີວອນຖືກໂຈນຊິງເອົາໄປ
໘. ພິກຂຸຜູ້ມີຈີວອນຖືກຖືເອົາໄປໂດຍວິສາສະ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ອັດເຈກະຈີວອນສິກຂາບົດທີ ໘ ຈົບ**

# ໓. ປັດຕະວັກ

## ໙. ສາສັງກະສິກຂາບົດ

## ວ່າດ້ວຍເສນາສະນະປ່າທີ່ໜ້າຫວາດຣະແວງ

## ເລື່ອງພິກຂຸຫຼາຍອົງ

[໖໕໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸທັງຫຼາຍເມື່ອອອກພັນສາປະວາຣະນາແລ້ວຍັງຢູ່ໃນເສນາສະນະປ່າ ກຸ່ມກັດຕິກະໂຈນ ເຂົ້າໃຈວ່າ "ພວກພິກຂຸມີລາບ" ຈຶ່ງເຂົ້າຈີ້ປຸ້ນ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດພິກຂຸໃຫ້ເກັບຈີວອນໄວ້ໃນບໍລິເວນບ້ານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຢູ່ໃນເສນາສະນະປ່າເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານໄດ້

ສະໄໝນັ້ນ ພວກພິກຂຸໄດ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸຜູ້ຢູ່ໃນເສນາສະນະປ່າເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານໄດ້" ຈຶ່ງເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານຢູ່ຂາດເກີນ ໖ ຄືນ ຈີວອນເຫຼົ່ານັ້ນສູນຫາຍແດ່ ເສຍຫາຍແດ່ ຖືກໄຟໄໝ້ແດ່ ຖືກໜູກັດແດ່ ພິກຂຸເຫຼົ່ານັ້ນມີຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ ພິກຂຸທັງຫຼາຍກ່າວຢ່າງນີ້ວ່າ "ເປັນຫຍັງ ພວກທ່ານມີຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ " ໃນບັດນັ້ນ ພິກຂຸເຫຼົ່ານັ້ນຈຶ່ງບອກເລື້ອງນັ້ນໃຫ້ຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານ ແລ້ວຢູ່ຂາດເກີນ ໖ ຄືນນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸເກັບໄຕຣຈີວອນຜືນໃດ ຜືນໜຶ່ງໄວ້ໃນບໍລິເວນບ້ານແລ້ວຢູ່ຂາດເກີນ ໖ ຄືນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນຈຶ່ງເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານແລ້ວຢູ່ຂາດເກີນ ໖ ຄືນ ພິກຂຸທັງຫຼາຍການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໕໓] ກໍ ພິກຂຸຈຳພັນສາແລ້ວຫວັງຈະຢູ່ໃນເສນາສະນະປ່າທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານເຊັ່ນນັ້ນ ຈົນເຖິງວັນເພັງເດືອນ ໑໘ ເພິ່ງເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານໄດ້ ແລະພິກຂຸນັ້ນຄວນມີປັດໄຈບາງຢ່າງເພື່ອການຢູ່ປາສະຈາກຈີວອນນັ້ນ ພິກຂຸນັ້ນເພິ່ງຢູ່ປາສະຈາກຈີວອນນັ້ນໄດ້ ໖ ຄືນເປັນຢ່າງຫຼາຍ ຖ້າຢູ່ຂາດເກີນກວ່າກຳນົດນັ້ນ ຕ້ອງອາບັດນິດສັກຄີຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸຜູ້ໄດ້ຮັບສົມມຸດ

**ເລື້ອງພິກຂຸຫຼາຍອົງ ຈົບ**

## ສິກຂາບົດວິພັງ

[ຜ໕໔] ຄຳວ່າ ກໍໆລໆຈຳພັນສາແລ້ວ ຄື ອອກພັນສາແລ້ວ

ຄຳວ່າ ວັນເພັງເດືອນ ໑໔ ພຣະຜູ້ມີພຣະພາກເຈົ້າຕັດວ່າກົງກັບວັນປຸຣະນະມີດິຖີທີ ໔ ໃນກັດຕິການາດ

ຄຳວ່າ ເສນາສະນະປ່າ ຄວາມວ່າ ເສນາສະນະທີ່ຊື່ວ່າປ່າ ມີໄລຍະ ໕໐໐ ຊົ່ວທະນູ ຫ່າງຈາກບ້ານເປັນຢ່າງຕ່ຳ

ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນອາຣາມ ອຸປະຈານແຫ່ງອາຣາມ ຜາກົດທີ່ຢູ່ ຜາກົດທີ່ກິນ ຜາກົດທີ່ຢືນ ຜາກົດທີ່ນັ່ງ ຜາກົດທີ່ນອນຂອງພວກໂຈນ

ທີ່ຊື່ວ່າ ມີໄພເປັນຕາຢ້ານ ຄື ໃນອາຣາມ ອຸປະຈານແຫ່ງອາຣາມ ຜາກົດມີມະນຸດ ຖືກພວກໂຈນຂ້າ ຜາກົດມີມະນຸດຖືກປຸ້ນ ຜາກົດມີມະນຸດຖືກທຸບຕີ

ຄຳວ່າ ພິກຂຸໆລໆຈະຢູ່ໃນເສນາສະນະປ່າເຊັ່ນນັ້ນ ຄວາມວ່າ ພິກຂຸຍັບຍັ້ງຢູ່ໃນເສນາສະນະເຊັ່ນນັ້ນ

ຄຳວ່າ ຫວັງ ຄື ປາຖະໜາ

ຄຳວ່າ ໄຕຣຈີວອນຜືນໃດຜືນໜຶ່ງ ໄດ້ແກ່ ສັງຄາຕິ ອຸດຕະຣາສົງ ຫຼື ອັນຕະຣະວາສົກ

ຄຳວ່າ ເພິ່ງເກັບໄວ້ໃນບໍລິເວນບ້ານໄດ້ ຄື ເກັບໄວ້ໃນໂຄຈອນຄາມໂດຍອ້ອມຂອງບ້ານ

ຄຳວ່າ ພິກຂຸນັ້ນຄວນມີປັດໄຈບາງຢ່າງເພື່ອການຢູ່ປາສະຈາກຈີວອນນັ້ນ ຄື ມີເຫດຜົນຫຼືມີວຽກງານ

ຄຳວ່າ ພິກຂຸເພິ່ງຢູ່ປາສະຈາກຈີວອນນັ້ນໄດ້ ຜ ຄືນເປັນຢ່າງຫຼາຍ ຄວາມວ່າ ຢູ່ໂດຍບໍ່ຕ້ອງຖືຈີວອນຕາມທີ່ກຳນົດນັ້ນໄດ້ພຽງ ຜ ຄືນເປັນຢ່າງຫຼາຍ

ຄຳວ່າ ເວັ້ນໄວ້ແຕ່ພິກຂຸຜູ້ໄດ້ຮັບສົມມຸດ ຄື ຍົກເວັ້ນພິກຂຸທີ່ໄດ້ຮັບການສົມມຸດໂດຍສົງ

ຄຳວ່າ ຖ້າຢູ່ຂາດເກີນກວ່າກຳນົດນັ້ນ ຄວາມວ່າ ເມື່ອອະຣຸນວັນທີ ໗ ມາຮອດ ຈີວອນນັ້ນເປັນນິດສັກຄີ ຄື ເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະຈີວອນທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຢອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍຢູ່ຂາດເກີນ ຜ ຄືນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ຈີວອນຜືນນີ້ຂອງຂ້ານ້ອຍຢູ່ຂາດເກີນ ໖ ຄືນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງ ອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວກໍເພິ່ງໃຫ້ຈີວອນຜືນນີ້ແກ່ພິກຂຸຊື່ນີ້

## ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຂ້ານ້ອຍ ຈີວອນຜືນນີ້ຂອງຂ້ານ້ອຍຢູ່ຂາດເກີນ ໖ ຄືນ ເປັນນິດສັກຄີ ຂ້ານ້ອຍສະລະຈີວອນຜືນນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນຈີວອນທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍ ຄືນຈີວອນຜືນນີ້ໃຫ້ແກ່ທ່ານ"

## ບົດພາຊະນີ

## ນິດສັກຄີຍະປາຈິດຕີ

[໖໕໕] ຈີວອນເກີນ ໖ ຄືນ ພິກຂຸສຳຄັນວ່າເກີນ ຢູ່ຂາດ ຕ້ອງອາບັດນິດສັກຄີຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ

ຈີວອນເກີນ ໖ ຄືນ ພິກຂຸບໍ່ແນ່ໃຈ ຢູ່ຂາດ ຕ້ອງອາບັດນິດສັກຄີຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ

ຈີວອນເກີນ ໖ ຄືນ ພິກຂຸສຳຄັນວ່າຍ່ອນກວ່າ ຢູ່ຂາດ ຕ້ອງອາບັດນິດສັກຄີຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ

ຈີວອນຍັງບໍ່ໄດ້ຖອນ ພິກຂຸສຳຄັນວ່າຖອນແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຈີວອນຍັງບໍ່ໄດ້ສະລະ ພິກຂຸສຳຄັນວ່າສະລະແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ສູນຫາຍ ພິກຂຸສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ເສຍຫາຍ ພິກຂຸສຳຄັນວ່າເສຍຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ຖືກໄຟໄໝ້ ພິກຂຸສຳຄັນວ່າຖືກໄຟໄໝ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຈີວອນຍັງບໍ່ຖືກຊິງເອົາໄປ ພິກຂຸສຳຄັນວ່າຖືກໂຈນຊິງເອົາໄປແລ້ວ ຢູ່ຂາດ ຕ້ອງອາບັດນິດສັກຄິຍະປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ສົມມຸດ

## ຕິກະທຸກກົດ

ພິກຂຸບໍ່ໄດ້ສະລະຈີວອນເປັນນິດສັກຄີ ໃຊ້ສອຍ ຕ້ອງອາບັດທຸກກົດ

ຈີວອນຢ່ອນກວ່າ ໖ ຣາຕີ ພິກຂຸສຳຄັນວ່າເກີນແລ້ວ ຕ້ອງອາບັດທຸກກົດ

ຈີວອນຢ່ອນກວ່າ ໖ ຣາຕີ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຈີວອນຢ່ອນກວ່າ ໖ ຣາຕີ ພິກຂຸສຳຄັນວ່າຢ່ອນກວ່າ ໃຊ້ສອຍບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໕໖] ໑. ພິກຂຸຢູ່ຂາດ ໖ ຣາຕີ
໒. ພິກຂຸຢູ່ຂາດຢ່ອນກວ່າ ໖ ຣາຕີ
໓. ພິກຂຸຢູ່ຂາດ ໖ ຣາຕີ ແລ້ວກັບມາຄາມສີມາແລ້ວຈາກໄປ
໔. ພິກຂຸຖອນຜ້າພາຍໃນ ໖ ຣາຕີ
໕. ພິກຂຸສະລະໃຫ້ພາຍໃນ ໖ ຣາຕີ
໖. ພິກຂຸທີ່ມີຈີວອນສູນຫາຍພາຍໃນ ໖ ຣາຕີ
໗. ພິກຂຸທີ່ມີຈີວອນເສຍຫາຍພາຍໃນ ໖ ຣາຕີ
໘. ພິກຂຸທີ່ມີຈີວອນຖືກໄຟໄໝ້ພາຍໃນ ໖ ຣາຕີ
໙. ພິກຂຸທີ່ມີຈີວອນຖືກໂຈນຊິງເອົາໄປພາຍໃນ ໖ ຣາຕີ
໑໐. ພິກຂຸຜູ້ມີຈີວອນຖືກຖືເອົາໄປໂດຍວິສາສະພາຍໃນ ໖ ຣາຕີ
໑໑. ພິກຂຸໄດ້ສົມມຸດ
໑໒. ພິກຂຸວິກົນຈະລິດ
໑໓. ພິກຂຸຕົ້ນບັນຍັດ

**ສາສັງກະສິກຂາບົດທີ ໙ ຈົບ**

# ៦. ປັດຕະວັກ

## ໑໐. ປະຣິນະຕະສິກຂາບົດ

### ວ່າດ້ວຍການນ້ອມລາບ

### ເລື້ອງພຣະສັບພັກຄີ

[໓໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສະມາຄົມໜຶ່ງໃນນະຄອນສາວັດຖີກຽມພັດຕາຫານພ້ອມຈີວອນໄວ້ຖວາຍສົງດ້ວຍຕັ້ງໃຈວ່າ "ພວກເຮົາຈັກນິມົນພິກຂຸໃຫ້ສັນແລ້ວໃຫ້ຄອງຈີວອນ" ຕໍ່ມາ ພວກພິກຂຸສັບພັກຄີໄດ້ເຂົ້າໄປຫາສະມາຄົມນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບສະມາຄົມນັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານໂຜດຖວາຍຈີວອນແກ່ພວກອາດຕະມາ"

ສະມາຄົມນັ້ນກ່າວວ່າ "ທ່ານຜູ້ຈະເລີນ ພວກເຮົາຈະບໍ່ຖວາຍ ພວກເຮົາຈັດພິກສາຫານພ້ອມກັບຈີວອນໄວ້ຖວາຍສົງເປັນປະຈຳທຸກປີ

ພວກພິກຂຸສັບພັກຄີກ່າວວ່າ "ທ່ານທັງຫຼາຍ ທາຍົກຂອງສົງມີຫຼາຍຄົນ ພັດຕາຫານຂອງສົງກໍມີຈຳນວນຫຼາຍ ພວກອາດຕະມາອາໄສພວກທ່ານ ເຫັນແກ່ພວກທ່ານຈຶ່ງຢູ່ບ່ອນນີ້ ຖ້າພວກທ່ານບໍ່ຖວາຍແກ່ພວກອາດຕະມາ ເວລານີ້ ແລ້ວໃຜນໍຈະຖວາຍແກ່ພວກອາດຕະມາ ພວກທ່ານໂຜດຖວາຍຈີວອນແກ່ພວກອາດຕະມາເທີ້ນ

ລຳດັບນັ້ນ ເມື່ອຖືກພວກພິກຂຸສັບພັກຄີກົດດັນ ສະມາຄົມນັ້ນ ຈຶ່ງຖວາຍຈີວອນຕາມທີ່ຈັດໄວ້ແລ້ວແກ່ພວກພິກຂຸສັບພັກຄີແລ້ວປະເຄນສົງສະເພາະພັດຕາຫານ

ພວກພິກຂຸທີ່ໄດ້ຂ່າວວ່າ "ສະມາຄົມຈັດອາຫານແລະຈີວອນໄວ້ຖວາຍສົງ" ແຕ່ບໍ່ໄດ້ຂ່າວວ່າ "ພວກເຂົາຖວາຍພວກພິກຂຸສັບພັກຄີໄປແລ້ວ" ຈຶ່ງກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຈົ່ງຖວາຍຈີວອນແກ່ສົງ"

ສະມາຄົມນັ້ນກ່າວວ່າ "ທ່ານຜູ້ຈະເລີນ ບໍ່ມີຈີວອນຕາມທີ່ເຄີຍຈັດໄວ້ ພຣະສັບພັກຄີນ້ອມໄປເພື່ອຕົນແລ້ວ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຮູ້ຢູ່ຈຶ່ງນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮູ້ຢູ່ຈຶ່ງນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນນໍ ໂມຄະບຸຣຸດທັງຫຼາຍການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໕໗] ກໍ ພິກຂຸໃດຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນ ຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໕໘] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກໃຫ້ຮູ້ ຫຼື ຄົນນັ້ນບອກທ່ານ

ທີ່ຊື່ວ່າ ເປັນຂອງຈະຖວາຍສົງ ໄດ້ແກ່ ເປັນຂອງທີ່ເຂົາຖວາຍ ຫຼື ບໍລິຈາກແລ້ວແກ່ສົງ

ທີ່ຊື່ວ່າ ລາບ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ໂດຍທີ່ສຸດແມ່ນກ້ອນແປ້ງ ໄມ້ຖູແຂ້ວ ຫຼື ດ້າຍຊາຍຜ້າ

ທີ່ຊື່ວ່າ ນ້ອມໄວ້ ຄື ເຂົາເປ່ງວາຈາວ່າ "ເຮົາຈະເກັບໄວ້ເພື່ອທ່ານ"

ພິກຂຸນ້ອມມາເພື່ອຕົນ ຕ້ອງອາບັດທຸກກົດຍ້ອນພະຍາຍາມ ເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ບຸກຄົນ

ພິກຂຸທັງຫຼາຍ ພິກຂຸເພິ່ງສະລະລາບທີ່ເປັນນິດສັກຄີຢ່າງນີ້

## ວິທີສະລະລາບທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ລາບນີ້ເຂົານ້ອມໄວ້ເປັນຂອງຈະຖວາຍສົງ ຂ້ານ້ອຍຮູ້ຢູ່ ນ້ອມມາເພື່ອຕົນ ເປັນນິດສັກຄີ ຂ້ານ້ອຍສະລະລາບນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນລາບທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ລາບນີ້ຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ລາບນີ້ແກ່ພິກຂຸຊື່ນີ້

### ສະລະແກ່ຄະນະ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາ ນັ່ງຍອງຍໍ້ປະນົມມື ກ່າວຢ່າງນີ້ວ່າ "ທ່ານຜູ້ຈະເລີນ ລາບນີ້ເຂົານ້ອມໄວ້ເປັນຂອງຈະຖວາຍສົງ ຂ້ານ້ອຍຮູ້ຢູ່ ນ້ອມມາເພື່ອຕົນ ເປັນນິດສັກຄີ ຂ້ານ້ອຍສະລະລາບນີ້ແກ່ທ່ານທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນລາບທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ລາບຂອງພິກຂຸຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍພ້ອມກັນແລ້ວເພິ່ງໃຫ້ລາບນີ້ແກ່ພິກຂຸຊື່ນີ້

### ສະລະແກ່ບຸກຄົນ

ພິກຂຸອົງນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍອງຍໍ້ປະນົມມື ກ່າວວ່າ "ທ່ານຂ້ານ້ອຍ ລາບນີ້ເຂົານ້ອມໄວ້ເປັນຂອງຈະຖວາຍສົງ ຂ້ານ້ອຍຮູ້ຢູ່ ນ້ອມມາເພື່ອຕົນ ເປັນນິດສັກຄີ ຂ້ານ້ອຍສະລະລາບນີ້ແກ່ທ່ານ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸຜູ້ຮັບສະລະນັ້ນເພິ່ງຮັບອາບັດແລ້ວຄືນລາບທີ່ທ່ານສະລະໃຫ້ດ້ວຍກ່າວວ່າ "ຂ້ານ້ອຍຄືນລາບນີ້ໃຫ້ແກ່ທ່ານ"

### ບົດພາຊະນີ

### ນິດສັກຄິຍະປາຈິດຕີ

[໖໖໐] ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸສຳຄັນວ່າເຂົານ້ອມໄວ້ແລ້ວ ນ້ອມມາເພື່ອຕົນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກກົດ

ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸບໍ່ແນ່ໃຈ ນ້ອມມາເພື່ອຕົນ ຕ້ອງອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸສຳຄັນວ່າເຂົາບໍ່ໄດ້ນ້ອມໄວ້ ນ້ອມມາເພື່ອຕົນ ບໍ່ຕ້ອງອາບັດ

ລາບທີ່ເຂົານ້ອມໄວ້ເພື່ອສົງ ພິກຂຸນ້ອມມາເພື່ອສົງອື່ນ ຫຼື ເພື່ອເຈດີ ຕ້ອງອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ເພື່ອເຈດີ ພິກຂຸນ້ອມມາເພື່ອເຈດີອື່ນ ເພື່ອສົງ ເພື່ອຄະນະຫຼືເພື່ອບຸກຄົນ ຕ້ອງອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ເພື່ອບຸກຄົນ ພິກຂຸນ້ອມມາເພື່ອບຸກຄົນອື່ນ ເພື່ອສົງ ເພື່ອຄະນະ ຫຼື ເພື່ອເຈດີ ຕ້ອງອາບັດທຸກກົດ

ລາບທີ່ເຂົາບໍ່ໄດ້ນ້ອມໄວ້ ພິກຂຸສຳຄັນວ່າເຂົານ້ອມໄວ້ ຕ້ອງອາບັດທຸກກົດ

ລາບທີ່ເຂົາບໍ່ໄດ້ນ້ອມໄວ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ລາບທີ່ເຂົາບໍ່ໄດ້ນ້ອມໄວ້ ພິກຂຸສຳຄັນວ່າເຂົາບໍ່ໄດ້ນ້ອມໄວ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ຜຜ໑] ໑. ພິກຂຸຖືກທາຍົກຖາມວ່າ “ຈະຖວາຍຢູ່ໃສ” ຈຶ່ງແນະນຳວ່າ “ວັດຖຸທານຂອງພວກທ່ານເພິ່ງໄດ້ຮັບການໃຊ້ສອຍ ໄດ້ຮັບການປະຕິສັງຂອນ ຫຼື ຢູ່ໄດ້ດົນໃນທີ່ໃດ ຫຼື ທ່ານມີຈິດເຫຼື້ອມໃສໃນທີ່ໃດ ຈົ່ງຖວາຍໃນທີ່ນັ້ນເທີ້ນ”

໔. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ປະຣິນະຕະສິກຂາບົດທີ ໑໐ ຈົບ**

**ປັດຕະວັກທີ ໓ ຈົບ**

## ລວມສິກຂາບົດທີ່ມີໃນປັດຕະວັກ ຄື

ປັດຕະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ປັດຕະສິກຂາບົດ | ວ່າດ້ວຍບາດ |
| ໔. ອູນະປັນຈະພັນທະນະສິກຂາບົດ | ວ່າດ້ວຍບາດມີຮອຍຕາບຍ່ອນກວ່າ ໕ ແຫ່ງ |
| ໖. ເພສັດຊະສິກຂາບົດ | ວ່າດ້ວຍເພສັດ |

| | |
|---|---|
| ໔. ວັດສິກະສາຕິກະສິກຂາບົດ | ວ່າດ້ວຍຜ້າອາບນໍ້າຝົນ |
| ໕. ຈີວອນອັດສິນທະນະສິກຂາບົດ | ວ່າດ້ວຍການໃຫ້ຈີວອນແລ້ວຊີງເອົາຄືນ |
| ໖. ສຸດຕະວິນຍັດຕິສິກຂາບົດ | ວ່າດ້ວຍການອອກປາກຂໍດ້າຍ |
| ໗. ມະຫາເປສະກາຣະສິກຂາບົດ | ວ່າດ້ວຍການສັ່ງຊ່າງຫູກທໍຈີວອນ |
| ໘. ອັດເຈກະຈີວອນສິກຂາບົດ | ວ່າດ້ວຍອັດເຈກະຈີວອນ |
| ໙. ສາສັງກະສິກຂາບົດ | ວ່າດ້ວຍເສນາສະນະປ່າທີ່ໜ້າຫວາດຣະແວງ |
| ໑໐. ປະຣິນະຕະສິກຂາບົດ | ວ່າດ້ວຍການນ້ອມລາບ |

## ບົດສະຫຼຸບ

[໖໖໘] ທ່ານທັງຫຼາຍ ທໍາຄືນິດສັກຄີຍະປາຈິດຕີ ໓໐ ສິກຂາບົດນີ້ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າ ຂໍຖາມທ່ານທັງຫຼາຍໃນນິດສັກຄີຍະປາຈິດຕີ ໓໐ ສິກຂາບົດເຫຼົ່ານັ້ນວ່າ

ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າ ຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າ ຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ທ່ານທັງຫຼາຍບໍລິສຸດແລ້ວໃນນິດສັກຄີຍະປາຈິດຕີ ໓໐ ສິກຂາບົດນີ້ ດັ່ງນັ້ນ ຈຶ່ງນິ່ງ

ຂ້າພະເຈົ້າ ຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ນິດສັກຄີຍະກັນ ຈົບ**

# ໕. ປາຈິດຕິຍະກັນ

ທ່ານທັງຫຼາຍ ທຳຄືປາຈິດຕີ ໗໘ ສິກຂາບົດເຫຼົ່ານີ້ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ ດັ່ງຕໍ່ໄປນີ້

## ໑. ມຸສາວາທະວັກ

## ໝວດວ່າດ້ວຍການກ່າວຕົວະ

### ໑. ມຸສາວາທະສິກຂາບົດ

### ວ່າດ້ວຍການກ່າວຕົວະ

### ເລື້ອງພຣະຫັດຖະກະສາກະຍະບຸດ

[໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຫັດຖະກະສາກະຍະບຸດເປັນນັກໂຕ້ວາທະ ເມື່ອທ່ານເຈລະຈາກັບພວກເດຍຣະຖີ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນ ພວກເດຍຣະຖີຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະຫັດຖະກະສາກະຍະບຸດ ເມື່ອເຈລະຈາກັບພວກເຮົາ ຈຶ່ງປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນໄປແນວນັ້ນນໍ?

ພວກພິກຂຸໄດ້ຍິນພວກເດຍຣະຖີຕຳໜິ ປະນາມ ໂພນທະນາ ຈຶ່ງເຂົ້າໄປຫາພຣະຫັດຖະກະສາກະຍະບຸດເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພຣະຫັດຖະກະສາກະຍະບຸດດັ່ງນີ້ວ່າ "ທ່ານຫັດຖະກະ ໄດ້ຂ່າວວ່າ ເມື່ອທ່ານເຈລະຈາກັບພວກເດຍຣະຖີ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນໄປ ແມ່ນບໍ?

ພຣະຫັດຖະກະສາກະຍະບຸດຕອບວ່າ "ເຮົາຕ້ອງເອົາຊະນະພວກເດຍຣະຖີເຫຼົ່ານັ້ນ ດ້ວຍວິທີໃດວິທີໜຶ່ງ ພວກເຮົາບໍ່ຄວນໃຫ້ໄຊຊະນະແກ່ພວກເດຍຣະຖີເຫຼົ່ານັ້ນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະຫັດຖະກະສາກະຍະບຸດ ເມື່ອເຈລະຈາກັບພວກເດຍຣະຖີ ຈຶ່ງປະຕິເສດແລ້ວຮັບ ຮັບແລ້ວ

ປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນໄປບໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພຣະຫັດຖະກະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະຫັດຖະກະສາກະຍະບຸດວ່າ "ຫັດຖະກະ ໄດ້ຂ່າວວ່າ ເມື່ອທ່ານເຈລະຈາກັບພວກເດຍຣະຖີ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນໄປ ແມ່ນບໍ?" ພຣະຫັດຖະກະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງທ່ານເມື່ອເຈລະຈາກັບພວກເດຍຣະຖີ ຈຶ່ງປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ນັດໝາຍແລ້ວເຮັດໃຫ້ຄາດເຄື່ອນໄປບໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໒] ພິກຂຸຕ້ອງອາບັດປາຈິດຕິ ຍ້ອນກ່າວຕົວະທັງທີ່ຮູ້ຢູ່

## ເລື້ອງພຣະຫັດຖະກະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໓] ທີ່ຊື່ວ່າ ກ່າວຕົວະທັງທີ່ຮູ້ ໄດ້ແກ່ ວາຈາ ສຽງທີ່ເປ່ງອອກ ຄຳເວົ້າ ວະຈີເພດເຈຕະນາທີ່ໃຫ້ຮູ້ທາງວາຈາຂອງຜູ້ມຸ້ງຈະກ່າວໃຫ້ຜິດຈາກຄວາມຈິງ ໄດ້ແກ່ ຄຳເວົ້າ ຂອງອະນາຣະຍະຊົນ ໘ ຢ່າງ ຄື

໑. ບໍ່ໄດ້ເຫັນ ແຕ່ກ່າວວ່າ ຂ້າພະເຈົ້າໄດ້ເຫັນ
໒. ບໍ່ໄດ້ຍິນ ແຕ່ກ່າວວ່າ ຂ້າພະເຈົ້າໄດ້ຍິນ
໓. ບໍ່ຮູ້ສຶກ ແຕ່ກ່າວວ່າ ຂ້າພະເຈົ້າຮູ້ສຶກ
໔. ບໍ່ຮູ້ ແຕ່ກ່າວວ່າ ຂ້າພະເຈົ້າຮູ້
໕. ໄດ້ເຫັນ ແຕ່ກ່າວວ່າ ຂ້າພະເຈົ້າບໍ່ໄດ້ເຫັນ
໖. ໄດ້ຍິນ ແຕ່ກ່າວວ່າ ຂ້າພະເຈົ້າບໍ່ໄດ້ຍິນ

ໆ. ຮູ້ສຶກ　　ແຕ່ກ່າວວ່າ　ຂ້າພະເຈົ້າບໍ່ຮູ້ສຶກ
໘. ຮູ້　　　ແຕ່ກ່າວວ່າ　ຂ້າພະເຈົ້າບໍ່ຮູ້

## ບົດພາຊະນີ

໑. ທີ່ຊື່ວ່າ ບໍ່ໄດ້ເຫັນ ຄື ບໍ່ໄດ້ເຫັນດ້ວຍຕາ
໒. ທີ່ຊື່ວ່າ ບໍ່ໄດ້ຍິນ ຄື ບໍ່ໄດ້ຍິນດ້ວຍຫູ
໓. ທີ່ຊື່ວ່າ ບໍ່ຮູ້ສຶກ ຄື ບໍ່ໄດ້ສູດດົມດ້ວຍດັງ ບໍ່ໄດ້ຊີມດ້ວຍລີ້ນ ບໍ່ໄດ້ສຳຜັດດ້ວຍກາຍ
໔. ທີ່ຊື່ວ່າ ບໍ່ຮູ້ ຄື ບໍ່ຮູ້ດ້ວຍໃຈ
໕. ທີ່ຊື່ວ່າ ໄດ້ເຫັນ ຄື ໄດ້ເຫັນດ້ວຍຕາ
໖. ທີ່ຊື່ວ່າ ໄດ້ຍິນ ຄື ໄດ້ຍິນດ້ວຍຫູ
ໆ. ທີ່ຊື່ວ່າ ຮູ້ສຶກ ຄື ໄດ້ສູດດົມດ້ວຍດັງ ໄດ້ຊີມດ້ວຍລີ້ນ ໄດ້ສຳຜັດດ້ວຍກາຍ
໘. ທີ່ຊື່ວ່າ ຮູ້ ຄື ຮູ້ດ້ວຍໃຈ

## ອາການກ່າວຕົວະທັງທີ່ຮູ້

### ໑. ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນ

[໔] ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຈິດຕີ

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໔ ຢ່າງ
ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ ຕ້ອງອາບັດປາຈິດຕີ

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໕ ຢ່າງ
ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ ຕ້ອງອາບັດປາຈິດຕີ

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໖ ຢ່າງ
ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ ຕ້ອງອາບັດປາຈິດຕີ

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໗ ຢ່າງ

ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຈິດຕິ

## ໒. ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນ

[໕] ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໓. ບໍ່ຮູ້ສຶກ ແຕ່ກ່າວວ່າຮູ້ສຶກ

ບໍ່ຮູ້ສຶກ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ສຶກແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໔. ບໍ່ຮູ້ ແຕ່ກ່າວວ່າຮູ້

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຈິດຕິ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ໔ ຢ່າງ ຯລຯ ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຈິດຕິ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນແລະໄດ້ຍິນ

[໖] ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນແລະຮູ້ສຶກ

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະຮັບຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນແລະຮູ້

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນ ໄດ້ຍິນ ແລະຮັບຮູ້

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ຍິນແລ້ວ ແລະຮັບຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນ ໄດ້ຍິນແລະຮູ້

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ຍິນແລ້ວ ແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ເຫັນ ແຕ່ກ່າວວ່າໄດ້ເຫັນ ໄດ້ຍິນ ຮັບຮູ້ ແລະຮູ້

ບໍ່ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ຍິນແລ້ວ ຮັບຮູ້ແລ້ວ ແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນແລະຮັບຮູ້

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວແລະຮັບຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນແລະຮູ້

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນແລະໄດ້ເຫັນ

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນ ຮັບຮູ້ ແລະຮູ້

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ ຊາບແລ້ວ ແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນ ຮັບຮູ້ ແລະໄດ້ເຫັນ

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ ຮັບຮູ້ແລ້ວ ແລະໄດ້ ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ໄດ້ຍິນ ແຕ່ກ່າວວ່າໄດ້ຍິນ ຮັບຮູ້ ຮູ້ ແລະໄດ້ເຫັນ

ບໍ່ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນ ຊາບແລ້ວ ຮູ້ແລ້ວ ແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮັບຮູ້ແລະຮູ້

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ແລະໄດ້ເຫັນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ເຫັນແລ້ວ" ດ້ວຍ ອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ແລະໄດ້ຍິນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

ບໍ່ຮູ້ ແຕ່ກ່າວວ່າຮັບຮູ້ ຮູ້ ແລະໄດ້ເຫັນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວ ຮູ້ແລ້ວ ແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຊາບ ຮູ້ ແລະໄດ້ຍິນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວ ຮູ້ແລ້ວ ແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຊາບ ຮູ້ ເຫັນ ແລະໄດ້ຍິນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວ ຮູ້ແລ້ວ ໄດ້ເຫັນແລ້ວ ແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ແລະໄດ້ເຫັນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ແລະໄດ້ຍິນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຊາບແລະຮູ້

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ ໄດ້ເຫັນແລະໄດ້ຍິນ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ແລະໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ບໍ່ຮູ້ ແຕ່ກ່າວວ່າຮູ້ ໄດ້ເຫັນແລະຊາບ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ແລະຊາບແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

ບໍ່ຮູ້ ແຕ່ກ່າວວ່າຮູ້ ໄດ້ເຫັນ ໄດ້ຍິນແລະຊາບ

ບໍ່ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ໄດ້ຍິນແລ້ວ ແລະຊາບແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ໕. ໄດ້ເຫັນ ແຕ່ກ່າວວ່າບໍ່ໄດ້ເຫັນ

[໗] ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຈິດຕີ

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ໄດ້ເຫັນແລ້ວ" ດ້ວຍອາການ ໔ ຢ່າງ ຯລຯ ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ

ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຈິດຕິ

## ໖. ໄດ້ຍິນ ແຕ່ກ່າວວ່າບໍ່ໄດ້ຍິນ

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໗. ຊາບ ແຕ່ກ່າວວ່າບໍ່ຊາບ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ຊາບແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໘. ຮູ້ ແຕ່ກ່າວວ່າບໍ່ຮູ້

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຈິດຕິ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າບໍ່ຮູ້ແລ້ວ" ດ້ວຍອາການ ໔ ຢ່າງ ຯລຯ

ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຄື

(໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກຳລັງກ່າວກໍຮູ້ວ່າກຳລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຈິດຕິ

## ໄດ້ເຫັນ ແຕ່ກ່າວວ່າໄດ້ຍິນ

[໘] ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໄດ້ເຫັນ ແຕ່ກ່າວວ່າຮູ້

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

## ໄດ້ເຫັນ ແຕ່ກ່າວວ່າຮູ້

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຕ້ອງອາບັດປາຈິດຕິ ຯລຯ

ໄດ້ເຫັນ ແຕ່ກ່າວວ່າໄດ້ຍິນແລະຮັບຮູ້

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ເຫັນ ແຕ່ກ່າວວ່າໄດ້ຍິນແລະຮູ້

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ເຫັນ ແຕ່ກ່າວວ່າໄດ້ຍິນ ຊາບແລະຮູ້

ໄດ້ເຫັນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ" ຊາບແລ້ວແລະຮູ້ແລ້ວ ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າຊາບ

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າຮູ້

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າໄດ້ເຫັນ

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າຊາບແລະຮູ້

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວແລະຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າຊາບແລະໄດ້ເຫັນ

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ໆລໆ ຕ້ອງອາບັດປາຈິດຕີ ໆລໆ

## ໄດ້ຍິນ ແຕ່ກ່າວວ່າຊາບ ຮູ້ ແລະໄດ້ເຫັນ

ໄດ້ຍິນ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວ ຮູ້ແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າຮູ້

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າໄດ້ເຫັນ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າໄດ້ຍິນ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າຮູ້ແລະໄດ້ເຫັນ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າຮູ້ແລະໄດ້ຍິນ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຊາບ ແຕ່ກ່າວວ່າຮູ້ ໄດ້ເຫັນ ແລະໄດ້ຍິນ

ຊາບ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຮູ້ ແຕ່ກ່າວວ່າໄດ້ເຫັນ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ" ດ້ວຍອາການ ๓ ຢ່າງ ຯລຯ ຕ້ອງອາບັດປາຈິດຕີ ຯລຯ

## ຮູ້ ແຕ່ກ່າວວ່າໄດ້ຍິນ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ຍິນແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

## ຮູ້ ແຕ່ກ່າວວ່າຮູ້

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

## ຮູ້ ແຕ່ກ່າວວ່າໄດ້ເຫັນແລະໄດ້ຍິນ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

## ຮູ້ ແຕ່ກ່າວວ່າໄດ້ເຫັນແລະຊາບ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະຮັບຮູ້ແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

## ຮູ້ ແຕ່ກ່າວວ່າໄດ້ເຫັນ ໄດ້ຍິນແລະຊາບ

ຮູ້ ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ຍິນແລ້ວແລະຮູ້ແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

## ໄດ້ເຫັນ - ແຕ່ບໍ່ແນ່ໃຈ

[໙] ພິກຂຸບໍ່ແນ່ໃຈສິ່ງທີ່ໄດ້ເຫັນ ກຳນົດສິ່ງທີ່ໄດ້ເຫັນບໍ່ໄດ້ ຈື່ສິ່ງທີ່ໄດ້ເຫັນບໍ່ໄດ້ ຫຼົງລືມສິ່ງທີ່ໄດ້ເຫັນ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວແລະໄດ້ຍິນແລ້ວ" ດ້ວຍອາການ ៣ ຢ່າງ ฯລฯ ຕ້ອງອາບັດປາຈິດຕີ ฯລฯ

ພິກຂຸກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າໄດ້ເຫັນແລ້ວ ໄດ້ຍິນແລ້ວ ຊາບແລ້ວ ແລະຮູ້ແລ້ວ" ຕ້ອງອາບັດປາຈິດຕີ ฯລฯ

## ໄດ້ຍິນ - ແຕ່ບໍ່ແນ່ໃຈ

ພິກຂຸບໍ່ແນ່ໃຈສິ່ງທີ່ໄດ້ຍິນ ກຳນົດສິ່ງທີ່ໄດ້ຍິນບໍ່ໄດ້ ຈື່ສິ່ງທີ່ໄດ້ຍິນບໍ່ໄດ້ ຫຼົງລືມສິ່ງທີ່ໄດ້ຍິນ ฯລฯ

## ຮູ້ ແຕ່ບໍ່ແນ່ໃຈ

ພິກຂຸບໍ່ແນ່ໃຈສິ່ງທີ່ໄດ້ຮູ້ ກໍານົດສິ່ງທີ່ໄດ້ຮູ້ບໍ່ໄດ້ ຈື່ສິ່ງທີ່ໄດ້ຮູ້ບໍ່ໄດ້ ຫຼົງລືມສິ່ງທີ່ໄດ້ຮູ້ ຯລຯ

## ຮູ້ ແຕ່ບໍ່ແນ່ໃຈ ເປັນຕົ້ນ

ພິກຂຸບໍ່ແນ່ໃຈສິ່ງທີ່ໄດ້ຮູ້ ກໍານົດສິ່ງທີ່ໄດ້ຮູ້ບໍ່ໄດ້ ຈື່ສິ່ງທີ່ໄດ້ຮູ້ບໍ່ໄດ້ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ເຫັນແລ້ວ" ດ້ວຍອາການ ໓ ຢ່າງ ຯລຯ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວແລະໄດ້ຍິນແລ້ວ" ຯລຯ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຊາບແລ້ວແລະຮູ້ແລ້ວ" ຯລຯ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ແລະໄດ້ຍິນແລ້ວ" ຯລຯ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ແລະຮູ້ແລ້ວ" ຯລຯ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ໄດ້ຍິນແລ້ວ ແລະຮັບຮູ້ແລ້ວ" ດ້ວຍອາການ ໓ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກໍາລັງກ່າວກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ ຕ້ອງອາບັດປາຈິດຕິ

[໑໐] ພິກຂຸບໍ່ແນ່ໃຈສິ່ງທີ່ໄດ້ຮູ້ ກໍານົດສິ່ງທີ່ໄດ້ຮູ້ບໍ່ໄດ້ ຈື່ສິ່ງທີ່ໄດ້ຮູ້ບໍ່ໄດ້ ຫຼົງລືມສິ່ງທີ່ໄດ້ຮູ້ ກ່າວຕົວະທັງທີ່ຮູ້ວ່າ "ຂ້າພະເຈົ້າຮູ້ແລ້ວ ໄດ້ເຫັນແລ້ວ ໄດ້ຍິນແລ້ວ ແລະຮູ້ແລ້ວ" ດ້ວຍອາການ ໔ ຢ່າງ ຯລຯ ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຄື (໑) ເບື້ອງຕົ້ນທ່ານຮູ້ວ່າຈັກກ່າວຕົວະ (໒) ກໍາລັງກ່າວກໍຮູ້ວ່າກໍາລັງກ່າວຕົວະ (໓) ເມື່ອກ່າວແລ້ວກໍຮູ້ວ່າກ່າວຕົວະແລ້ວ (໔) ເຊື່ອງຄວາມເຫັນ (໕) ເຊື່ອງຄວາມເຫັນຊອບ (໖) ເຊື່ອງຄວາມພໍໃຈ (໗) ເຊື່ອງຄວາມປະສົງ ຕ້ອງອາບັດປາຈິດຕິ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑] ໑. ພິກຂຸກ່າວຜິດ
໒. ພິກຂຸກ່າວພາດ
໓. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ມຸສາວາທະສິກຂາບົດທີ ໑ ຈົບ**

# ໑. ມຸສາວາທະວັກ

## ໘. ໂອມະສະວາທະສິກຂາບົດ

### ວ່າດ້ວຍການກ່າວສຽດສີ

### ເລື້ອງພຣະສັບພັກຄີ

[໑໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພວກພິກຂຸສັບພັກຄີຜິດຖຽງ ກັບພວກພິກຂຸຜູ້ມີສີນດີງາມ ກ່າວສຽດສີພິກຂຸຜູ້ມີສີນດີງາມ ດ່າ ສົບຜະໝາດດ້ວຍຊາດກຳເນີດແດ່ ດ້ວຍຊື່ແດ່ ດ້ວຍຕະກູນແດ່ ດ້ວຍໜ້າທີ່ການງານແດ່ ດ້ວຍສີລະປະວິທະຍາແດ່ ດ້ວຍຄວາມເຈັບໄຂ້ແດ່ ດ້ວຍຮູບລັກສະນະແດ່ ດ້ວຍກິເລດແດ່ ດ້ວຍອາບັດແດ່ ດ້ວຍຄຳດ່າທີ່ຫຍາບແດ່ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງຜິດຖຽງກັບພວກພິກຂຸຜູ້ມີສີນດີງາມ ກ່າວສຽດສີພິກຂຸຜູ້ມີສີນດີງາມ ດ່າ ສົບຜະໝາດດ້ວຍຊາດກຳເນີດແດ່ ດ້ວຍຊື່ແດ່ ດ້ວຍຕະກູນແດ່ ດ້ວຍໜ້າທີ່ການງານແດ່ ດ້ວຍສີລະປະວິທະຍາແດ່ ດ້ວຍຄວາມເຈັບໄຂ້ແດ່ ດ້ວຍຮູບລັກສະນະແດ່ ດ້ວຍກິເລດແດ່ ດ້ວຍອາບັດແດ່ ດ້ວຍຄຳດ່າທີ່ຫຍາບແດ່ແນວນັ້ນນໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຜິດຖຽງກັບພວກພິກຂຸຜູ້ມີສີນດີງາມ ກ່າວສຽດສີພິກຂຸຜູ້ມີສີນດີງາມ ດ່າ ສົບຜະໝາດດ້ວຍຊາດກຳເນີດແດ່ ດ້ວຍຊື່ແດ່ ດ້ວຍຕະກູນແດ່ ດ້ວຍໜ້າທີ່ການງານແດ່ ດ້ວຍສີລະປະວິທະຍາແດ່ ດ້ວຍຄວາມເຈັບໄຂ້ແດ່ ດ້ວຍຮູບລັກສະນະແດ່ ດ້ວຍກິເລດແດ່ ດ້ວຍອາບັດແດ່ ດ້ວຍຄຳດ່າທີ່ຫຍາບແດ່ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງຜິດຖຽງກັບພວກພິກຂຸຜູ້ມີສີນດີງາມ ກ່າວສຽດສີພິກຂຸຜູ້ມີສີນດີງາມ ດ່າ ສົບຜະໝາດດ້ວຍຊາດກຳເນີດແດ່ ດ້ວຍຊື່ແດ່ ດ້ວຍຕະກູນແດ່ ດ້ວຍໜ້າທີ່ການງານແດ່ ດ້ວຍສີລະປະວິທະຍາແດ່ ດ້ວຍຄວາມເຈັບໄຂ້ແດ່ ດ້ວຍຮູບລັກສະນະແດ່ ດ້ວຍກິເລດແດ່ ດ້ວຍອາບັດແດ່ ດ້ວຍຄຳດ່າທີ່ຫຍາບແດ່ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້

ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໗ລ໗" ເມື່ອຊົງຕຳໜິແລ້ວຊົງສະແດງທຳມິກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

## ງົວນັນທິວິສາລະ

[໑໙] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພາມຄົນໜຶ່ງໃນເມືອງຕັກກະສິລາ ມີງົວເຖິກຊື່ນັນທິວິສາລະ ພິກຂຸທັງຫຼາຍ ຄັ້ງນັ້ນແລ ງົວເຖິກຊື່ນັນທິວິສາລະໄດ້ກ່າວກັບພາມນັ້ນດັ່ງນີ້ວ່າ "ທ່ານພາມ ທ່ານຈົ່ງໄປຫຼິ້ນການພະນັນເອົາຊັບ ໑,໐໐໐ ກະຫາປະນະກັບເສດຖີວ່າ ງົວເຖິກຂອງເຮົາຈະແກ່ກວຽນ ໑໐໐ ເຫຼັ້ມທີ່ຜູກຕິດກັນໄປໄດ້

ພິກຂຸທັງຫຼາຍ ໃນບັດນັ້ນ ພາມໄດ້ໄປເຮັດການພະນັນເອົາຊັບ ໑,໐໐໐ ກະຫາປະນະກັບເສດຖີດ້ວຍກ່າວວ່າ "ງົວເຖິກຂອງເຮົາຈະແກ່ກວຽນ ໑໐໐ ເຫຼັ້ມທີ່ຜູກຕິດກັນໄປໄດ້" ພິກຂຸທັງຫຼາຍ ເມື່ອແລ້ວພາມນັ້ນກໍຜູກກວຽນ ໑໐໐ ເຫຼັ້ມທຽມຕິດໃສ່ງົວເຖິກນັນທິວິສາລະ ແລ້ວຈຶ່ງໄດ້ກ່າວດັ່ງນີ້ວ່າ "ເຈົ້າງົວຂີ້ໂກງ ເຈົ້າຈົ່ງດຶງໄປ ເຈົ້າງົວຂີ້ໂກງ ເຈົ້າຈົ່ງລາກໄປ"

ຄັ້ງນັ້ນແລ ງົວເຖິກນັນທິວິສາລະໄດ້ຢືນນິ່ງເສີຍຢູ່ໃນທີ່ນັ້ນ ພາມນັ້ນແພ້ພະນັນ ເສຍຊັບ ໑,໐໐໐ ກະຫາປະນະ ເສົ້າຊືມຍ່າງໄປ

ຕໍ່ມາ ງົວເຖິກນັນທິວິສາລະໄດ້ກ່າວກັບພາມນັ້ນດັ່ງນີ້ວ່າ "ທ່ານພາມ ເຫດໃດທ່ານຈຶ່ງເສົ້າຊືມ

ພາມຕອບວ່າ "ກໍຍ້ອນເຈົ້າເຮັດໃຫ້ເຮົາຕ້ອງແພ້ເສຍຊັບໄປເຖິງ ໑,໐໐໐ ກະຫາປະນະ

ງົວເຖິກນັນທິວິສາລະກ່າວວ່າ "ທ່ານພາມ ທ່ານຮຽກຂ້າພະເຈົ້າຜູ້ບໍ່ໂກງດ້ວຍຄຳວ່າຂີ້ໂກງເຮັດຫຍັງນໍ? ທ່ານຈົ່ງໄປຫຼິ້ນການພະນັນເອົາຊັບ ໒,໐໐໐ ກະຫາປະນະກັບເສດຖີດ້ວຍກ່າວວ່າ ງົວເຖິກຂອງເຮົາຈະແກ່ກວຽນ ໑໐໐ ເຫຼັ້ມທີ່ຜູກຕິດກັນໄປໄດ້ ແຕ່ທ່ານຢ່າຮຽກຂ້າພະເຈົ້າຜູ້ບໍ່ໂກງດ້ວຍຄຳວ່າຂີ້ໂກງເດີ້"

ພາມຈຶ່ງໄປພະນັນເອົາຊັບ ໒,໐໐໐ ກະຫາປະນະກັບເສດຖີດ້ວຍກ່າວວ່າ "ງົວເຖິກຂອງເຮົາຈະແກ່ກວຽນ ໑໐໐ ເຫຼັ້ມທີ່ຜູກຕິດກັນໄປໄດ້" ພິກຂຸທັງຫຼາຍ ເມື່ອແລ້ວພາມນັ້ນກໍຜູກກວຽນ ໑໐໐ ເຫຼັ້ມ ທຽມຕິດໃສ່ງົວນັນທິວິສາລະແລ້ວ ຈຶ່ງໄດ້ກ່າວດັ່ງນີ້ວ່າ "ງົວເຖິກໃຫຍ່ຂອງພໍ່ ເຊີນດຶງໄປ ງົວເຖິກໃຫຍ່ຂອງພໍ່ ເຊີນເຈົ້າແກ່ໄປເທີ້ນ" ຄັ້ງນັ້ນແລ ງົວເຖິກນັນທິວິສາລະໄດ້ແກ່ກວຽນ ໑໐໐ ເຫຼັ້ມທີ່ຜູກຕິດກັນໄປໄດ້ໂດຍບໍ່ຍາກ

ບຸກຄົນເພິ່ງກ່າວແຕ່ຄຳມ່ວນຫູ
ບໍ່ເພິ່ງກ່າວຄຳບໍ່ມ່ວນ ບໍ່ວ່າໃນການໃດ ໆ
ເມື່ອພາມກ່າວຄຳມ່ວນ

ງົວເຖິກນັນທິວິສາລະກໍແກ່ກວຽນໜັກໄປໄດ້
ເຮັດໃຫ້ພາມໄດ້ຊັບ
ງົວເອງກໍດີໃຈທີ່ພາມໄດ້ຊັບ
ຍ້ອນການກະທຳຂອງຕົນນັ້ນ

ພິກຂຸທັງຫຼາຍ ຄຳດ່າ ຄຳສົບຜະໝາດບໍ່ເປັນທີ່ພໍໃຈຂອງເຮົາແມ່ນໃນການນັ້ນ ແລ້ວເປັນຫຍັງໃນບັດນີ້ ຄຳດ່າ ຄຳສົບຜະໝາດຈະເປັນທີ່ພໍໃຈແກ່ເຮົານໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔] ພິກຂຸຕ້ອງອາບັດປາຈິດຕິ ຍ້ອນກ່າວສຽດສີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໑໕] ທີ່ຊື່ວ່າ ກ່າວສຽດສີ ໄດ້ແກ່ ພິກຂຸກ່າວສຽດສີດ້ວຍອາການ ໑໐ ຢ່າງ ຄື (໑) ຊາດກຳເນີດແດ່ (໒) ຊື່ແດ່ (໓) ຕະກູນແດ່ (໔) ໜ້າທີ່ການງານແດ່ (໕) ສິລະປະວິທະຍາແດ່ (໖) ຄວາມເຈັບໄຂ້ແດ່ (໗) ຮູບລັກສະນະແດ່ (໘) ກິເລດແດ່ (໙) ອາບັດແດ່ (໑໐) ຄຳດ່າແດ່

## ບົດພາຊະນີ

ທີ່ຊື່ວ່າ ຊາດກຳເນີດ ໄດ້ແກ່ ຊາດກຳເນີດ ໒ ຢ່າງ ຄື (໑) ຊາດກຳເນີດຕ່ຳ (໒) ຊາດກຳເນີດສູງ

ທີ່ຊື່ວ່າ ຊາດກຳເນີດຕ່ຳ ໄດ້ແກ່ ຊາດກຳເນີດຄົນຈັນທານ ຊາດກຳເນີດຄົນຈັກສານ ຊາດກຳເນີດນາຍພານ ຊາດກຳເນີດຊ່າງລົດ ຊາດກຳເນີດຄົນຖອກຂີ້ເຫຍື່ອ ນີ້ຈັດເປັນຊາດກຳເນີດຕ່ຳ

ທີ່ຊື່ວ່າ ຊາດກຳເນີດສູງ ໄດ້ແກ່ ຊາດກຳເນີດກະສັດ ຊາດກຳເນີດພາມ ນີ້ຈັດເປັນຊາດກຳເນີດສູງ

ທີ່ຊື່ວ່າ ຊື່ ໄດ້ແກ່ ຊື່ ໒ ຢ່າງ ຄື (໑) ຊື່ທີ່ຊົ່ວ (໒) ຊື່ທີ່ດີ

ທີ່ຊື່ວ່າ ຊື່ທີ່ຊົ່ວ ໄດ້ແກ່ ຊື່ອະວະກັນນະກະ ຊື່ຊະວະກັນນະກະ ຊື່ທະນິດຖະກະ ຊື່ສະວິດຖະກະ ຊື່ກຸນວັດຖະກະ ອີກຢ່າງໜຶ່ງ ຊື່ທີ່ເຂົາໃຊ້ເວົ້າເຍາະເຍີ້ຍ ດູຖູກ ກຽດຊັງ ດູໝິ່ນ ບໍ່ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນຊື່ທີ່ຊົ່ວ

ທີ່ຊື່ວ່າ ຊື່ທີ່ດີ ໄດ້ແກ່ ຊື່ທີ່ກ່ຽວກັບພຣະພຸດ ທີ່ກ່ຽວກັບພຣະທຳ ທີ່ກ່ຽວກັບພຣະສົງ ອີກຢ່າງ ໜຶ່ງ ຊື່ທີ່ເຂົາບໍ່ໃຊ້ເວົ້າເຍາະເຍີ້ຍ ບໍ່ດູຖູກ ບໍ່ກຽດຊັງ ບໍ່ດູໝິ່ນ ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນຊື່ທີ່ດີ

ທີ່ຊື່ວ່າ ຕະກູນ ໄດ້ແກ່ ຕະກູນ ໒ ຢ່າງ ຄື (໑) ຕະກູນຊັ້ນຕໍ່າ (໒) ຕະກູນຊັ້ນສູງ

ທີ່ຊື່ວ່າ ຕະກູນຊັ້ນຕໍ່າ ໄດ້ແກ່ ຕະກູນໂກຊິຍະ ຕະກູນພາຣະທະວາຊະ ອີກຢ່າງໜຶ່ງ ຕະກູນທີ່ເຂົາເຍາະເຍີ້ຍ ດູຖູກ ກຽດຊັງ ດູໝິ່ນ ບໍ່ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນຕະກູນຊັ້ນຕໍ່າ

ທີ່ຊື່ວ່າ ຕະກູນຊັ້ນສູງ ໄດ້ແກ່ ຕະກູນໂຄຕະມະ ຕະກູນໂມກຄັນລານະ ຕະກູນກັດຈາຍະນະ ຕະກູນວາເສດຖະ ອີກຢ່າງໜຶ່ງ ຕະກູນທີ່ເຂົາບໍ່ເຍາະເຍີ້ຍ ບໍ່ດູຖູກ ບໍ່ກຽດຊັງ ບໍ່ດູໝິ່ນ ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນຕະກູນຊັ້ນສູງ

ທີ່ຊື່ວ່າ ໜ້າທີ່ການງານ ໄດ້ແກ່ ໜ້າທີ່ການງານ ໒ ຢ່າງ ຄື (໑) ໜ້າທີ່ການງານຊັ້ນຕໍ່າ (໒) ໜ້າທີ່ການງານຊັ້ນສູງ

ທີ່ຊື່ວ່າ ໜ້າທີ່ການງານຊັ້ນຕໍ່າ ໄດ້ແກ່ ງານຊ່າງຖາກໄມ້ ງານຖອກຂີ້ເຫຍື່ອ ອີກຢ່າງໜຶ່ງ ການງານທີ່ເຂົາເຍາະເຍີ້ຍ ດູຖູກ ກຽດຊັງ ດູໝິ່ນ ບໍ່ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນການງານຊັ້ນຕໍ່າ

ທີ່ຊື່ວ່າ ໜ້າທີ່ການງານຊັ້ນສູງ ໄດ້ແກ່ ເຮັດນາ ຄ້າຂາຍ ລ້ຽງງົວ ອີກຢ່າງໜຶ່ງ ການງານທີ່ເຂົາບໍ່ເຍາະເຍີ້ຍ ບໍ່ດູຖູກ ບໍ່ກຽດຊັງ ບໍ່ດູໝິ່ນ ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນການງານຊັ້ນສູງ

ທີ່ຊື່ວ່າ ສິລະປະວິທະຍາ ໄດ້ແກ່ ສິລະປະວິທະຍາ ໒ ຢ່າງ ຄື (໑) ສິລະປະວິທະຍາຊັ້ນຕໍ່າ (໒) ສິລະປະວິທະຍາຊັ້ນສູງ

ທີ່ຊື່ວ່າ ສິລະປະວິທະຍາຊັ້ນຕໍ່າ ໄດ້ແກ່ ວິຊາຊ່າງຈັກສານ ວິຊາຊ່າງໝໍ້ ວິຊາຊ່າງຫູກ ວິຊາຊ່າງໜັງ ວິຊາຊ່າງຕັດຜົມ ອີກຢ່າງໜຶ່ງ ສິລະປະວິທະຍາທີ່ເຂົາເຍາະເຍີ້ຍ ດູຖູກ ກຽດຊັງ ດູໝິ່ນບໍ່ນັບຖືກັນໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນສິລະປະວິທະຍາຊັ້ນຕໍ່າ

ທີ່ຊື່ວ່າ ສິລະປະວິທະຍາຊັ້ນສູງ ໄດ້ແກ່ ວິຊານັບ ວິຊາຄິດໄລ່ ວິຊາຂຽນ ອີກຢ່າງໜຶ່ງ ສິລະປະວິທະຍາທີ່ເຂົາບໍ່ເຍາະເຍີ້ຍ ບໍ່ດູຖູກ ບໍ່ກຽດຊັງ ບໍ່ດູໝິ່ນ ນັບຖືກັນ ໃນທ້ອງຖິ່ນນັ້ນ ໆ ນີ້ຈັດເປັນສິລະປະວິທະຍາຊັ້ນສູງ

ຄວາມເຈັບໄຂ້ ທຸກຊະນິດຈັດເປັນສິ່ງທີ່ຊົ່ວ ຍົກເວັ້ນໂຣກເບົາຫວານ ຈັດເປັນໂຣກທີ່ດີ

ທີ່ຊື່ວ່າ ຮູບລັກສະນະ ໄດ້ແກ່ ຮູບລັກສະນະ ໒ ຢ່າງ ຄື (໑) ຮູບລັກສະນະທີ່ຊົ່ວ (໒) ຮູບລັກສະນະທີ່ດີ

ທີ່ຊື່ວ່າ ຮູບລັກສະນະທີ່ຊົ່ວ ຄື ສູງເກີນໄປ ເຕ້ຍເກີນໄປ ດຳເກີນໄປ ຂາວເກີນໄປ ນີ້ຈັດເປັນຮູບລັກສະນະທີ່ຊົ່ວ

ທີ່ຊື່ວ່າ ຮູບລັກສະນະທີ່ດີ ຄື ບໍ່ສູງຫຼາຍ ບໍ່ເຕ້ຍຫຼາຍ ບໍ່ດຳຫຼາຍ ບໍ່ຂາວຫຼາຍ ຈົບງາມ ນີ້ຈັດເປັນຮູບລັກສະນະທີ່ດີ

ກິເລດ ທັງປວງ ຊື່ວ່າຊົ່ວ

ອາບັດ (ໂທດທາງພຣະວິໄນ) ທຸກຢ່າງເປັນເລື້ອງທີ່ຊົ່ວ ແຕ່ໂສດາບັດ (ການເຂົ້າເຖິງກະແສທຳ) ສະມາບັດ (ການເຂົ້າຊານ) ເປັນເລື້ອງທີ່ດີ

ທີ່ຊື່ວ່າ ຄຳດ່າ ໄດ້ແກ່ ຄຳດ່າ ໒ ຢ່າງ ຄື (໑) ຄຳດ່າຫຍາບ (໒) ຄຳດ່າສຸພາບ

ທີ່ຊື່ວ່າ ຄຳດ່າຫຍາບ ໄດ້ແກ່ ຄຳດ່າວ່າ ທ່ານເປັນອູດ ທ່ານເປັນແບ້ ທ່ານເປັນງົວ ທ່ານເປັນລາ ທ່ານເປັນສັດເດຍຣັດສານ ທ່ານເປັນສັດນະຮົກ ທ່ານບໍ່ມີສຸກຄະຕິ ຫວັງໄດ້ແຕ່ທຸກຄະຕິເທົ່ານັ້ນ ຄຳດ່າທີ່ກ່ຽວກັບການຮ່ວມປະເວນີ ຫຼື ຄຳດ່າທີ່ກ່ຽວກັບອະໄວຍະວະຂອງຊາຍຍິງ ນີ້ຈັດເປັນຄຳດ່າຫຍາບ

ທີ່ຊື່ວ່າ ຄຳດ່າສຸພາບ ໄດ້ແກ່ ຄຳດ່າວ່າ ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ ນີ້ຈັດເປັນຄຳດ່າສຸພາບ

## ອຸປະສຳບັນກ່າວສຽດສີອຸປະສຳບັນ

### ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໑໗] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຄົນຈັນທານ ກັບອຸປະສຳບັນຜູ້ເປັນຄົນຈັກສານ ກັບອຸປະສຳບັນຜູ້ເປັນນາຍພານ ກັບອຸປະສຳບັນຜູ້ເປັນຊ່າງລົດ ກັບອຸປະສຳບັນຜູ້ເປັນຄົນຖອກຂີ້ເຫຍື່ອວ່າ "ທ່ານເປັນຄົນຈັນທານ ທ່ານເປັນຄົນຈັກສານ ທ່ານເປັນນາຍພານ ທ່ານເປັນຊ່າງລົດ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຊາດກຳເນີດສູງດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນກະສັດ ກັບອຸປະສຳບັນຜູ້ເປັນພາມວ່າ "ທ່ານເປັນຄົນຈັນທານ ທ່ານເປັນຄົນຈັກສານ ທ່ານເປັນນາຍພານ ທ່ານເປັນຊ່າງລົດ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

### ກ່າວສຽດສີດ້ວຍຊາດກຳເນີດສູງ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດສູງ ຄື ກ່າວ

ກັບອຸປະສຳບັນຜູ້ເປັນຈັນທານ ກັບອຸປະສຳບັນຜູ້ເປັນຄົນຈັກສານ ກັບອຸປະສຳບັນຜູ້ເປັນນາຍພານ ກັບອຸປະສຳບັນຜູ້ເປັນຊ່າງລົດ ກັບອຸປະສຳບັນຜູ້ເປັນຄົນຖອກຂີ້ເຫຍື່ອວ່າ "ທ່ານກະສັດທ່ານພາມ" ຕ້ອງອາບັດປາ ຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຊາດກຳເນີດສູງດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດສູງ ຄື ກ່າວກັບອຸປະສຳບັນຜູ້ເປັນກະສັດ ກັບອຸປະສຳບັນຜູ້ເປັນພາມວ່າ "ທ່ານກະສັດ ທ່ານພາມ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໘. ກ່າວສຽດສີດ້ວຍຊື່ທີ່ຊົ່ວ

[໑໗] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຊື່ຊົ່ວດ້ວຍຊື່ທີ່ຊົ່ວ ຄື ກ່າວກັບອຸປະສຳບັນ ຊື່ອະວະກັນນະກະ ກັບອຸປະສຳບັນຊື່ຊະວະກັນນະກະ ກັບອຸປະສຳບັນຊື່ທະນິດຖະກະ ກັບອຸປະສຳບັນຊື່ສະວິດຖະກະ ກັບອຸປະສຳບັນຊື່ກຸນວັດຖະກະວ່າ "ທ່ານອະວະກັນນະກະ ທ່ານຊະວະກັນນະກະ ທ່ານທະນິດຖະກະ ທ່ານສະວິດຖະກະ ທ່ານກຸນວັດຖະກະ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນ ເກີ້ເຂີນ ກ່າວກັບອຸປະສຳບັນມີຊື່ທີ່ດີດ້ວຍຊື່ທີ່ຊົ່ວ ຄື ກ່າວກັບອຸປະສຳບັນຊື່ພຸດທະຣັກຂິຕະ ກັບອຸປະສຳບັນຊື່ທຳມະຣັກຂິຕະ ກັບອຸປະສຳບັນຊື່ສັງຄະຣັກຂິຕະວ່າ "ທ່ານອະວະກັນນະກະ ທ່ານຊະວະກັນນະກະ ທ່ານທະນິດຖະກະ ທ່ານສະວິດຖະກະ ທ່ານກຸນວັດຖະກະ" ຕ້ອງອາບັດປາຈິດຕິ ທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຊື່ທີ່ດີ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນ ເກີ້ເຂີນ ກ່າວກັບອຸປະສຳບັນມີຊື່ທີ່ຊົ່ວດ້ວຍຊື່ທີ່ດີ ຄື ກ່າວກັບອຸປະສຳບັນຊື່ອະວະກັນນະກະ ກັບອຸປະສຳບັນຊື່ຊະວະກັນນະກະ ກັບອຸປະສຳບັນຊື່ທະນິດຖະກະ ກັບອຸປະສຳບັນຊື່ສະວິດຖະກະ ກັບອຸປະສຳບັນຊື່ກຸນວັດຖະກະວ່າ "ທ່ານພຸດທະຣັກຂິຕະ ທ່ານທຳມະຣັກຂິຕະ ທ່ານສັງຄະຣັກຂິຕະ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຊື່ທີ່ດີດ້ວຍຊື່ທີ່ດີ ຄື ກ່າວກັບອຸປະສຳບັນຊື່ພຸດທະຣັກຂິຕະ ກັບອຸປະສຳບັນຊື່ທຳມະຣັກຂິຕະ ກັບອຸປະສຳບັນຊື່ສັງຄະຣັກຂິຕະວ່າ "ທ່ານພຸດທະຣັກຂິຕະ ທ່ານທຳມະຣັກຂິຕະ ທ່ານສັງຄະຣັກຂິຕະ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ៣. ກ່າວສຽດສີດ້ວຍຕະກູນຊັ້ນຕ່ຳ

[໑໙] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຕະກູນຊັ້ນຕ່ຳດ້ວຍ (ຄຳບົ່ງເຖິງ) ຕະກູນຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຕະກູນໂກຊິຍະ ກັບອຸປະສຳບັນຕະກູນພາຣະທະວາຊະວ່າ "ທ່ານເປັນຄົນຕະກູນໂກຊິຍະ ທ່ານເປັນຄົນຕະກູນພາຣະທະວາຊະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຕະກູນຊັ້ນສູງດ້ວຍ (ຄຳບົ່ງເຖິງ) ຕະກູນຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຕະກູນໂຄຕະມະ ກັບອຸປະສຳບັນຕະກູນໂມກຄັນລານະ ກັບອຸປະສຳບັນຕະກູນ ກັດຈາຍະນະ ກັບອຸປະສຳບັນຕະກູນວາເສດຖະວ່າ "ທ່ານເປັນຄົນຕະກູນໂກຊິຍະ ທ່ານເປັນຄົນຕະກູນພາຣະທະວາຊະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຕະກູນຊັ້ນສູງ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຕະກູນຊັ້ນຕ່ຳດ້ວຍ (ຄຳບົ່ງເຖິງ) ຕະກູນຊັ້ນສູງ ຄື ກ່າວກັບອຸປະສຳບັນຕະກູນໂກຊິຍະ ກັບອຸປະສຳບັນຕະກູນພາຣະທະວາຊະວ່າ "ທ່ານເປັນຄົນຕະກູນໂຄຕະມະ ທ່ານເປັນຄົນຕະກູນໂມກຄັນລານະ ທ່ານເປັນຄົນຕະກູນກັດຈາຍະນະ ທ່ານເປັນຄົນຕະກູນວາເສດຖະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຕະກູນຊັ້ນສູງດ້ວຍ(ຄຳບົ່ງເຖິງ)ຕະກູນຊັ້ນສູງ ຄື ກ່າວ ກັບອຸປະສຳບັນຕະກູນໂຄຕະມະ ກັບອຸປະສຳບັນຕະກູນໂມກຄັນລານະ ກັບອຸປະສຳບັນຕະກູນກັດຈາຍະນະກັບອຸປະສຳບັນຕະກູນວາເສດຖະວ່າ "ທ່ານເປັນຄົນຕະກູນໂຄຕະມະ ທ່ານເປັນຄົນຕະກູນໂມກຄັນລານະ ທ່ານເປັນຄົນຕະກູນກັດຈາຍະນະ ທ່ານເປັນຄົນຕະກູນວາເສດຖະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໔. ກ່າວສຽດສີດ້ວຍໜ້າທີ່ການງານຊັ້ນຕ່ຳ

[໑໙] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີໜ້າທີ່ການງານຊັ້ນຕ່ຳດ້ວຍ (ຄຳບົ່ງເຖິງ) ໜ້າທີ່ການງານຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງຖາກໄມ້ ກັບອຸປະສຳບັນຜູ້ເປັນຄົນຖອກຂີ້ເຫຍື່ອ ວ່າ "ທ່ານເປັນຊ່າງຖາກໄມ້ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີໜ້າທີ່ການງານຊັ້ນສູງດ້ວຍ (ຄຳບົ່ງເຖິງ) ໜ້າທີ່ການງານ ຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຊາວນາ ກັບອຸປະສຳບັນຜູ້ເປັນພໍ່ຄ້າ ກັບອຸປະສຳບັນ ຜູ້ເປັນຄົນລ້ຽງງົວວ່າ “ທ່ານເປັນຊ່າງຖາກໄມ້ ທ່ານເປັນຄົນຖອກຂີ້ເຫຍື່ອ” ຕ້ອງອາບັດປາຈິດຕິ ທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍໜ້າທີ່ການງານຊັ້ນສູງ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີໜ້າທີ່ການງານຊັ້ນຕ່ຳດ້ວຍ (ຄຳບົ່ງເຖິງ) ໜ້າທີ່ການງານຊັ້ນສູງ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງຖາກໄມ້ ກັບອຸປະສຳບັນຜູ້ເປັນຄົນຖອກຂີ້ເຫຍື່ອວ່າ “ທ່ານ ເປັນຊາວນາ ທ່ານເປັນພໍ່ຄ້າ ທ່ານເປັນຄົນລ້ຽງງົວ” ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີໜ້າທີ່ການງານຊັ້ນສູງດ້ວຍ (ຄຳບົ່ງເຖິງ) ໜ້າທີ່ການງານຊັ້ນສູງ ຄື ກ່າວກັບອຸປະສຳບັນຜູ້ເປັນຊາວນາ ກັບອຸປະສຳບັນຜູ້ເປັນພໍ່ຄ້າ ກັບອຸປະສຳບັນຜູ້ເປັນຄົນລ້ຽງງົວວ່າ “ທ່ານເປັນຊາວນາ ທ່ານເປັນພໍ່ຄ້າ ທ່ານເປັນຄົນລ້ຽງງົວ” ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໕. ກ່າວສຽດສີດ້ວຍສິລະປະວິທະຍາຊັ້ນຕ່ຳ

[໔໐] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີສິລະປະວິທະຍາຊັ້ນຕ່ຳດ້ວຍ (ຄຳບົ່ງເຖິງ) ສິລະປະວິທະຍາຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງຈັກສານ ກັບອຸປະສຳບັນຜູ້ເປັນຊ່າງໝໍ້ ກັບອຸປະສຳບັນຜູ້ເປັນຊ່າງຫູກ ກັບອຸປະສຳບັນຜູ້ເປັນຊ່າງໜັງ ກັບອຸປະສຳບັນຜູ້ເປັນຊ່າງຕັດຜົມວ່າ “ທ່ານເປັນຊ່າງຈັກສານ ທ່ານເປັນຊ່າງໝໍ້ ທ່ານເປັນຊ່າງຫູກ ທ່ານເປັນຊ່າງໜັງ ທ່ານເປັນຊ່າງຕັດຜົມ” ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີສິລະປະວິທະຍາຊັ້ນສູງດ້ວຍ (ຄຳບົ່ງເຖິງ) ສິລະປະວິທະຍາຊັ້ນຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງນັບ ກັບອຸປະສຳບັນຜູ້ເປັນນັກຄິດໄລ່ ກັບອຸປະສຳບັນຜູ້ເປັນນັກຂຽນວ່າ “ທ່ານເປັນຊ່າງຈັກສານ ທ່ານເປັນຊ່າງໝໍ້ ທ່ານເປັນຊ່າງຫູກ ທ່ານເປັນ ຊ່າງໜັງ ທ່ານເປັນຊ່າງຕັດຜົມ” ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍສິລະປະວິທະຍາຊັ້ນສູງ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳ

ບັນເກີ້ເຂີນ ກ່າວກັບອຸປະສຳບັນມີສິລະປະວິທະຍາຊັ້ນຕ່ຳດ້ວຍ (ຄຳບິ່ງເຖິງ) ສິລະປະວິທະຍາຊັ້ນສູງ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງຈັກສານ ກັບອຸປະສຳບັນຜູ້ເປັນຊ່າງໝໍ້ ກັບອຸປະສຳບັນຜູ້ເປັນຊ່າງຫູກ ກັບອຸປະສຳບັນຜູ້ເປັນຊ່າງໜັງ ກັບອຸປະສຳບັນຜູ້ເປັນຊ່າງຕັດຜົມວ່າ "ທ່ານເປັນຊ່າງນັບ ທ່ານເປັນນັກຄິດໄລ່ ທ່ານເປັນນັກຂຽນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນ ເກີ້ເຂີນ ກ່າວກັບອຸປະສຳບັນມີສິລະປະວິທະຍາຊັ້ນສູງດ້ວຍ (ຄຳບິ່ງເຖິງ) ສິລະປະວິທະຍາຊັ້ນສູງ ຄື ກ່າວກັບອຸປະສຳບັນຜູ້ເປັນຊ່າງນັບ ກັບອຸປະສຳບັນຜູ້ເປັນນັກຄິດໄລ່ ກັບອຸປະສຳບັນຜູ້ເປັນນັກຂຽນ ວ່າ "ທ່ານເປັນຊ່າງນັບ ທ່ານເປັນນັກຄິດໄລ່ ທ່ານເປັນນັກຂຽນ" ຕ້ອງອາບັດປາຈິດຕິ ທຸກ ໆ ຄຳເວົ້າ

## ໖. ກ່າວສຽດສີດ້ວຍຄວາມເຈັບໄຂ້

[໔໑] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ເປັນໂຣກທີ່ຊົ່ວດ້ວຍ(ຄຳບິ່ງເຖິງ)ໂຣກທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ເປັນໂຣກຂີ້ທູດ ກັບອຸປະສຳບັນຜູ້ເປັນໂຣກຝີ ກັບອຸປະສຳບັນຜູ້ເປັນໂຣກກາກ ກັບອຸປະສຳບັນຜູ້ເປັນໂຣກມອງຄໍ່ ກັບອຸປະສຳບັນຜູ້ເປັນໂຣກລົມບ້າໝູວ່າ "ທ່ານ ເປັນໂຣກຂີ້ທູດ ທ່ານເປັນໂຣກຝີ ທ່ານເປັນໂຣກກາກ ທ່ານເປັນໂຣກມອງຄໍ່ ທ່ານເປັນໂຣກລົມບ້າໝູ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ ເຂີນ ກ່າວກັບອຸປະສຳບັນຜູ້ເປັນໂຣກທີ່ດີດ້ວຍ (ຄຳບິ່ງເຖິງ) ໂຣກທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ເປັນໂຣກເບົາຫວານວ່າ "ທ່ານເປັນໂຣກຂີ້ທູດ ທ່ານເປັນໂຣກຝີ ທ່ານເປັນໂຣກກາກ ທ່ານເປັນໂຣກມອງຄໍ່ ທ່ານເປັນໂຣກລົມບ້າໝູ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ເປັນໂຣກທີ່ຊົ່ວດ້ວຍ (ຄຳບິ່ງເຖິງ) ໂຣກທີ່ດີ ຄື ກ່າວກັບອຸປະສຳບັນຜູ້ເປັນໂຣກຂີ້ທູດ ກັບອຸປະສຳບັນຜູ້ເປັນໂຣກຝີ ກັບອຸປະສຳບັນຜູ້ເປັນໂຣກກາກ ກັບອຸປະສຳບັນຜູ້ເປັນໂຣກມອງຄໍ່ ກັບອຸປະສຳບັນຜູ້ເປັນໂຣກລົມບ້າໝູວ່າ "ທ່ານເປັນໂຣກເບົາຫວານ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ເປັນໂຣກທີ່ດີດ້ວຍ (ຄຳບິ່ງເຖິງ) ໂຣກທີ່ດີ ຄື ກ່າວກັບ ອຸປະສຳບັນຜູ້ເປັນໂຣກເບົາຫວານວ່າ "ທ່ານເປັນໂຣກເບົາຫວານ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ກ. ກ່າວສຽດສີດ້ວຍຮູບລັກສະນະທີ່ຊົ່ວ

[໔໔] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຮູບລັກສະນະທີ່ຊົ່ວດ້ວຍ (ຄຳບົ່ງເຖິງ) ຮູບລັກສະນະທີ່ຊົ່ວ

ຄື ກ່າວກັບອຸປະສຳບັນຜູ້ສູງເກີນໄປ ກັບອຸປະສຳບັນຜູ້ເຕ້ຍເກີນໄປ ກັບອຸປະສຳບັນຜູ້ດຳເກີນໄປ ກັບອຸປະສຳບັນຜູ້ຂາວເກີນໄປວ່າ "ທ່ານເປັນຄົນສູງເກີນໄປ ທ່ານເປັນຄົນເຕ້ຍເກີນໄປ ທ່ານເປັນຄົນດຳເກີນໄປ ທ່ານເປັນຄົນຂາວເກີນໄປ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຮູບລັກສະນະທີ່ດີດ້ວຍ (ຄຳບົ່ງເຖິງ) ຮູບລັກສະນະທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ບໍ່ສູງຫຼາຍ ກັບອຸປະສຳບັນຜູ້ບໍ່ເຕ້ຍຫຼາຍ ກັບອຸປະສຳບັນຜູ້ບໍ່ດຳຫຼາຍ ກັບອຸປະສຳບັນຜູ້ບໍ່ຂາວຫຼາຍວ່າ "ທ່ານເປັນຄົນສູງເກີນໄປ ທ່ານເປັນຄົນເຕ້ຍເກີນໄປ ທ່ານເປັນຄົນດຳເກີນໄປ ທ່ານເປັນຄົນຂາວເກີນໄປ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຮູບລັກສະນະທີ່ດີ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຮູບລັກສະນະທີ່ຊົ່ວດ້ວຍ (ຄຳບົ່ງເຖິງ) ຮູບລັກສະນະທີ່ດີ ຄື ກ່າວກັບອຸປະສຳບັນຜູ້ສູງເກີນໄປ ກັບອຸປະສຳບັນຜູ້ເຕ້ຍເກີນໄປ ກັບອຸປະສຳບັນຜູ້ດຳເກີນໄປ ກັບອຸປະສຳບັນຜູ້ຂາວເກີນໄປວ່າ "ທ່ານເປັນຄົນບໍ່ສູງຫຼາຍ ທ່ານເປັນຄົນບໍ່ເຕ້ຍຫຼາຍ ທ່ານເປັນຄົນບໍ່ດຳຫຼາຍ ທ່ານເປັນຄົນບໍ່ຂາວຫຼາຍ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຮູບລັກສະນະທີ່ດີດ້ວຍ (ຄຳບົ່ງເຖິງ) ຮູບລັກສະນະທີ່ດີ ຄື ກ່າວກັບອຸປະສຳບັນຜູ້ບໍ່ສູງເກີນໄປ ກັບອຸປະສຳບັນຜູ້ບໍ່ເຕ້ຍເກີນໄປ ກັບອຸປະສຳບັນຜູ້ບໍ່ດຳເກີນໄປ ກັບອຸປະສຳບັນຜູ້ບໍ່ຂາວເກີນໄປວ່າ "ທ່ານເປັນຄົນບໍ່ສູງຫຼາຍ ທ່ານເປັນຄົນບໍ່ເຕ້ຍຫຼາຍ ທ່ານເປັນຄົນບໍ່ດຳຫຼາຍ ທ່ານເປັນຄົນບໍ່ຂາວຫຼາຍ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ຖ. ກ່າວສຽດສີດ້ວຍກິເລດ

[໔໖] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີກິເລດທີ່ຊົ່ວດ້ວຍ (ຄຳບົ່ງເຖິງ) ກິເລດທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ຖືກຣາຄະກຸ້ມລຸມ ກັບອຸປະສຳບັນຜູ້ຖືກໂທສະກຸ້ມລຸມ ກັບອຸປະສຳບັນຜູ້ຖືກໂມຫະກຸ້ມລຸມວ່າ "ທ່ານເປັນຜູ້ຖືກຣາຄະກຸ້ມລຸມ ທ່ານເປັນຜູ້ຖືກໂທສະກຸ້ມລຸມ ທ່ານເປັນຜູ້ຖືກໂມຫະກຸ້ມລຸມ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີພາວະຂາດກິເລດດ້ວຍ (ຄຳບໍ່ງເຖິງ) ກິເລດທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ປາສະຈາກຣາຄະ ກັບອຸປະສຳບັນຜູ້ປາສະຈາກໂທສະ ກັບອຸປະສຳບັນຜູ້ປາສະຈາກໂມຫະວ່າ "ທ່ານເປັນຜູ້ຖືກຣາຄະກຸ້ມລຸມ ທ່ານເປັນຜູ້ຖືກໂທສະກຸ້ມລຸມ ທ່ານເປັນຜູ້ຖືກໂມຫະກຸ້ມລຸມ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີກິເລດທີ່ຊົ່ວດ້ວຍ(ຄຳບໍ່ງເຖິງ)ພາວະຂາດກິເລດ ຄື ກ່າວກັບອຸປະສຳບັນຜູ້ຖືກຣາຄະກຸ້ມລຸມ ກັບອຸປະສຳບັນຜູ້ຖືກໂທສະກຸ້ມລຸມ ກັບອຸປະສຳບັນຜູ້ຖືກໂມຫະກຸ້ມລຸມວ່າ "ທ່ານເປັນຜູ້ປາສະຈາກຣາຄະ ທ່ານເປັນຜູ້ປາສະຈາກໂທສະ ທ່ານເປັນຜູ້ປາສະຈາກໂມຫະ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີພາວະຂາດກິເລດດ້ວຍ (ຄຳບໍ່ງເຖິງ) ພາວະຂາດກິເລດ ຄື ກ່າວກັບອຸປະສຳບັນຜູ້ປາສະຈາກຣາຄະ ກັບອຸປະສຳບັນຜູ້ປາສະຈາກໂທສະ ກັບອຸປະສຳບັນຜູ້ປາສະຈາກໂມຫະວ່າ "ທ່ານເປັນຜູ້ປາສະຈາກຣາຄະ ທ່ານເປັນຜູ້ປາສະຈາກໂທສະ ທ່ານເປັນຜູ້ປາສະຈາກໂມຫະ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໗. ກ່າວສຽດສີດ້ວຍອາບັດ

[໔໘] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນທີ່ຊົ່ວດ້ວຍເລື້ອງທີ່ຊົ່ວ ຄື ກ່າວກັບອຸປະສຳບັນຜູ້ຕ້ອງອາບັດປາຣາຊິກ ກັບອຸປະສຳບັນຜູ້ຕ້ອງອາບັດສັງຄາທິເສດ ກັບອຸປະສຳບັນຜູ້ຕ້ອງອາບັດຖຸນລັດໄຈ ກັບອຸປະສຳບັນຜູ້ຕ້ອງອາບັດປາຈິດຕິ ກັບອຸປະສຳບັນຜູ້ຕ້ອງອາບັດປະຕິເທສະນີຍະກັບອຸປະສຳບັນຜູ້ຕ້ອງອາບັດທຸກກົດ ກັບອຸປະສຳບັນຜູ້ຕ້ອງອາບັດທຸບພາສິດວ່າ "ທ່ານຕ້ອງອາບັດປາຣາຊິກ ທ່ານຕ້ອງອາບັດສັງຄາທິເສດ ທ່ານຕ້ອງອາບັດຖຸນລັດໄຈ ທ່ານຕ້ອງອາບັດປາຈິດຕິ ທ່ານຕ້ອງອາບັດປະຕິເທສະນີຍະ ທ່ານຕ້ອງອາບັດທຸກກົດ ທ່ານຕ້ອງອາບັດທຸບພາສິດ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຄຸນນະທຳສູງດ້ວຍເລື້ອງທີ່ຊົ່ວ ຄື ກ່າວກັບອຸປະສຳບັນ ຜູ້ເປັນໂສດາບັນວ່າ "ທ່ານຕ້ອງອາບັດປາຣາຊິກ ຯລຯ ທ່ານຕ້ອງອາບັດທຸບພາສິດ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນທີ່ຊົ່ວດ້ວຍ (ຄຳບົ່ງເຖິງ) ຄຸນນະທຳສູງ ຄື ກ່າວກັບອຸປະສຳບັນຜູ້ຕ້ອງອາບັດປາຣາຊິກ ໗ລ໗ ອຸປະສຳບັນຜູ້ຕ້ອງອາບັດທຸບພາຊິດວ່າ "ທ່ານເປັນໂສດາບັນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຄຸນນະທຳຊັ້ນສູງດ້ວຍ (ຄຳບົ່ງເຖິງ) ຄຸນນະທຳຊັ້ນສູງ ຄື ກ່າວກັບອຸປະສຳບັນຜູ້ເປັນໂສດາບັນວ່າ "ທ່ານເປັນໂສດາບັນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໑໐. ກ່າວສຽດສີດ້ວຍຄຳດ່າຫຍາບ

[໔໕] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນມີຄວາມປະພຶດຊົ່ວດ້ວຍຄຳດ່າທີ່ຫຍາບ ຄື ກ່າວກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງອູດ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງແບ້ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງງົວ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງລາ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງສັດເດຍຣັດສານ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງສັດນະຮົກວ່າ "ທ່ານເປັນອູດ ທ່ານເປັນແບ້ ທ່ານເປັນງົວ ທ່ານເປັນລາ ທ່ານເປັນສັດເດຍຣັດສານ ທ່ານເປັນສັດນະຮົກ ທ່ານບໍ່ມີສຸກຄະຕິ ຫວັງໄດ້ພຽງທຸກຄະຕິເທົ່ານັ້ນ" ຕ້ອງອາບັດປາຈິດຕິ ທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຄຸນສົມບັດຊັ້ນສູງດ້ວຍຄຳດ່າທີ່ຫຍາບ ຄື ກ່າວກັບອຸປະສຳບັນຜູ້ເປັນບັນດິດ ກັບອຸປະສຳບັນຜູ້ສະຫຼາດ ກັບອຸປະສຳບັນຜູ້ເປັນນັກປາດ ກັບອຸປະສຳບັນຜູ້ເປັນພະຫູສູດ ກັບອຸປະສຳບັນຜູ້ເປັນທຳມະກະຖຶກວ່າ "ທ່ານເປັນອູດ ທ່ານເປັນແບ້ ທ່ານເປັນງົວ ທ່ານເປັນລາ ທ່ານເປັນສັດເດຍຣັດສານ ທ່ານເປັນສັດນະຮົກ ທ່ານບໍ່ມີສຸກຄະຕິ ຫວັງໄດ້ພຽງທຸກຄະຕິເທົ່ານັ້ນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ກ່າວສຽດສີເຍາະເຍີ້ຍດ້ວຍຄຳດ່າສຸພາບ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຄວາມປະພຶດຊົ່ວດ້ວຍຄຳດ່າສຸພາບ ຄື ກ່າວກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງອູດ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງແບ້ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງງົວ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງລາ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງສັດເດຍຣັດສານ ກັບອຸປະສຳບັນຜູ້ມີຄວາມປະພຶດດັ່ງສັດນະຮົກວ່າ "ທ່ານເປັນບັນດິດ ທ່ານເປັນຄົນ

ສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາ ບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວກັບອຸປະສຳບັນຜູ້ມີຄຸນສົມບັດສູງດ້ວຍຄຳດ່າສຸພາບ ຄື ກ່າວກັບອຸປະສຳບັນຜູ້ເປັນບັນດິດ ກັບອຸປະສຳບັນຜູ້ສະຫຼາດ ກັບອຸປະສຳບັນຜູ້ເປັນນັກປາດ ກັບອຸປະສຳບັນຜູ້ເປັນພະຫູສູດ ກັບອຸປະສຳບັນຜູ້ເປັນທຳມະກະຖຶກວ່າ "ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໔໖] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຊາດກຳເນີດສູງ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນກະສັດ ເປັນພາມ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ໔. ກ່າວສຽດສີດ້ວຍຊື່ທີ່ຊົ່ວ

[໔໗] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຊື່ອະວະກັນນະກະ ຊື່ຊະວະກັນນະກະ ຊື່ທະນິດຖະກະ ຊື່ສະວິດຖະກະ ຊື່ກຸນວັດຖະກະ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

## ກ່າວສຽດສີດ້ວຍຊື່ທີ່ດີ

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຊື່ພຸດທະຣັກຂິຕະ ຊື່ທຳມະຣັກຂິຕະ ຊື່ສັງຄະຣັກຂິຕະ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

## ໖. ກ່າວສຽດສີດ້ວຍຕະກູນຊັ້ນຕ່ຳ

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຕະກູນໂກຊິຍະ ຕະກູນພາຣະທະວາຊະ ຯລຯ

**ກ່າວສຽດສີດ້ວຍຕະກູນຊັ້ນສູງ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຕະກູນໂຄຕະມະ ຕະກູນໂມກຄັນລານະ ຕະກູນກັດຈາຍະນະ ຕະກູນວາເສດຖະ ຯລຯ

**໔. ກ່າວສຽດສີດ້ວຍໜ້າທີ່ການງານຊັ້ນຕ່ຳ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຊ່າງຖາກໄມ້ ເປັນຄົນຖອກຂີ້ເຫຍື່ອ ຯລຯ

**ກ່າວສຽດສີດ້ວຍໜ້າທີ່ການງານຊັ້ນສູງ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຊາວນາ ເປັນພໍ່ຄ້າ ເປັນຄົນລ້ຽງງົວ ຯລຯ

**໕. ກ່າວສຽດສີດ້ວຍສິລະປະວິທະຍາຊັ້ນຕ່ຳ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຊ່າງຈັກສານ ເປັນຊ່າງໝໍ້ ເປັນຊ່າງຫູກ ເປັນຊ່າງໜັງ ເປັນຊ່າງຕັດຜົມ ຯລຯ"

**ກ່າວສຽດສີດ້ວຍສິລະປະວິທະຍາຊັ້ນສູງ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຊ່າງນັບ ເປັນນັກຄິດໄລ່ ເປັນນັກຂຽນ ຯລຯ"

**໖. ກ່າວສຽດສີດ້ວຍຄວາມເຈັບໄຂ້**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນໂຣກຂີ້ທູດ ເປັນໂຣກຝີ ເປັນໂຣກກາກ ເປັນໂຣກມອງຄໍ່ ເປັນໂຣກລົມບ້າໝູ ຯລຯ"

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນໂຣກເບົາຫວານ ຯລຯ"

**໗. ກ່າວສຽດສີດ້ວຍຮູບລັກສະນະທີ່ຊົ່ວ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຄົນສູງເກີນໄປ ເປັນຄົນເຕ້ຍເກີນໄປ ເປັນຄົນດຳເກີນໄປ ເປັນຄົນຂາວເກີນໄປ ຯລຯ"

**ກ່າວສຽດສີດ້ວຍຮູບລັກສະນະທີ່ດີ**

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຄົນບໍ່ສູງ ເປັນຄົນບໍ່ເຕ້ຍ ເປັນຄົນບໍ່ດຳ ເປັນຄົນບໍ່ຂາວ ຯລຯ"

## ໗. ກ່າວສຽດສີດ້ວຍກິເລດ

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຖືກຣາຄະກຸ້ມລຸມ ຖືກໂທສະກຸ້ມລຸມ ຖືກໂມຫະກຸ້ມລຸມ ຯລຯ"

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກທີ່ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະ ຯລຯ"

## ໙. ກ່າວສຽດສີດ້ວຍອາບັດ

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກຕ້ອງອາບັດປາຣາຊິກ ຯລຯ ຕ້ອງອາບັດທຸບພາສິດ ຯລຯ"

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນໂສດາບັນ ຯລຯ"

## ໑໐. ກ່າວສຽດສີດ້ວຍຄຳດ່າທີ່ຫຍາບ

ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກມີຄວາມປະພຶດດັ່ງອູດ ມີຄວາມປະພຶດດັ່ງແບ້ ມີຄວາມປະພຶດດັ່ງງົວ ມີຄວາມປະພຶດດັ່ງລາ ມີຄວາມປະພຶດດັ່ງສັດເດຍຣັດສານ ມີຄວາມປະພຶດດັ່ງສັດນະຮົກ ພິກຂຸເຫຼົ່ານັ້ນບໍ່ມີສຸກຄະຕິ ຫວັງໄດ້ພຽງທຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດ ທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຄຳດ່າທີ່ສຸພາບ

[໘໗] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກ ເປັນບັນດິດ ເປັນຄົນສະຫຼາດເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພິກຂຸເຫຼົ່ານັ້ນບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໘໙] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ພິກຂຸພວກໃດກັນແນ່ເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

## ໑໐. ກ່າວສຽດສີດ້ວຍຄຳດ່າທີ່ສຸພາບ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ພິກຂຸພວກໃດກັນແນ່ເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ

ເປັນພະຫູສູດ ເປັນທຳມະກະຖຶກ ພິກຂຸເຫຼົ່ານັ້ນບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

### ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໗໐] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ກ່າວຢ່າງນີ້ວ່າ "ພວກເຮົາບໍ່ແມ່ນຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື້ອ ຯລຯ

### ໑໐. ກ່າວສຽດສີດ້ວຍຄຳດ່າທີ່ສຸພາບ

ພວກເຮົາບໍ່ແມ່ນບັນດິດ ຄົນສະຫຼາດ ນັກປາດ ພະຫູສູດ ທຳມະກະຖຶກ ພວກເຮົາ ບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

### ອຸປະສຳບັນກ່າວສຽດສີອະນຸປະສຳບັນ

### ໑. ກ່າວສຽດສີດ້ວຍຊາດກຳເນີດ

[໗໑] ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອະນຸປະ ສຳບັນເກີ້ເຂີນ ກ່າວກັບອະນຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຯລຯ ກ່າວກັບອະນຸປະສຳບັນຊາດກຳເນີດສູງດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຯລຯ ກ່າວກັບອະນຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດສູງ ຯລຯ

### ໑໐. ກ່າວສຽດສີດ້ວຍຄຳດ່າ

ກ່າວກັບອະນຸປະສຳບັນຜູ້ມີຄຸນສົມບັດສູງດ້ວຍຄຳດ່າສຸພາບ ຄື ກ່າວກັບອະນຸປະສຳບັນຜູ້ເປັນບັນດິດ ກັບອະນຸປະສຳບັນຜູ້ສະຫຼາດ ກັບອະນຸປະສຳບັນຜູ້ເປັນນັກປາດ ກັບອະນຸປະສຳບັນຜູ້ເປັນພະຫູສູດ ກັບອະນຸປະສຳບັນຜູ້ເປັນທຳມະກະຖຶກວ່າ "ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

### ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອະນຸປະສຳບັນ ເກີ້ເຂີນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີອະນຸປະສຳບັນບາງພວກເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື້ອ ຯລຯ

## ໑໐. ກ່າວສຽດສີດ້ວຍຄຳດ່າ

"ໃນພຣະທຳວິໄນນີ້ ມີອະນຸປະສຳບັນບາງພວກເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພວກເຂົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອະນຸປະສຳບັນ ເກີ້ເຂີນ ກ່າວຢ່າງນີ້ວ່າ "ອະນຸປະສຳບັນພວກໃດກັນແນ່ ເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

ອະນຸປະສຳບັນພວກໃດກັນແນ່ເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ" ຕ້ອງອາບັດທຸກກົດ ທຸກ ໆ ຄຳເວົ້າ

ອຸປະສຳບັນຕ້ອງການຈະດ່າ ຕ້ອງການຈະສົບຜະໝາດ ຕ້ອງການຈະເຮັດໃຫ້ອະນຸປະສຳບັນ ເກີ້ເຂີນ ກ່າວຢ່າງນີ້ວ່າ "ພວກເຮົາບໍ່ແມ່ນຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື່ອ ຯລຯ

ພວກເຮົາບໍ່ແມ່ນບັນດິດ ຄົນສະຫຼາດ ນັກປາດ ພະຫູສູດ ທຳມະກະຖຶກ ພວກເຮົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໓໘] ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຄື ກ່າວກັບອຸປະສຳບັນຜູ້ເປັນຄົນຈັນທານ ກັບອຸປະສຳບັນຜູ້ເປັນຄົນຈັກສານ ກັບອຸປະສຳບັນຜູ້ເປັນນາຍພານ ກັບອຸປະສຳບັນຜູ້ເປັນຊ່າງລົດ ກັບອຸປະສຳບັນ ຜູ້ເປັນຄົນຖອກຂີ້ເຫຍື່ອວ່າ "ທ່ານເປັນຄົນຈັນທານ ທ່ານເປັນຄົນຈັກສານ ທ່ານເປັນນາຍພານ ທ່ານເປັນຊ່າງລົດ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນຊາດກຳເນີດສູງດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຄື ກ່າວກັບອຸປະສຳບັນຊາດກຳເນີດກະສັດ ຊາດກຳເນີດພາມວ່າ "ທ່ານເປັນຄົນຈັນທານ ທ່ານເປັນຄົນຈັກສານ ທ່ານເປັນນາຍພານ ທ່ານເປັນຊ່າງລົດ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

## ກ່າວສຽດສີດ້ວຍຊາດກຳເນີດສູງ

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ)

ຊາດກຳເນີດສູງ ຄື ກ່າວກັບອຸປະສຳບັນຜູ້ເປັນຈັນທານ ກັບອຸປະສຳບັນຜູ້ເປັນຄົນຈັກສານ ກັບອຸປະສຳບັນຜູ້ເປັນນາຍພານ ກັບອຸປະສຳບັນຜູ້ເປັນຊ່າງລົດ ກັບອຸປະສຳບັນຜູ້ເປັນຄົນຖອກຂີ້ເຫຍື່ອວ່າ "ທ່ານເປັນກະສັດ ທ່ານເປັນພາມ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນຊາດກຳເນີດສູງດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດສູງ ຄື ກ່າວກັບອຸປະສຳບັນຜູ້ເປັນກະສັດ ກັບອຸປະສຳບັນຜູ້ເປັນພາມວ່າ "ທ່ານເປັນກະສັດ ທ່ານເປັນພາມ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

## ៨. ກ່າວສຽດສີດ້ວຍຊື່

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນມີຊື່ຊົ່ວດ້ວຍຊື່ທີ່ຊົ່ວ ฯลฯ ກ່າວກັບອຸປະສຳບັນມີຊື່ດີດ້ວຍຊື່ທີ່ຊົ່ວ ฯลฯ ກ່າວກັບອຸປະສຳບັນມີຊື່ທີ່ຊົ່ວດ້ວຍຊື່ທີ່ດີ ฯลฯ ກ່າວກັບອຸປະສຳບັນມີຊື່ດີດ້ວຍຊື່ທີ່ດີ ฯลฯ

## ໑໐. ກ່າວສຽດສີດ້ວຍຄຳດ່າ

ກ່າວກັບອຸປະສຳບັນຜູ້ເປັນບັນດິດ ກັບອຸປະສຳບັນຜູ້ສະຫຼາດ ກັບອຸປະສຳບັນຜູ້ເປັນນັກປາດ ກັບອຸປະສຳບັນຜູ້ເປັນພະຫູສູດ ກັບອຸປະສຳບັນຜູ້ເປັນທຳມະກະຖຶກວ່າ "ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

## ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

[໓໑] ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ฯลฯ

## ໑໐. ກ່າວສຽດສີດ້ວຍຄຳດ່າ

ໃນພຣະທຳວິໄນນີ້ ມີພິກຂຸບາງພວກເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພວກທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

### ໑. ກ່າວສຽດສີດ້ວຍຊາດກຳເນີດຕ່ຳ

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ພິກຂຸພວກໃດກັນແນ່ເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຯລຯ

### ໑໐. ກ່າວສຽດສີດ້ວຍຄຳດ່າ

ພິກຂຸພວກໃດກັນແນ່ເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

### ໑. ກ່າວສຽດສີດ້ວຍຊາດກຳເນີດ

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ພວກເຮົາບໍ່ແມ່ນຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື່ອ" ຯລຯ

### ໑໐. ກ່າວສຽດສີດ້ວຍຄຳດ່າ

ພວກເຮົາບໍ່ແມ່ນບັນດິດ ຄົນສະຫຼາດ ນັກປາດ ພະຫູສູດ ທຳມະກະຖຶກ ພວກເຮົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

### ອຸປະສຳບັນກ່າວສຽດສີອະນຸປະສຳບັນ

### ໑. ກ່າວສຽດສີດ້ວຍຊາດກຳເນີດ

[໓໔] ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ອະນຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວກັບອະນຸປະສຳບັນຊາດກຳເນີດຕ່ຳດ້ວຍ (ຄຳບົ່ງເຖິງ) ຊາດກຳເນີດຕ່ຳ ຯລຯ ກ່າວກັບອະນຸປະສຳບັນຊາດກຳເນີດສູງດ້ວຍຊາດກຳເນີດຕ່ຳ ຯລຯ ກ່າວກັບອະນຸປະສຳບັນຊາດກຳເນີດຕ່ຳດ້ວຍຊາດກຳເນີດສູງ ຯລຯ ກ່າວກັບອະນຸປະສຳບັນ ຊາດກຳເນີດສູງດ້ວຍຊາດກຳເນີດສູງ ຯລຯ

### ໑໐. ກ່າວສຽດສີດ້ວຍຄຳດ່າ

ກ່າວກັບອະນຸປະສຳບັນຜູ້ມີຄຸນສົມບັດສູງດ້ວຍຄຳດ່າສຸພາບ ຄື ກ່າວກັບອະນຸປະສຳບັນຜູ້ເປັນບັນດິດ ກັບອະນຸປະສຳບັນຜູ້ເປັນຄົນສະຫຼາດ ກັບອະນຸປະສຳບັນຜູ້ເປັນນັກປາດ ກັບອະນຸປະສຳບັນຜູ້ເປັນພະຫູສູດ ກັບອະນຸປະສຳບັນຜູ້ເປັນທຳມະກະຖຶກວ່າ "ທ່ານເປັນບັນດິດ ທ່ານ

ເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

**໑. ກ່າວສຽດສີດ້ວຍຊາດກຳເນີດ**

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ ອະນຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ໃນພຣະທຳວິໄນນີ້ ມີອະນຸປະສຳບັນບາງພວກເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຯລຯ

**໑໐. ກ່າວສຽດສີດ້ວຍຄຳດ່າ**

ໃນພຣະທຳວິໄນນີ້ ມີອະນຸປະສຳບັນບາງພວກເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພວກເຂົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

**໑. ກ່າວສຽດສີດ້ວຍຊາດກຳເນີດ**

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ ອະນຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ອະນຸປະສຳບັນພວກໃດກັນແນ່ເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ" ຯລຯ

**໑໐. ກ່າວສຽດສີດ້ວຍຄຳດ່າ**

ອະນຸປະສຳບັນພວກໃດກັນແນ່ເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

**໑. ກ່າວສຽດສີດ້ວຍຊາດກຳເນີດ**

ອຸປະສຳບັນບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບຜະໝາດ ບໍ່ຕ້ອງການຈະເຮັດໃຫ້ ອະນຸປະສຳບັນເກີ້ເຂີນ ແຕ່ຕ້ອງການຈະຫຼິ້ນ ກ່າວຢ່າງນີ້ວ່າ "ພວກເຮົາບໍ່ແມ່ນຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື່ອ" ຯລຯ

**໑໐. ກ່າວສຽດສີດ້ວຍຄຳດ່າ**

ພວກເຮົາບໍ່ແມ່ນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພວກເຮົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດທຸບພາສິດທຸກ ໆ ຄຳເວົ້າ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໕] ໑. ພິກຂຸມຸ້ງອັດຖະ
໒. ພິກຂຸມຸ້ງທຳ
໓. ພິກຂຸມຸ້ງພໍ່າສອນ
໔. ພິກຂຸວິກົນຈະລິດ
໕. ພິກຂຸຜູ້ມີຈິດຟຸ້ງຊ່ານ
໖. ພິກຂຸຜູ້ກະສັບກະສ່າຍຍ້ອນເວທະນາ
໗. ພິກຂຸຕົ້ນບັນຍັດ

**ໂອມະສະວາທະສິກຂາບົດທີ ໒ ຈົບ**

# ໑. ມຸສາວາທະວັກ

# ໓. ເປສຸນຍະສິກຂາບົດ

## ວ່າດ້ວຍການກ່າວສໍ່ສຽດ

## ເລື້ອງພຣະສັບພັກຄີ

[໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພວກພິກຂຸສັບພັກຄີໄປຍຸແຍ່ພວກພິກຂຸຜູ້ໝາງໃຈກັນ ຜິດຖຽງກັນ ວິວາດກັນ ຄືຟັງເລື້ອງຂ້າງນີ້ແລ້ວໄປບອກຂ້າງນັ້ນ ເພື່ອທຳລາຍຂ້າງນີ້ ຟັງເລື້ອງຂ້າງນັ້ນແລ້ວມາບອກຂ້າງນີ້ເພື່ອທຳລາຍຂ້າງນັ້ນ ດ້ວຍເຫດນັ້ນ ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ແລະຄວາມໝາງໃຈທີ່ເກີດຂຶ້ນແລ້ວກໍຮຸນແຮງ ຍິ່ງຂຶ້ນ

ພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໄປຍຸແຍ່ພວກພິກຂຸຜູ້ໝາງໃຈກັນ ຜິດຖຽງກັນ ວິວາດກັນ ຄື ຟັງເລື້ອງຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຂ້າງນີ້ ຟັງເລື້ອງຂ້າງນັ້ນແລ້ວມາບອກຂ້າງນີ້ ເພື່ອທຳລາຍຂ້າງນັ້ນ ດ້ວຍເຫດນັ້ນ ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ແລະຄວາມໝາງໃຈທີ່ເກີດຂຶ້ນແລ້ວກໍຮຸນແຮງຍິ່ງຂຶ້ນ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໄປຍຸແຍ່ພວກພິກຂຸຜູ້ໝາງໃຈກັນ ຜິດຖຽງກັນ ວິວາດກັນ ຄື ຟັງເລື້ອງຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຂ້າງນີ້ ຟັງເລື້ອງຂ້າງນັ້ນແລ້ວມາບອກຂ້າງນີ້ເພື່ອທຳລາຍຂ້າງນັ້ນ ດ້ວຍເຫດນັ້ນ ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ແລະຄວາມໝາງໃຈທີ່ເກີດຂຶ້ນແລ້ວກໍຮຸນແຮງຍິ່ງຂຶ້ນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງໄປຍຸແຍ່ພວກພິກຂຸຜູ້ ໝາງໃຈກັນ ຜິດຖຽງກັນ ວິວາດກັນ ຄື ຟັງເລື້ອງຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຂ້າງນີ້ ຟັງເລື້ອງຂ້າງນັ້ນແລ້ວມາບອກຂ້າງນີ້ເພື່ອທຳລາຍຂ້າງນັ້ນ ດ້ວຍເຫດນັ້ນ ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ແລະຄວາມໝາງໃຈທີ່ເກີດຂຶ້ນແລ້ວກໍຮຸນແຮງຍິ່ງຂຶ້ນ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດ ຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໗] **ພິກຂຸຕ້ອງອາບັດປາຈິດຕີ ຍ້ອນເວົ້າສໍ່ສຽດພິກຂຸ**

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໓໘] ທີ່ຊື່ວ່າ ສໍ່ສຽດ ໄດ້ແກ່ ຄຳສໍ່ສຽດດ້ວຍອາການ ໒ ຢ່າງ ຄື (໑) ຕ້ອງ ການໃຫ້ຜູ້ອື່ນຮັກຕົນ (໒) ຕ້ອງການໃຫ້ຜູ້ອື່ນແຕກກັນ

ພິກຂຸກ່າວສໍ່ສຽດດ້ວຍອາການ ໑໐ ຢ່າງ ຄື (໑) ຊາດກຳເນີດແດ່ (໒) ຊື່ແດ່ (໓) ຕະກູນແດ່ (໔) ໜ້າທີ່ການງານແດ່ (໕) ສິລະປະວິທະຍາແດ່ (໖) ຄວາມເຈັບໄຂ້ແດ່ (໗) ຮູບລັກສະນະແດ່ (໘) ກິເລດແດ່ (໙) ອາບັດແດ່ (໑໐) ຄຳດ່າແດ່

## ບົດພາຊະນີ

ທີ່ຊື່ວ່າ ຊາດກຳເນີດ ໄດ້ແກ່ ຊາດກຳເນີດ ໒ ຢ່າງ ຄື (໑) ຊາດກຳເນີດຕ່ຳ (໒) ຊາດກຳເນີດສູງ

ທີ່ຊື່ວ່າ ຊາດກຳເນີດຕ່ຳ ໄດ້ແກ່ ຊາດກຳເນີດຄົນຈັນທານ ຊາດກຳເນີດຄົນຈັກສານ ຊາດກຳເນີດນາຍພານ ຊາດກຳເນີດຊ່າງລົດ ຊາດກຳເນີດຄົນຖອກຂີ້ເຫຍື່ອ ນີ້ຈັດເປັນຊາດກຳເນີດຕ່ຳ

ທີ່ຊື່ວ່າ ຊາດກຳເນີດສູງ ໄດ້ແກ່ ຊາດກຳເນີດກະສັດ ຊາດກຳເນີດພາມ ນີ້ຈັດເປັນຊາດກຳເນີດສູງ ຯລຯ

ທີ່ຊື່ວ່າ ຄຳດ່າ ໄດ້ແກ່ ຄຳດ່າ ໒ ຢ່າງ ຄື (໑) ຄຳດ່າຫຍາບ (໒) ຄຳດ່າສຸພາບ

ທີ່ຊື່ວ່າ ຄຳດ່າຫຍາບ ໄດ້ແກ່ ຄຳດ່າວ່າ ທ່ານເປັນອູດ ທ່ານເປັນແບ້ ທ່ານເປັນງົວ ທ່ານເປັນລາ ທ່ານເປັນສັດເດຍຣັດສານ ທ່ານເປັນສັດນະຮົກ ທ່ານບໍ່ມີສຸກຄະຕິ ຫວັງໄດ້ແຕ່ທຸກຄະຕິເທົ່ານັ້ນ ຄຳດ່າທີ່ກ່ຽວກັບການຮ່ວມປະເວນີ ຫຼື ຄຳດ່າທີ່ກ່ຽວກັບອະໄວຍະວະຂອງຊາຍຍິງ ນີ້ຈັດເປັນຄຳດ່າຫຍາບ

ທີ່ຊື່ວ່າ ຄຳດ່າສຸພາບ ໄດ້ແກ່ ຄຳດ່າວ່າ ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ ນີ້ຈັດເປັນຄຳດ່າສຸພາບ

## ອຸປະສຳບັນກ່າວສໍ່ສຽດອຸປະສຳບັນ

## ໑. ກ່າວສໍ່ສຽດດ້ວຍຊາດກຳເນີດຕ່ຳ

[໓໙] ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື່ອ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຊາດກຳເນີດສູງ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ ພິກຂຸຊື່ນີ້ກ່າວເຖິງທ່ານວ່າ "ທ່ານກະສັດ ທ່ານພາມ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໒. ກ່າວສໍ່ສຽດດ້ວຍຊື່ທີ່ຊົ່ວ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານອະວະກັນນະກະ ທ່ານຊະວະກັນນະກະ ທ່ານທະນິດຖະກະ ທ່ານສະວິດຖະກະ ທ່ານກຸນວັດຖະກະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຊື່ທີ່ດີ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານພຸດທະຣັກຂິຕະ ທ່ານທຳມະຣັກຂິຕະ ທ່ານສັງຄະຣັກຂິຕະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໓. ກ່າວສໍ່ສຽດດ້ວຍຕະກູນຊັ້ນຕ່ຳ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຄົນຕະກູນໂກຊິຍະ ທ່ານເປັນຄົນຕະກູນພາຣະທະວາຊະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຕະກູນຊັ້ນສູງ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຄົນຕະກູນໂຄຕະມະ ທ່ານເປັນຄົນຕະກູນໂມກຄັນລານະ ທ່ານ ເປັນຄົນຕະກູນກັດຈາຍະນະ ທ່ານເປັນຄົນຕະກູນວາເສດຖະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໔. ກ່າວສໍ່ສຽດດ້ວຍໜ້າທີ່ການງານຊັ້ນຕ່ຳ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຊ່າງຖາກໄມ້ ທ່ານເປັນຄົນຖອກຂີ້ເຫຍື່ອ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍໜ້າທີ່ການງານຊັ້ນສູງ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຊາວນາ ທ່ານເປັນພໍ່ຄ້າ ທ່ານເປັນຄົນລ້ຽງງົວ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໕. ກ່າວສໍ່ສຽດດ້ວຍສິລະປະວິທະຍາຊັ້ນຕ່ຳ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຊ່າງຈັກສານ ທ່ານເປັນຊ່າງໝໍ້ ທ່ານເປັນຊ່າງຫູກ ທ່ານເປັນຊ່າງໜັງ ທ່ານເປັນຊ່າງຕັດຜົມ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍສິລະປະວິທະຍາຊັ້ນສູງ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຊ່າງນັບ ທ່ານເປັນນັກຄຳນວນ ທ່ານເປັນນັກຂຽນ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໖. ກ່າວສໍ່ສຽດດ້ວຍຄວາມເຈັບໄຂ້

[໔໐] ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນໂຣກຂີ້ທູດ ທ່ານເປັນໂຣກຝີ ທ່ານເປັນໂຣກກາກ ທ່ານເປັນໂຣກມອງຄໍ່ ທ່ານເປັນໂຣກລົມບ້າໝູ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນໂຣກເບົາຫວານ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໗. ກ່າວສໍ່ສຽດດ້ວຍຮູບລັກສະນະທີ່ຊົ່ວ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຄົນສູງເກີນໄປ ທ່ານເປັນຄົນເຕ້ຍເກີນໄປ ທ່ານເປັນຄົນດຳເກີນໄປ ທ່ານເປັນຄົນຂາວເກີນໄປ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຮູບລັກສະນະທີ່ດີ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຄົນບໍ່ສູງຫຼາຍ ທ່ານເປັນຄົນບໍ່ເຕ້ຍຫຼາຍ ທ່ານເປັນຄົນບໍ່ດຳຫຼາຍ ທ່ານເປັນຄົນບໍ່ຂາວຫຼາຍ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໘. ກ່າວສໍ່ສຽດດ້ວຍກິເລດ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຜູ້ຖືກຣາຄະກຸ້ມລຸມ ທ່ານເປັນຜູ້ຖືກໂທສະກຸ້ມລຸມ ທ່ານເປັນຜູ້ຖືກໂມຫະກຸ້ມລຸມ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນຜູ້ປາສະຈາກຣາຄະ ທ່ານເປັນຜູ້ປາສະຈາກໂທສະ ທ່ານເປັນຜູ້ປາສະຈາກໂມຫະ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

## ໙. ກ່າວສໍ່ສຽດດ້ວຍອາບັດ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານຕ້ອງອາບັດປາຣາຊິກ ທ່ານຕ້ອງອາບັດສັງຄາທິເສດ ທ່ານຕ້ອງອາບັດຖຸນລັດໄຈ ທ່ານຕ້ອງອາບັດປາຈິດຕີ ທ່ານຕ້ອງອາບັດປະຕິເທສະນິຍະ ທ່ານຕ້ອງອາບັດທຸກກົດ ທ່ານຕ້ອງອາບັດທຸບພາສິດ" ຕ້ອງອາບັດປາຈິດຕີທຸກ ໆ ຄຳເວົ້າ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນໂສດາບັນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໑໐. ກ່າວສໍ່ສຽດດ້ວຍຄຳດ່າຫຍາບ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນອູດ ທ່ານເປັນແບ້ ທ່ານເປັນງົວ ທ່ານເປັນລາ ທ່ານເປັນສັດເດຍຣັດສານ ທ່ານເປັນສັດນະຣົກ ທ່ານບໍ່ມີສຸກຄະຕິ ຫວັງໄດ້ແຕ່ທຸກຄະຕິເທົ່ານັ້ນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຄຳດ່າສຸພາບ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວເຖິງທ່ານວ່າ ທ່ານເປັນບັນດິດ ທ່ານເປັນຄົນສະຫຼາດ ທ່ານເປັນນັກປາດ ທ່ານເປັນພະຫູສູດ ທ່ານເປັນທຳມະກະຖຶກ ທ່ານບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ" ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

## ໑. ກ່າວສໍ່ສຽດດ້ວຍຊາດກຳເນີດຊັ້ນຕ່ຳ

[໔໑] ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວວ່າ ໃນພຣະທຳວິໄນ ມີພິກຂຸບາງພວກເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ກ່າວສໍ່ສຽດດ້ວຍຊາດກຳເນີດຊັ້ນສູງ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ ກ່າວວ່າ ໃນພຣະທຳວິໄນ ມີພິກຂຸບາງພວກເປັນກະສັດ ເປັນພາມ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ฯลฯ

## ໑໐. ກ່າວສໍ່ສຽດດ້ວຍຄຳດ່າສຸພາບ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ກ່າວວ່າ ໃນພຣະທຳວິໄນ ມີພິກຂຸບາງພວກເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພິກຂຸເຫຼົ່ານັ້ນບໍ່ມີທຸກຄະຕິ ຫວັງສຸກຄະຕິແນ່ນອນ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ໑. ກ່າວສໍ່ສຽດດ້ວຍຊາດກຳເນີດຕ່ຳ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ ນີ້ກ່າວວ່າ ພິກຂຸພວກໃດກັນແນ່ເປັນຄົນຈັນທານ ເປັນຄົນຈັກສານ ເປັນນາຍພານ ເປັນຊ່າງລົດ ເປັນຄົນຖອກຂີ້ເຫຍື່ອ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

## ໑໐. ກ່າວສໍ່ສຽດດ້ວຍຄຳດ່າສຸພາບ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ ກ່າວວ່າ ພິກຂຸພວກໃດກັນແນ່ເປັນບັນດິດ ເປັນຄົນສະຫຼາດ ເປັນນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ ພວກທ່ານບໍ່ມີທຸກຄະຕິ ຫວັງສຸກຄະຕິໄດ້ແນ່ນອນ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນ ແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ໑. ກ່າວສໍ່ສຽດດ້ວຍຊາດກຳເນີດຊັ້ນຕ່ຳ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ ກ່າວວ່າ ພວກເຮົາບໍ່ແມ່ນຄົນຈັນທານ ຄົນຈັກສານ ນາຍພານ ຊ່າງລົດ ຄົນຖອກຂີ້ເຫຍື່ອ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ ຯລຯ

## ໑໐. ກ່າວສໍ່ສຽດດ້ວຍຄຳດ່າສຸພາບ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນວ່າ "ພິກຂຸຊື່ນີ້ ກ່າວວ່າ ພວກເຮົາບໍ່ແມ່ນບັນດິດ ຄົນສະຫຼາດ ນັກປາດ ເປັນພະຫູສູດ ເປັນທຳມະກະຖຶກ

ພວກເຮົາບໍ່ມີທຸກຄະຕິ ຫວັງໄດ້ແຕ່ສຸກຄະຕິເທົ່ານັ້ນ ພິກຂຸນັ້ນບໍ່ກ່າວເຖິງຄົນອື່ນແຕ່ກ່າວເຖິງທ່ານ" ຕ້ອງອາບັດທຸກກົດທຸກ ໆ ຄຳເວົ້າ

## ເປັນອາບັດຕາມວັດຖຸ

[໔໘] ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນ ຕ້ອງອາບັດປາຈິດຕິທຸກ ໆ ຄຳເວົ້າ

ອຸປະສຳບັນຟັງຄຳຂອງອຸປະສຳບັນ ແລ້ວໄປກ່າວຍຸແຍ່ອະນຸປະສຳບັນຕ້ອງອາບັດທຸກກົດ

ອຸປະສຳບັນຟັງຄຳຂອງອະນຸປະສຳບັນ ແລ້ວໄປກ່າວຍຸແຍ່ອຸປະສຳບັນຕ້ອງອາບັດທຸກກົດ

ອຸປະສຳບັນຟັງຄຳຂອງອະນຸປະສຳບັນ ແລ້ວໄປກ່າວຍຸແຍ່ອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໓] ໑. ພິກຂຸບໍ່ຕ້ອງການໃຫ້ຜູ້ອື່ນຮັກຕົນ
໒. ພິກຂຸບໍ່ຕ້ອງການໃຫ້ຜູ້ອື່ນແຕກກັນ
໓. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ເປສຸນຍະສິກຂາບົດທີ ໓ ຈົບ**

# ໑. ມຸສາວາທະວັກ

## ໔. ປະທະໂສທຳມະສິກຂາບົດ

### ວ່າດ້ວຍການໃຫ້ກ່າວທຳເປັນບົດ ໆ

### ເລື້ອງພຣະສັບພັກຄີ

[໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພວກພິກຂຸສັບພັກຄີສອນອຸປາສົກໃຫ້ກ່າວທຳແຊ່ງກັນເປັນບົດ ໆ ພວກອຸປາສົກຈຶ່ງບໍ່ເຄົາລົບ ບໍ່ຢຳເກງ ບໍ່ປະຕິບັດໃຫ້ເໝາະສົມໃນພິກຂຸທັງຫຼາຍ

ພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງສອນອຸປາສົກໃຫ້ກ່າວທຳແຊ່ງກັນເປັນບົດ ໆ ນໍ ພວກອຸປາສົກຈຶ່ງບໍ່ເຄົາລົບ ບໍ່ຢຳເກງ ບໍ່ປະຕິບັດໃຫ້ເໝາະສົມໃນພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສອນອຸປາສົກໃຫ້ກ່າວທຳແຊ່ງກັນເປັນບົດ ໆ ພວກອຸປາສົກຈຶ່ງບໍ່ເຄົາລົບ ບໍ່ຢຳເກງ ບໍ່ປະຕິບັດໃຫ້ເໝາະສົມໃນພິກຂຸທັງຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະ

ເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກທ່ານຈຶ່ງສອນອຸປາສົກໃຫ້ກ່າວທຳແຂ່ງກັນເປັນບົດ ໆ ນໍ ພວກອຸປາສົກຈຶ່ງບໍ່ເຄົາລົບ ບໍ່ຢຳເກງ ບໍ່ປະຕິບັດໃຫ້ເໝາະສົມໃນພິກຂຸທັງຫຼາຍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໔໕] ກໍ ພິກຂຸໃດສອນອະນຸປະສຳບັນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໖] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ອະນຸປະສຳບັນ ຄື ຍົກເວັ້ນພິກຂຸແລະພິກຂຸນີ ນອກນັ້ນຊື່ວ່າອະນຸປະສຳບັນ

ທີ່ຊື່ວ່າ ເປັນບົດ ໆ ໄດ້ແກ່ ກ່າວເປັນບົດ ກ່າວເປັນອະນຸບົດ ກ່າວເປັນອະນຸອັກຂະຣະ ກ່າວເປັນອະນຸພະຍັນຊະນະ

ທີ່ຊື່ວ່າ ກ່າວເປັນບົດ ຄື ພິກຂຸກັບອະນຸປະສຳບັນເລີ່ມສູດພ້ອມກັນ ຈົບລົງພ້ອມກັນ

ທີ່ຊື່ວ່າ ກ່າວເປັນອະນຸບົດ ຄື ເລີ່ມສູດແຍກກັນ ແຕ່ຈົບລົງພ້ອມກັນ

ທີ່ຊື່ວ່າ ກ່າວເປັນອະນຸອັກຂະຣະ ຄື ເມື່ອພິກຂຸສອນວ່າ "ຣູປັງ ອະນິດຈັງ" ແຕ່ ອະນຸປະສຳບັນສູດພ້ອມກັນວ່າ໌ "ຣູ" ແລ້ວຢຸດ

ທີ່ຊື່ວ່າ ກ່າວເປັນອະນຸພະຍັນຊະນະ ຄື ພິກຂຸສອນໃຫ້ວ່າ "ຣູປັງ ອະນິດຈັງ" ແຕ່ ອະນຸປະສຳບັນອອກສຽງຮັບພ້ອມກັນ໌ວ່າ "ເວທະນາ ອະນິດຈາບົດ ອະນຸບົດ ອະນຸອັກຂະຣະ ອະນຸພະຍັນຊະນະ ທັງໝົດນີ້ຊື່ວ່າທຳເປັນບົດ ໆ

ທີ່ຊື່ວ່າ ທຳ ໄດ້ແກ່ ພຸດທະພາສິດ ສາວົກພາສິດ ລືສີພາສິດ ເທວະດາພາສິດ ທີ່ປະກອບດ້ວຍອັດຖະ ທີ່ປະກອບດ້ວຍທຳ

ຄຳວ່າ ສອນໃຫ້ກ່າວ ຄື ສອນໃຫ້ກ່າວເປັນບົດ ໆ ຕ້ອງອາບັດປາຈິດຕີທຸກ ໆ ບົດ ສອນໃຫ້ກ່າວເປັນອັກສອນ ໆ ຕ້ອງອາບັດປາຈິດຕີທຸກ ໆ ອັກສອນ

# ບົດພາຊະນີ

## ຕິກະປາຈິດຕີ

[໕໗] ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ສອນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດປາຈິດຕີ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ສອນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດປາຈິດຕີ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ສອນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ສອນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດທຸກກົດ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ສອນໃຫ້ກ່າວທຳເປັນບົດ ໆ ຕ້ອງອາບັດທຸກກົດ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ສອນໃຫ້ກ່າວທຳເປັນບົດ ໆ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘] ໑. ພິກຂຸຜູ້ຮຽນພຣະພຸດທະພົດໃນທີ່ອາຈານສອນໃຫ້ວ່າ ພຣະພຸດທະອະຈະນພ້ອມກັນກັບອະນຸປະສຳບັນ

໒. ພິກຂຸຜູ້ສາທະຍາຍພ້ອມກັນ

໓. ພິກຂຸຜູ້ຊ່ອຍອະນຸປະສຳບັນຜູ້ສູດຄຳພີທີ່ຄ່ອງສ່ວນຫຼາຍສູດ (ສ່ວນທີ່ບໍ່ຄ່ອງ) ພ້ອມກັນກັບຕົນ

໔. ພິກຂຸຜູ້ໃຫ້ອະນຸປະສຳບັນທີ່ສູດຄາດເຄື່ອນໄປສູດໃໝ່ພ້ອມກັນກັບຕົນ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ປະທະໂສທຳມະສິກຂາບົດທີ ໔ ຈົບ**

# ໑. ມຸສາວາທະວັກ

## ໕. ສະຫະເສີຍຍະສິກຂາບົດ
## ວ່າດ້ວຍການນອນຮ່ວມກັນ
## ເລື້ອງພິກຂຸບວດໃໝ່

[໔໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນອັກຄາລະວະເຈດີ ເຂດເມືອງອາລະວີ ສະໄໝນັ້ນ ພວກອຸປາສົກມາຟັງທຳທີ່ອາຣາມ ເມື່ອພຣະທຳມະກະຖຶກສະແດງທຳແລ້ວ ພຣະພິກຂຸເຖຣະທັງຫຼາຍກັບໄປທີ່ຢູ່ ພວກພິກຂຸບວດໃໝ່ນອນຮ່ວມກັນກັບອຸປາສົກໃນໂຮງສັນ ຂາດສະຕິສຳປະຊັນຍະເປືອຍກາຍ ລະເມີ ກົນ ພວກອຸປາສົກພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງຄູບາທັງຫຼາຍ ຈຶ່ງນອນຂາດສະຕິສຳປະຊັນຍະ ເປືອຍກາຍ ລະເມີ ກົນກັນແນວນີ້ນໍ?"

ພິກຂຸທັງຫຼາຍໄດ້ຍິນພວກອຸປາສົກຕຳໜິ ປະນາມ ໂພນທະນາແລ້ວ ບັນດາພິກຂຸ ຜູ້ມັກໜ້ອຍສັນໂດດ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸ ຈຶ່ງນອນຂາດສະຕິສຳປະຊັນຍະເປືອຍກາຍ ລະເມີ ກົນແນວນີ້ນໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ພວກພິກຂຸບວດໃໝ່ໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນອນຮ່ວມກັນກັບອະນຸປະສຳບັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງນອນຮ່ວມກັບອະນຸປະສຳບັນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍ ພິກຂຸໃດ ນອນຮ່ວມກັນກັບອະນຸປະສຳບັນ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພິກຂຸບວດໃໝ່ ຈົບ**

## ເລື້ອງສາມະເນນຣາຫຸນ

[໕໐] ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນເມືອງອາລະວີ ຕາມພຣະອັດທະຍາໄສ ແລ້ວໄດ້ສະເດັດຈາຣິກໄປທາງນະຄອນໂກສຳພີ ສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນ ໂກສຳພີ ໄດ້ຂ່າວວ່າ ພຣະອົງປະທັບຢູ່ໃນພະທະຣິກາຣາມ ເຂດນະຄອນໂກສຳພີນັ້ນ

ພິກຂຸທັງຫຼາຍ ໄດ້ກ່າວກັບທ່ານຣາຫຸນ ດັ່ງນີ້ວ່າ "ທ່ານ ພຣະຜູ້ມີພຣະພາກເຈົ້າຊົງ ບັນຍັດ ສິກຂາບົດໄວ້ວ່າ ພິກຂຸບໍ່ເພິ່ງນອນຮ່ວມກັນກັບອະນຸປະສຳບັນ ທ່ານຣາຫຸນ ທ່ານຈົ່ງຫາ ທີ່ນອນໃໝ່ເອງເທີ້ນ" ຄືນນັ້ນ ທ່ານຣາຫຸນຫາທີ່ນອນບໍ່ໄດ້ ຈຶ່ງໄປນອນໃນວັດຈະກຸຕິ

ເມື່ອເວລາໃກ້ຮຸ່ງແຈ້ງ ພຣະຜູ້ມີພຣະພາກເຈົ້າຊົງຕື່ນບັນທົມສະເດັດໄປວັດຈະກຸຕິ ເມື່ອ ເຖິງແລ້ວຈຶ່ງຊົງພຣະກາສະ (ອະແຮມ) ແມ່ນທ່ານຣາຫຸນກໍອະແຮມຮັບ

ຜູ້ໃດຢູ່ໃນບ່ອນນີ້"

ຂ້າພຣະອົງ ຣາຫຸນເອງ ຂ້ານ້ອຍ"

ຣາຫຸນ ເຈົ້າມານອນບ່ອນນີ້ເຮັດຫຍັງ?

ໃນບັດນັ້ນ ທ່ານຣາຫຸນຈຶ່ງຂາບທູນເລື້ອງນັ້ນໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບ ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນອນຮ່ວມກັນກັບອະນຸປະສຳບັນ ໄດ້ ໒ - ໓ ຄືນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໑] ອັນໜຶ່ງ ພິກຂຸໃດນອນຮ່ວມກັນກັບອະນຸປະສຳບັນເກີນ ໒ - ໓ ຄືນ ຕ້ອງອາບັດ ປາຈິດຕີ

### ເລື້ອງສາມະເນນຣາຫຸນ ຈົບ

## ສິກຂາບົດວິພັງ

[໕໒] ຄຳວ່າ ອັນໜຶ່ງໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອັນໜຶ່ງໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ອະນຸປະສຳບັນ ຄື ຍົກເວັ້ນພິກຂຸ ນອກນັ້ນຊື່ວ່າອະນຸປະສຳບັນ

ຄຳວ່າ ເກີນ ໒ - ໓ ຄືນ ຄື ຫຼາຍກວ່າ ໒ - ໓ ຄືນ

ຄຳວ່າ ຮ່ວມກັນ ຄື ນຳກັນ

ທີ່ຊື່ວ່າ ທີ່ນອນ ໄດ້ແກ່ ທີ່ນອນມີເຄື່ອງມຸງທັງໝົດ ມີເຄື່ອງບັງທັງໝົດ ຫຼື ມີເຄື່ອງມຸງສ່ວນຫຼາຍ ມີເຄື່ອງບັງສ່ວນຫຼາຍ ທີ່ໃຊ້ພັກຜ່ອນ

ຄຳວ່າ ນອນ ຄວາມວ່າ ເມື່ອດວງອາທິດອັດສະດົງໃນວັນທີ ໔ ເມື່ອອະນຸປະສຳບັນນອນ ພິກຂຸກໍນອນ ຕ້ອງອາບັດປາຈິດຕີ ເມື່ອພິກຂຸນອນອະນຸປະສຳບັນກໍນອນ ຕ້ອງອາບັດປາຈິດຕີ ຫຼື ທັງພິກຂຸ ແລະ ອະນຸປະສຳບັນນອນ ຕ້ອງອາບັດປາຈິດຕີ ພິກຂຸລຸກຂຶ້ນແລ້ວກັບໄປນອນອີກ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໕໑] ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນນອນຮ່ວມກັນເກີນ ໒ - ໓ ຄືນ ຕ້ອງອາບັດປາຈິດຕີ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ນອນຮ່ວມກັນເກີນ ໒ - ໓ ຄືນ ຕ້ອງອາບັດປາຈິດຕີ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ນອນຮ່ວມກັນເກີນ ໒ - ໓ ຄືນ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ທີ່ນອນມີເຄື່ອງມຸງເຄິ່ງດຽວ ມີເຄື່ອງບັງເຄິ່ງດຽວ ຕ້ອງອາບັດທຸກກົດ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ນອນຮ່ວມກັນເກີນ ໒ - ໓ ຄືນ ຕ້ອງອາບັດທຸກກົດ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ນອນຮ່ວມກັນເກີນ ໒ - ໓ ຄືນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໔] ໑. ພິກຂຸນອນພັກ ໒ - ໓ ຄືນ

໒. ພິກຂຸພັກຕ່ຳກວ່າ ໒ - ໓ ຄືນ

໓. ພິກຂຸພັກ ໒ ຄືນ ພໍຄືນທີ ໓ ອອກໄປກ່ອນອະຣຸນຂຶ້ນແລ້ວກັບເຂົ້າມາ

໔. ພິກຂຸນອນຮ່ວມກັນໃນທີ່ນອນມີເຄື່ອງມຸງທັງໝົດ ແຕ່ບໍ່ມີເຄື່ອງບັງທັງໝົດ

໕. ພິກຂຸນອນຮ່ວມກັນໃນທີ່ນອນມີເຄື່ອງບັງທັງໝົດ ແຕ່ບໍ່ມີເຄື່ອງມຸງທັງໝົດ

໖. ພິກຂຸນອນຮ່ວມກັນໃນທີ່ນອນບໍ່ມີເຄື່ອງມຸງສ່ວນຫຼາຍ ບໍ່ມີເຄື່ອງບັງສ່ວນຫຼາຍ
໗. ພິກຂຸນັ່ງໃນເມື່ອອະນຸປະສຳບັນນອນ
໘. ພິກຂຸນອນ ອະນຸປະສຳບັນນັ່ງ
໙. ພິກຂຸນັ່ງແລະອະນຸປະສຳບັນກໍນັ່ງ
໑໐. ພິກຂຸວິກົນຈະລິດ
໑໑. ພິກຂຸຕົ້ນບັນຍັດ

**ສະຫະເສີຍະສິກຂາບົດທີ ໕ ຈົບ**

# ໑. ມຸສາວາທະວັກ

## ໖. ທຸຕິຍະສະຫະເສີຍະສິກຂາບົດ

### ວ່າດ້ວຍການນອນຮ່ວມກັນຂໍ້ທີ ໘

### ເລື້ອງພຣະອະນຸຣຸດທະ

[໕໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອະນຸຣຸດທະເດີນທາງໄປນະຄອນສາວັດຖີ ແຄວັ້ນໂກສົນ ເຖິງໝູ່ບ້ານເຂດໜຶ່ງໃນເວລາຄໍ່າ ສະໄໝນັ້ນ ມີແມ່ຍິງຄົນໜຶ່ງຈັດສ້າງເຮືອນພັກແຮມໄວ້ໃນໝູ່ບ້ານນັ້ນ ຄັ້ງນັ້ນ ທ່ານພຣະອະນຸຣຸດທະເຂົ້າໄປຫາແມ່ຍິງນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບແມ່ຍິງນັ້ນດັ່ງນີ້ວ່າ "ນາງ ຖ້າທ່ານບໍ່ລຳບາກໃຈ ອາດຕະມາຂໍພັກໃນເຮືອນພັກແຮມຈັກ ໑ ຄືນ

ນາງກ່າວວ່າ "ນິມົນທ່ານພັກເທີ້ນ ຂ້ານ້ອຍ"

ຝ່າຍພວກຄົນເດີນທາງເຫຼົ່າອື່ນ ກໍໄດ້ເຂົ້າໄປຫາແມ່ຍິງນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບແມ່ຍິງນັ້ນດັ່ງນີ້ວ່າ "ຍາແມ່ ຫາກຍາແມ່ບໍ່ລຳບາກໃຈ ພວກເຮົາຂໍພັກໃນເຮືອນພັກແຮມຈັກ ໑ ຄືນ

ນາງກ່າວວ່າ "ຖ້າຫາກພຣະຜູ້ເປັນເຈົ້າຜູ້ເຂົ້າມາກ່ອນອະນຸຍາດ ກໍເຊີນພວກທ່ານພັກແຮມໄດ້"

ພວກຄົນເດີນທາງ ຈຶ່ງເຂົ້າໄປຫາທ່ານພຣະອະນຸຣຸດທະເຖິງທີ່ພັກ ເມື່ອເຖິງແລ້ວຈຶ່ງກ່າວກັບທ່ານພຣະອະນຸຣຸດທະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຖ້າທ່ານບໍ່ລຳບາກໃຈ ພວກຂ້ານ້ອຍຂໍພັກໃນເຮືອນພັກແຮມຈັກ ໑ ຄືນ"

ທ່ານພຣະອະນຸຣຸດທະກ່າວວ່າ "ເຊີນທ່ານທັງຫຼາຍພັກເທີ້ນ"

ຄັ້ງນັ້ນແລ ແມ່ຍິງນັ້ນມີຈິດຮັກແພງໃນທ່ານພຣະອະນຸຣຸດທະຕັ້ງແຕ່ທຳອິດທີ່ໄດ້ເຫັນ ດັ່ງນັ້ນ ນາງຈຶ່ງເຂົ້າໄປຫາພຣະເຖຣະເຖິງທີ່ພັກ ເມື່ອເຖິງແລ້ວຈຶ່ງກ່າວກັບທ່ານວ່າ "ພຣະຜູ້ເປັນເຈົ້າຢູ່ປະປົນກັບຄົນພວກນີ້ຄົງຈະບໍ່ສະບາຍ ທາງທີ່ດີ ຂ້ານ້ອຍຄວນຈັດຕຽງຂ້າງໃນຫ້ອງຖວາຍພຣະຜູ້ເປັນເຈົ້າ ດີກວ່າ"

ທ່ານພຣະອະນຸຣຸດທະຮັບນິມົນໂດຍດຸດສະນີພາບ

ເມື່ອແລ້ວ ນາງຈຶ່ງຈັດຕຽງຂ້າງໃນຫ້ອງຖວາຍດ້ວຍຕົນເອງ ແລ້ວແຕ່ງຕົວ ປະພົມເຄື່ອງຫອມ ເຂົ້າໄປຫາພຣະເຖຣະເຖິງທີ່ພັກ ເມື່ອເຖິງແລ້ວ ຈຶ່ງກ່າວກັບທ່ານພຣະອະນຸຣຸດທະນັ້ນດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ເປັນເຈົ້າເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າຊົມ ສ່ວນຂ້ານ້ອຍເອງກໍມີຮູບງາມ ໜ້າເບິ່ງ ໜ້າຊົມ ທາງທີ່ດີ ຂ້ານ້ອຍຄວນເປັນພັນລະຍາຂອງພຣະຜູ້ເປັນເຈົ້າ" ເມື່ອນາງກ່າວຢ່າງນີ້ ທ່ານພຣະອະນຸຣຸດທະໄດ້ນິ່ງຢູ່ ແມ່ນຄັ້ງທີ ໒ ໗ລ໗

ແມ່ນຄັ້ງທີ ໓ ແມ່ຍິງນັ້ນກໍກ່າວກັບທ່ານພຣະອະນຸຣຸດທະນັ້ນດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ເປັນເຈົ້າເປັນຜູ້ຮູບງາມ ໜ້າເບິ່ງ ໜ້າຊົມ ຂ້ານ້ອຍເອງກໍມີຮູບງາມ ໜ້າເບິ່ງ ໜ້າຊົມ ທາງທີ່ດີ ຂໍໃຫ້ພຣະຜູ້ເປັນເຈົ້າຮັບຕົວຂ້ານ້ອຍ ແລະ ສົມບັດໄວ້ເທີ້ນ" ແມ່ນຄັ້ງທີ ໓ ທ່ານພຣະອະນຸຣຸດທະກໍໄດ້ນິ່ງຢູ່

ລຳດັບນັ້ນ ນາງຈຶ່ງປົດຜ້າອອກ ຍ່າງແດ່ ຢືນແດ່ ນັ່ງແດ່ ນອນແດ່ ຕໍ່ໜ້າພຣະເຖຣະ

ໃນບັດນັ້ນ ພຣະເຖຣະສຳລວມອິນຊີ ບໍ່ແລເບິ່ງ ບໍ່ໂອ້ລົມກັບນາງ

ແມ່ຍິງນັ້ນຄິດວ່າ ໜ້າອັດສະຈັນ ບໍ່ເຄີຍມີ ຄົນສ່ວນຫຼາຍສົ່ງຊັບມາໃຫ້ເຮົາ ໑໐໐ ກະຫາປະນະແດ່ ໑,໐໐໐ ກະຫາປະນະແດ່ ແຕ່ພຣະສະມະນະອົງນີ້ເຮົາອ້ອນວອນ ກໍຍັງບໍ່ປາຖະໜາທີ່ຈະຮັບຕົວເຮົາ ແລະ ສົມບັດຂອງເຮົາ ຈຶ່ງນຸ່ງຜ້າແລ້ວນ້ອມຫົວລົງແທບຕີນທ່ານພຣະອະນຸຣຸດທະຂໍຂະມາວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າ ເບົາປັນຍາ ທີ່ໄດ້ເຮັດຢ່າງນີ້ ຂໍພຣະຜູ້ເປັນເຈົ້າຈົ່ງໃຫ້ອະໄພໂທດແກ່ຂ້ານ້ອຍເພື່ອສຳລວມຕໍ່ໄປແດ່ເທີ້ນ

ພຣະເຖຣະກ່າວວ່າ "ນາງ ຖ້າຈັ່ງຊັ້ນ ກໍາທີ່ທ່ານໄດ້ກະທຳຄວາມຜິດໄປຍ້ອນຄວາມໂງ່ຈ້າເບົາປັນຍາທີ່ໄດ້ເຮັດຢ່າງນີ້ ຍ້ອນເຫດທີ່ເຫັນຄວາມຜິດເປັນຄວາມຜິດ ແລ້ວແກ້ໄຂໃຫ້ຖືກຕ້ອງ ຂໍ້ນັ້ນອາດຕະມາຍອມຮັບ ຍ້ອນການທີ່ບຸກຄົນເຫັນຄວາມຜິດເປັນຄວາມຜິດແລ້ວແກ້ໄຂໃຫ້ຖືກຕ້ອງ ແລະສຳລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນວິໄນຂອງພຣະອະຣິຍະ

ເມື່ອຣາຕີນັ້ນ ຜ່ານພົ້ນໄປ ແມ່ຍິງນັ້ນໄດ້ເອົາຂອງຫຍໍ້າຂອງສັນຢ່າງດີປະເຄນທ່ານພຣະອະນຸຣຸດທະດ້ວຍຕົນເອງ ຈົນວ່າທ່ານພຣະອະນຸຣຸດທະສັນອີ່ມແລ້ວ ເອົາມືອອກຈາກບາດ ນາງຈຶ່ງອະພິວາດແລ້ວນັ່ງໃນທີ່ສົມຄວນ ທ່ານພຣະອະນຸຣຸດທະໄດ້ຊີ້ແຈ່ງໃຫ້ແມ່ຍິງນັ້ນຜູ້ນັ່ງຢູ່ໃນທີ່

ສົມຄວນ ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈ ໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ແມ່ຍິງນັ້ນ ເຊິ່ງທ່ານພຣະອະນຸຣຸດທະໄດ້ຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ "ພຣະຜູ້ເປັນເຈົ້າ ພາສິດຂອງທ່ານຊັດເຈນໄພເລາະມ່ວນຫຼາຍ ພຣະຜູ້ເປັນເຈົ້າ ພາສິດຂອງທ່ານຊັດເຈນໄພເລາະມ່ວນຫຼາຍ ພຣະຜູ້ເປັນເຈົ້າໄດ້ປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ໄຕ້ປະທີບໃນທີ່ມືດດ້ວຍຕັ້ງໃຈວ່າ ຄົນມີຕາດີ ຈັກເຫັນຮູບ ພຣະຜູ້ເປັນເຈົ້າ ຂ້ານ້ອຍນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ເປັນເຈົ້າຈົ່ງຈື່ຂ້ານ້ອຍວ່າເປັນອຸປາສິກາຜູ້ເຖິງສະຣະນະ ນັບຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

ຈາກນັ້ນ ພຣະເຖຣະເດີນທາງໄປສູ່ນະຄອນສາວັດຖີ ແລ້ວແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອະນຸຣຸດທະຈຶ່ງນອນຮ່ວມກັບມາຕຸຄາມແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິທ່ານພຣະອະນຸຣຸດທະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອະນຸຣຸດທະວ່າ "ອະນຸຣຸດທະ ໄດ້ຂ່າວວ່າ ທ່ານນອນຮ່ວມກັບມາຕຸຄາມແມ່ນບໍ?" ທ່ານພຣະອະນຸຣຸດທະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ອະນຸ ຣຸດທະ ເປັນຫຍັງທ່ານຈຶ່ງນອນຮ່ວມກັບມາຕຸຄາມນໍ ອະນຸຣຸດທະ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໖] ກໍ ພິກຂຸໃດ ນອນຮ່ວມກັນກັບມາຕຸຄາມ ຕ້ອງອາບັດປາຈິດຕີ

**ເລື້ອງພຣະອະນຸຣຸດທະ ຈົບ**

## ສິກຂາບົດວິພັງ

[໕໗] ຄຳວ່າ ກໍ່ຫລືໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລືໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ແມ່ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແມ່ຍິງມະນຸດນັ້ນ ໂດຍທີ່ສຸດນັບຮອດເດັກຍິງທີ່ເກີດໃນວັນນັ້ນ ແມ່ຍິງທີ່ໃຫຍ່ກວ່ານີ້ບໍ່ຕ້ອງເວົ້າຮອດ

ຄຳວ່າ ຮ່ວມກັນ ຄື ນຳກັນ

ທີ່ຊື່ວ່າ ທີ່ນອນ ໄດ້ແກ່ ທີ່ນອນມີເຄື່ອງມຸງທັງໝົດ ມີເຄື່ອງບັງທັງໝົດ ຫຼື ມີເຄື່ອງມຸງສ່ວນຫຼາຍ ມີເຄື່ອງບັງສ່ວນຫຼາຍ

ຄຳວ່າ ນອນ ຄວາມວ່າ ເມື່ອດວງອາທິດອັດສະດົງ ເມື່ອມາຕຸຄາມນອນ ພິກຂຸກໍນອນ ຕ້ອງອາບັດປາຈິດຕີ ເມື່ອພິກຂຸນອນ ມາຕຸຄາມກໍນອນ ຕ້ອງອາບັດປາຈິດຕີ ຫຼື ທັງພິກຂຸແລະມາຕຸຄາມນອນພອມກັນ ຕ້ອງອາບັດປາຈິດຕີ ພິກຂຸລຸກຂຶ້ນແລ້ວກັບໄປນອນອີກ ຕ້ອງອາບັດປາຈິດຕີ

## ບົດພາຊະນີ
## ຕິກະປາຈິດຕີ

[໕໘] ມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ນອນຮ່ວມກັນ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸບໍ່ແນ່ໃຈ ນອນຮ່ວມກັນ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ນອນຮ່ວມກັນ ຕ້ອງອາບັດປາຈິດຕີ

## ທຸກກົດ

ທີ່ນອນມີເຄື່ອງມຸງເຄິ່ງດຽວ ມີເຄື່ອງບັງເຄິ່ງດຽວ ພິກຂຸນອນຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸນອນຮ່ວມກັນກັບນາງຍັກ ນາງເຜດ ບັນເດາະ ຫຼື ສັດເດຍຣັດສານໂຕແມ່ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໙] ໑. ພິກຂຸນອນຮ່ວມກັນໃນທີ່ນອນມີເຄື່ອງມຸງທັງໝົດ ແຕ່ບໍ່ມີເຄື່ອງບັງທັງໝົດ
໒. ພິກຂຸນອນຮ່ວມກັນໃນທີ່ນອນມີເຄື່ອງບັງທັງໝົດ ແຕ່ບໍ່ມີເຄື່ອງມຸງທັງໝົດ
໓. ພິກຂຸນອນຮ່ວມກັນໃນທີ່ນອນບໍ່ມີເຄື່ອງມຸງສ່ວນຫຼາຍ ບໍ່ມີເຄື່ອງບັງສ່ວນຫຼາຍ
໔. ພິກຂຸນັ່ງໃນເມື່ອມາຕຸຄາມນອນ
໕. ພິກຂຸນອນມາຕຸຄາມນັ່ງ
໖. ພິກຂຸນັ່ງແລະມາຕຸຄາມກໍນັ່ງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ທຸຕິຍະສະຫະເສີຍຍະສິກຂາບົດທີ ໖ ຈົບ**

# ໑. ມຸສາວາທະວັກ

## ໗. ທຳມະເທສະນາສິກຂາບົດ

### ວ່າດ້ວຍການສະແດງທຳ

### ເລື້ອງພຣະອຸທາຍີ

[໖໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອຸທາຍີເປັນພຣະປະຈຳຕະກູນໃນນະຄອນສາວັດຖີເຂົ້າໄປຫາຕະກູນຫຼາຍຕະກູນ ເຊົ້າວັນໜຶ່ງ ທ່ານຄອງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປສູ່ຕະກູນໜຶ່ງ

ສະໄໝນັ້ນ ຍິງແມ່ເຮືອນນັ່ງຢູ່ທີ່ປະຕູເຮືອນ ລູກໃພ້ນັ່ງຢູ່ທີ່ປະຕູຫ້ອງນອນ

ທ່ານພຣະອຸທາຍີເຂົ້າໄປຫາຍິງແມ່ເຮືອນນັ້ນເຖິງຕົວ ເມື່ອເຖິງແລ້ວໄດ້ສະແດງທຳໃກ້ຫູນາງ

ຂະນະນັ້ນ ລູກໃພ້ເກີດຄວາມຄິດຂຶ້ນມາວ່າ ສະມະນະອົງນີ້ເປັນຊາຍຊູ້ຂອງແມ່ຍ່າ ຫຼືເວົ້າກ້ຽວແມ່ຍ່າເຮົາ

ເມື່ອທ່ານພຣະອຸທາຍີສະແດງທຳໃກ້ຫູຍິງແມ່ເຮືອນແລ້ວ ຈຶ່ງເຂົ້າໄປຫາຍິງສະໃພ້ ເຖິງຕົວເມື່ອເຖິງແລ້ວຈຶ່ງສະແດງທຳໃກ້ຫູນາງ

ຂະນະນັ້ນ ຍິງແມ່ເຮືອນເກີດຄວາມຄິດຂຶ້ນມາວ່າ ສະມະນະອົງນີ້ເປັນຊາຍຊູ້ຂອງລູກໃພ້ ຫຼືເວົ້າກ້ຽວລູກໃພ້ເຮົາ

ເມື່ອທ່ານພຣະອຸທາຍີສະແດງທຳໃກ້ຫູລູກໃພ້ແລ້ວກໍຈາກໄປ

ໃນບັດນັ້ນ ຍິງແມ່ເຮືອນໄດ້ກ່າວກັບລູກໃພ້ວ່າ "ນີ້ນາງຕົວດີ ສະມະນະອົງນັ້ນກ່າວອັນໃດກັບເຈົ້າ

ຍິງສະໃພ້ຕອບວ່າ "ທ່ານສະແດງທຳ ແກ່ລູກ ແລ້ວແມ່ເດ່ ພຣະເວົ້າຫຍັງກັບແມ່"

ຍິງແມ່ເຮືອນຕອບວ່າ "ທ່ານກໍສະແດງທຳແກ່ແມ່ຄືກັນ"

ຍິງແມ່ເຮືອນກັບລູກສະໃພ້ນັ້ນຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸທາຍີຈຶ່ງສະແດງທຳໃກ້ຫູມາຕຸຄາມແນວນັ້ນນໍ? ພຣະທຳມະກະຖຶກຄວນສະແດງທຳສຽງຊັດເຈນເປີດເຜີຍ ບໍ່ແມ່ນບໍ?"

ພວກພິກຂຸໄດ້ຍິນແມ່ຍິງທັງສອງຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີຈຶ່ງສະແດງທຳແກ່ມາຕຸຄາມນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານສະແດງທຳແກ່ມາຕຸຄາມ ແມ່ນບໍ?" ທ່ານພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງສະແດງທຳແກ່ມາຕຸຄາມນໍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ສະແດງທຳແກ່ມາຕຸຄາມ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະອຸທາຍີ ຈົບ**

# ເລື້ອງອຸປາສິກາ

[໖໑] ສະໄໝນັ້ນ ພວກອຸປາສິກາ ພົບພິກຂຸແລ້ວນິມົນວ່າ "ພຣະຜູ້ເປັນເຈົ້າ ຂໍນິມົນພຣະຜູ້ເປັນເຈົ້າສະແດງທຳເທີ້ນ

ພິກຂຸທັງຫຼາຍກ່າວວ່າ "ແມ່ອອກ ການສະແດງທຳແກ່ມາຕຸຄາມບໍ່ເໝາະ

ພວກອຸປາສິກາ ກ່າວວ່າ "ຂໍນິມົນພຣະຜູ້ເປັນເຈົ້າທັງຫຼາຍ ໂຜດສະແດງທຳຈັກ ໕ - ໖ ຄຳກໍໄດ້ ແມ່ນພຽງເທົ່ານີ້ພວກຂ້ານ້ອຍອາດເຂົ້າໃຈທຳໄດ້

ພວກພິກຂຸກໍຍັງປະຕິເສດວ່າ "ແມ່ອອກ ການສະແດງທຳແກ່ມາຕຸຄາມບໍ່ເໝາະ" ພາກັນຢຳເກງຢູ່ຈຶ່ງບໍ່ຍອມສະແດງທຳ

ພວກອຸປາສິກາ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະທັງຫຼາຍເມື່ອພວກເຮົາອາຣາດທະນາຢູ່ຍັງບໍ່ຍອມສະແດງທຳ"

ພວກພິກຂຸໄດ້ຍິນອຸປາສິກາ ຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະແດງທຳແກ່ມາຕຸຄາມໄດ້ ໕ - ໖ ຄຳ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງອຸປາສິກາ ຈົບ

# ເລື້ອງພຣະສັບພັກຄີ

[໖໔] ສະໄໝນັ້ນ ພວກພິກຂຸສັບພັກຄີ ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ສະແດງທຳແກ່ມາຕຸຄາມໄດ້ ໕ - ໖ ຄຳ ຈຶ່ງໃຫ້ບຸຣຸດບໍ່ຮູ້ດຽງສານັ່ງໃກ້ ໆ ແລ້ວສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳ

ພວກພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງໃຫ້ບຸຣຸດບໍ່ຮູ້ດຽງສານັ່ງໃກ້ ແລ້ວສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸພຣະສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຫ້ບຸຣຸດບໍ່ຮູ້ດຽງສານັ່ງໃກ້ ໆ ແລ້ວສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຫ້ບຸຣຸດບໍ່ຮູ້ດຽງສານັ່ງໃກ້ ໆ ແລ້ວສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະອະນຸບັນຍັດ

[໖໓] ອັນໜຶ່ງ ພິກຂຸໃດສະແດງທຳແກ່ມາຕຸຄາມເກີນ ໕ - ໖ ຄຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໔] ຄຳວ່າ ອັນໜຶ່ງຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນຍິງທີ່ຮູ້ດຽງສາ ສາມາດເຈົ້າໃຈຄຳເວົ້າສຸພາສິດແລະຄຳ ທຸບພາສິດຄຳຫຍາບແລະຄຳສຸພາບ

ທີ່ຊື່ວ່າ ເກີນ ໕ - ໖ ຄຳ ໄດ້ແກ່ ເກີນກວ່າ ໕ - ໖ ຄຳ

ທີ່ຊື່ວ່າ ທຳ ໄດ້ແກ່ ພຸດທະພາສິດ ສາວົກພາສິດ ລືສີພາສິດ ເທວະດາພາສິດ ທີ່ປະກອບດ້ວຍອັດຖະ ທີ່ປະກອບດ້ວຍທຳ

ຄຳວ່າ ສະແດງ ຄື ສະແດງເປັນບົດ ຕ້ອງອາບັດປາຈິດຕີທຸກ ໆ ບົດ ສະແດງເປັນຕົວອັກ ສອນ ຕ້ອງອາບັດປາຈິດຕີທຸກ ໆ ຕົວອັກສອນ

ຄຳວ່າ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ ຄື ຍົກເວັ້ນໄວ້ແຕ່ມີບຸຣຸດຜູ້ຮູ້ຄວາມຢູ່ດ້ວຍ

ບຸຣຸດທີ່ຊື່ວ່າ ເປັນຜູ້ຮູ້ດຽງສາ ຄື ສາມາດເຂົ້າໃຈຄຳເວົ້າສຸພາສິດ ທຸບພາສິດ ຄຳຫຍາບແລະຄຳສຸພາບ

## ບົດພາຊະນີ

## ຕິກະປາຈິດຕິ

[໗໕] ມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ສະແດງທຳເກີນ ໕ - ໖ ຄຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ

ມາຕຸຄາມ ພິກຂຸບໍ່ແນ່ໃຈ ສະແດງທຳເກີນ ໕ - ໖ ຄຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ

ມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ສະແດງທຳເກີນ ໕-໖ ຄຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ

## ຕິກະທຸກກົດ

ພິກຂຸສະແດງທຳແກ່ນາງຍັກ ນາງເຜດ ບັນເດາະ ຫຼື ສັດເດຍຣັດສານໂຕແມ່ ເຊິ່ງແປງກາຍເປັນຍິງຫຼາຍກວ່າ ໕ - ໖ ຄຳ ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ມີບຸຣຸດຜູ້ໃຫຍ່ຢູ່ນຳ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໖] ໑. ພິກຂຸທີ່ສະແດງທຳໂດຍມີບຸຣຸດຜູ້ໃຫຍ່ຢູ່ນຳ
໒. ພິກຂຸສະແດງທຳພຽງ ໕ - ໖ ຄຳ
໓. ພິກຂຸສະແດງທຳຕ່ຳກວ່າ ໕ - ໖ ຄຳ
໔. ພິກຂຸລຸກຂຶ້ນແລ້ວມານັ່ງສະແດງທຳຕໍ່ໄປອີກ
໕. ພິກຂຸສະແດງທຳໃນທີ່ທີ່ມາຕຸຄາມລຸກຂຶ້ນແລ້ວນັ່ງລົງອີກ
໖. ພິກຂຸສະແດງທຳແກ່ມາຕຸຄາມອື່ນຕໍ່
໗. ພິກຂຸຖືກຖາມບັນຫາແລ້ວສະແດງທຳແກ່ມາຕຸຄາມຜູ້ຖາມ
໘. ພິກຂຸສະແດງທຳເພື່ອຄົນອື່ນແຕ່ມີມາຕຸຄາມຟັງຢູ່ດ້ວຍ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ທຳມະເທສະນາສິກຂາບົດທີ ໗ ຈົບ**

# ໑. ມຸສາວາທະວັກ

## ໗. ພູຕາໂຣຈະນະສິກຂາບົດ

### ວ່າດ້ວຍການບອກອຸດຕະຣິມະນຸດສະທຳທີ່ມີຈິງ

### ເລື່ອງພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ

[໑໙໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍ ເປັນເພື່ອນເຄີຍເຫັນເຄີຍຄົບຫາກັນມາ ຈຳພັນສາຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາ ເວລານັ້ນ ແຄວັ້ນວັດຊີເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ແຮ້ນແຄ້ນ ໃຊ້ສະລາກປັນສ່ວນຊື້ອາຫານ ມີຄົນລົ້ມຕາຍກັນກະດູກຂາວຈູ່ນພູ່ນ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ພິກຂຸເຫຼົ່ານັ້ນໄດ້ມີຄວາມຄິດວ່າ "ບັດນີ້ ແຄວັ້ນວັດຊີເກີດອຶດຢາກ ປະຊາຊົນມີຄວາມເປັນຢູ່ແຮ້ນແຄ້ນ ໃຊ້ສະລາກປັນສ່ວນຊື້ອາຫານ ມີຄົນລົ້ມຕາຍກັນກະດູກຂາວຈູ່ນພູ່ນ ຍາກທີ່ພຣະອະຣິຍະຈະບິນທະບາດລ້ຽງຊີບໄດ້ ເຮັດຢ່າງໃດນໍ? ພວກເຮົາຈຶ່ງຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກ ແລະ ບິນທະບາດໄດ້ໂດຍບໍ່ລຳບາກ"

ພິກຂຸບາງພວກສະເໜີວ່າ "ທ່ານທັງຫຼາຍ ຖ້າເຊັ່ນນັ້ນ ພວກເຮົາມາຊ່ອຍກັນເຮັດວຽກຂອງພວກຄະລືຫັດ ເມື່ອຊ່ອຍເຮັດວຽກ ພວກເຂົາກໍຄົງຈະພໍໃຈຖວາຍບິນທະບາດແກ່ພວກເຮົາໂດຍວິທີນີ້ແລ ພວກເຮົາກໍຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກແລະບິນທະບາດໄດ້ໂດຍບໍ່ລຳບາກ

ພິກຂຸອີກພວກສະເໜີວ່າ "ຢ່າເລີຍ ທ່ານທັງຫຼາຍ ເປັນຫຍັງ ພວກເຮົາຈະຕ້ອງໄປຊ່ອຍກັນເຮັດວຽກຂອງພວກຄະລືຫັດ ຂໍໃຫ້ພວກເຮົາມາຊ່ອຍກັນເຮັດໜ້າທີ່ທູດນຳຂ່າວສານໃຫ້ພວກຄະລືຫັດຈະດີກວ່າ ເມື່ອເຮັດຢ່າງນີ້ ພວກຄະລືຫັດກໍຄົງຈະພໍໃຈຖວາຍບິນທະບາດແກ່ພວກເຮົາໂດຍວິທີນີ້ແລພວກເຮົາກໍຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກແລະບິນທະບາດໄດ້ໂດຍບໍ່ລຳບາກ"

ພິກຂຸອີກພວກສະເໜີວ່າ "ຢ່າເລີຍ ທ່ານທັງຫຼາຍ ເປັນຫຍັງພວກເຮົາຈະຕ້ອງໄປຊ່ອຍກັນເຮັດວຽກຫຼືເຮັດໜ້າທີ່ທູດນຳຂ່າວສານໃຫ້ພວກຄະລືຫັດ ທາງທີ່ດີ ພວກເຮົາມາກ່າວອວດອຸດຕະຣິມະນຸດສະທຳຂອງກັນແລະກັນໃຫ້ພວກຄະລືຫັດຟັງວ່າ ພິກຂຸອົງນັ້ນໄດ້ປະຖົມຊານ ອົງນັ້ນໄດ້ທຸຕິຍະຊານ ອົງນັ້ນໄດ້ຕະຕິຍະຊານ ອົງນັ້ນໄດ້ຈະຕຸດຖະຊານ ອົງນັ້ນເປັນພຣະໂສດາ

ບັນ ອົງນັ້ນເປັນພຣະສະກະທາຄາມີ ອົງນັ້ນເປັນພຣະອະນາຄາມີ ອົງນັ້ນເປັນພຣະອະຣະຫັນ ອົງນັ້ນໄດ້ວິດຊາ ໓ ອົງນັ້ນໄດ້ອະພິນຍາ ໖ ເມື່ອເວົ້າຢ່າງນີ້ ພວກຄະລືຫັດກໍຄົງຈະພໍໃຈຖວາຍບິນທະບາດແກ່ພວກເຮົາ ໂດຍວິທີນີ້ພວກເຮົາຈະພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈໍາພັນສາຢ່າງຜາສຸກ ແລະບິນທະບາດໄດ້ໂດຍບໍ່ລໍາບາກ”

ໃນທີ່ສຸດ ພິກຂຸເຫຼົ່ານັ້ນທັງໝົດຕົກລົງກັນວ່າ “ທ່ານທັງຫຼາຍ ດ້ວຍວິທີທີ່ພວກເຮົາພາກັນກ່າວອວດອຸດຕະຣິມະນຸດສະທໍາຂອງກັນ ແລະ ກັນໃຫ້ພວກຄະລືຫັດຟັງເປັນວິທີທີ່ດີກວ່າວິທີອື່ນ

ຕໍ່ມາ ພິກຂຸເຫຼົ່ານັ້ນໄດ້ພາກັນກ່າວອວດອຸດຕະຣິມະນຸດສະທໍາຂອງກັນ ແລະ ກັນໃຫ້ພວກຄະລືຫັດຟັງວ່າ “ພິກຂຸອົງນັ້ນໄດ້ປະຖົມຊານ ຯລຯ ອົງນັ້ນໄດ້ຈະຕຸດຖະຊານ ອົງນັ້ນເປັນພຣະໂສດາບັນ ຯລຯ ອົງນັ້ນໄດ້ອະພິນຍາ ໖

ຄັ້ງນັ້ນແລ ປະຊາຊົນກໍພາກັນຍິນດີວ່າ “ເປັນລາບຂອງພວກເຮົານໍ ພວກເຮົາໄດ້ດີແລ້ວນໍທີ່ມີພິກຂຸທັງຫຼາຍເຊັ່ນນີ້ມາຢູ່ຈໍາພັນສາ ຍ້ອນແຕ່ກ່ອນນີ້ພວກເຮົາບໍ່ມີພິກຂຸທັງຫຼາຍທີ່ມີຄຸນສົມບັດເໝືອນຢ່າງພິກຂຸຜູ້ມີສິນມີກັນລະຍານະທໍາເຫຼົ່ານີ້ມາຢູ່ຈໍາພັນສາເລີຍ” ໂພຊະນະ (ອາຫານ) ຯລຯ ຂາທະນີຍະ (ຂອງຫຍໍ້າ) ຯລຯ ສາຍະນີຍະ (ຂອງຊີມ) ຯລຯ ປານະ (ເຄື່ອງດື່ມ) ຊະນິດທີ່ພວກເຂົາຈະຖວາຍແກ່ພິກຂຸເຫຼົ່ານັ້ນ ພວກເຂົາບໍ່ກິນ ບໍ່ຂົບ ບໍ່ຫຍໍ້າ ບໍ່ຊີມ ບໍ່ດື່ມດ້ວຍຕົນເອງ ທັງບໍ່ໃຫ້ແກ່ມານດາບິດາ ບຸດ ພັນລະຍາ ຄົນຮັບໃຊ້ ກໍາມະກອນ ມິດ ອໍາມາດ ຍາດສາໂລຫິດ ພິກຂຸເຫຼົ່ານັ້ນ ຈຶ່ງເປັນຜູ້ມີນໍ້າມີນວົນ ມີອິນຊີຜ່ອງໃສ ມີໃບໜ້າເອີບອີ່ມ ມີຜິວພັນຜຸດຜ່ອງ

[໖໘] ມີປະເພນີຢູ່ວ່າ ເມື່ອພິກຂຸທັງຫຼາຍອອກພັນສາແລ້ວຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ເມື່ອພິກຂຸເຫຼົ່ານັ້ນຈໍາພັນສາຄົບ ໓ ເດືອນແລ້ວຈຶ່ງເກັບເສນາສະນະ ຖືບາດແລະຈີວອນອອກເດີນທາງມຸ້ງໄປສູ່ນະຄອນເວສາລີ ຈາຣິກໄປໂດຍລໍາດັບ ເຖິງນະຄອນເວສາລີ ຜ່ານປ່າມະຫາວັນ ໄປເຖິງກູຕາຄາຣະສາລາ ແລ້ວເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຖວາຍອະພິວາດ ແລ້ວນັ່ງລົງໃນທີ່ສົມຄວນ

## ພິກຂຸຕ່າງທິດມາເຂົ້າເຝົ້າ

ສະໄໝນັ້ນ ພິກຂຸທັງຫຼາຍທີ່ຈໍາພັນສາຢູ່ໃນທິດຕ່າງ ໆ ເບິ່ງຈ່ອຍຜອມ ບໍ່ສົດໃສ ມີຜິວພັນໝອງຄໍ້າ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ສ່ວນພິກຂຸຊາວຝັ່ງແມ່ນໍ້າວັກຄຸມຸທາ ກັບມີນໍ້າມີນວນ ມີອິນຊີຜ່ອງໃສ ມີໃບໜ້າເອີບອີ່ມ ມີຜິວພັນຜຸດຜ່ອງ ອັນໜຶ່ງ ການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍຊົງປາໄສກັບພຣະອາຄັນຕຸກະທັງຫຼາຍ ນັ້ນກໍເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາວ່າ “ພິກຂຸ ທັງຫຼາຍ ທ່ານທັງຫຼາຍຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ພວກທ່ານເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກບໍ? ແລະບິນທະບາດໄດ້ໂດຍບໍ່ລຳບາກບໍ?

ພິກຂຸເຫຼົ່ານັ້ນຂາບທູນວ່າ “ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ຂ້ານ້ອຍ ອັນໜຶ່ງ ພວກຂ້າພຣະອົງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນບໍ່ຜິດຖຽງ ກັນ ຢູ່ຈຳພັນສາເປັນຜາສຸກ ແລະ ບິນທະບາດໄດ້ໂດຍບໍ່ລຳບາກ ຂ້ານ້ອຍ

## ພຸດທະປະເພນີ

ພຣະຕະຖາຄົດເຈົ້າທັງຫຼາຍຊົງຮູ້ເລື່ອງ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື່ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື່ອງທີ່ບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍ ຊົງກຳຈັດເລື່ອງທີ່ບໍ່ເປັນປະໂຫຍດດ້ວຍອະຣິຍະມັກແລ້ວ

ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ສອບຖາມພິກຂຸທັງຫຼາຍດ້ວຍເຫດ ໒ ປະການ ຄື ຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາວ່າ “ເຮັດ ຢ່າງໃດ ທ່ານທັງຫຼາຍຈຶ່ງພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຜາສຸກ ແລະບິນທະບາດໄດ້ໂດຍບໍ່ລຳບາກ

ລຳດັບນັ້ນ ພິກຂຸເຫຼົ່ານັ້ນຈຶ່ງໄດ້ຂາບທູນເລື່ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ພິກຂຸທັງຫຼາຍ ພວກທ່ານມີຄຸນວິເສດນັ້ນ ແມ່ນບໍ?” ພິກຂຸ ເຫຼົ່ານັ້ນຂາບ ທູນວ່າ “ມີຈິງ ຂ້ານ້ອຍ

## ຊົງບັນຍັດສິກຂາບົດ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກທ່ານ ຈຶ່ງພາກັນກ່າວອວດອຸດຕະຣິມະນຸດສະທຳຂອງກັນ ແລະ ກັນໃຫ້ພວກຄະລືຫັດຟັງຍ້ອນເຫັນແກ່ ປາກ ແກ່ທ້ອງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໙] ກໍ ພິກຂຸໃດ ບອກອຸດຕະຣິມະນຸດສະທຳທີ່ມີຈິງແກ່ອະນຸປະສຳບັນ ຕ້ອງອາບັດ ປາຈິດຕີ

**ເລື່ອງພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ ຈົບ**

## ສິກຂາບົດວິພັງ

[໗໐] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ອະນຸປະສຳບັນ ໄດ້ແກ່ ຍົກເວັ້ນພິກຂຸ ພິກຂຸນີ ນອກນັ້ນຊື່ວ່າອະນຸປະສຳບັນ

## ບົດພາຊະນີ

ທີ່ຊື່ວ່າ ອຸດຕະຣິມະນຸດສະທຳ ໄດ້ແກ່ ຊານ ວິໂມກ ສະມາທິ ສະມາບັດ ຍານທັດສະນະມັກຄະພາວະນາ ການກະທຳມັກຜົນໃຫ້ແຈ້ງ ການລະກິເລດ ພາວະທີ່ຈິດປອດຈາກກິເລດ ຄວາມຍິນດີໃນເຮືອນວ່າງ

ຄຳວ່າ ຊານ ໄດ້ແກ່ ປະຖົມຊານ ທຸຕິຍະຊານ ຕະຕິຍະຊານ ຈະຕຸດຖະຊານ

ຄຳວ່າ ວິໂມກ ໄດ້ແກ່ ສູນຍະຕະວິໂມກ ອະນິມິດຕະວິໂມກ ອັບປະນິຫິຕະວິໂມກ

ຄຳວ່າ ສະມາທິ ໄດ້ແກ່ ສູນຍະຕະສະມາທິ ອະນິມິດຕະສະມາທິ ອັບປະນິຫິຕະສະມາທິ

ຄຳວ່າ ສະມາບັດ ໄດ້ແກ່ ສູນຍະຕະສະມາບັດ ອະນິມິດຕະສະມາບັດ ອັບປະນິຫິຕະສະມາບັດ

ຄຳວ່າ ຍານທັດສະນະ ໄດ້ແກ່ ວິດຊາ ໓

ຄຳວ່າ ມັກຄະພາວະນາ ໄດ້ແກ່ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘

ຄຳວ່າ ການກະທຳມັກຜົນໃຫ້ແຈ້ງ ໄດ້ແກ່ ການກະທຳໂສດາປັດຕິຜົນໃຫ້ແຈ້ງ ການກະທຳສະກະທາຄາມີຜົນໃຫ້ແຈ້ງ ການກະທຳອະນາຄາມີຜົນໃຫ້ແຈ້ງ ການກະທຳອະຣະຫັນຕະຜົນໃຫ້ແຈ້ງ

ຄຳວ່າ ການລະກິເລດ ໄດ້ແກ່ ການລະຣາຄະ ການລະໂທສະ ການລະໂມຫະ

ຄຳວ່າ ພາວະທີ່ຈິດປອດຈາກກິເລດ ໄດ້ແກ່ ພາວະທີ່ຈິດປອດຈາກຣາຄະ ພາວະທີ່ຈິດປອດຈາກໂທສະ ພາວະທີ່ຈິດປອດຈາກໂມຫະ

ຄຳວ່າ ຄວາມຍິນດີໃນເຮືອນວ່າງ ໄດ້ແກ່ ຄວາມຍິນດີໃນເຮືອນວ່າງດ້ວຍປະຖົມຊານ ຄວາມຍິນດີໃນເຮືອນວ່າງດ້ວຍທຸຕິຍະຊານ ຄວາມຍິນດີໃນເຮືອນວ່າງດ້ວຍຕະຕິຍະຊານ ຄວາມຍິນດີໃນເຮືອນວ່າງດ້ວຍຈະຕຸດຖະຊານ

## ກ່າວອອດປະຖົມຊານ

[໗໑] ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ຕ້ອງອາບັດປາຈິດຕິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານຢູ່" ຕ້ອງອາບັດປາຈິດຕິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເປັນຜູ້ເຂົ້າປະຖົມຊານແລ້ວ" ຕ້ອງອາບັດປາຈິດຕິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ" ຕ້ອງອາບັດປາຈິດຕິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເປັນຜູ້ຊຳນານໃນປະຖົມຊານ" ຕ້ອງອາບັດປາຈິດຕິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກທຸຕິຍະຊານ - ຈະຕຸດຖະຊານ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານແລ້ວ

ฯລฯ ຂ້າພະເຈົ້າເຂົ້າຕະຕິຍະຊານ ฯລฯ ຈະຕຸດຖະຊານແລ້ວ ฯລฯ ຂ້າພະເຈົ້າເຂົ້າຢູ່ฯລฯ ຂ້າພະເຈົ້າເປັນຜູ້ເຂົ້າ

ແລ້ວ ฯລฯ ຂ້າພະເຈົ້າເປັນຜູ້ໄດ້ຈະຕຸດຖະຊານ ຂ້າພະເຈົ້າເປັນຜູ້ຊຳນານ ฯລฯ ຂ້າພະເຈົ້າເຮັດຈະຕຸດຖະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກສູນຍະຕະວິໂມກ - ອັບປະນິຫິຕະສະມາທິ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າສູນຍະຕະວິໂມກແລ້ວ ฯລฯ ຂ້າພະເຈົ້າເຂົ້າອະນິມິດຕະວິໂມກ ฯລฯ ອັບປະນິຫິຕະວິໂມກ ฯລฯ ສູນຍະຕະສະມາທິ ฯລฯອະນິມິດຕະສະມາທິ ฯລฯ ອັບປະນິຫິຕະສະມາທິແລ້ວ ฯລฯ ຂ້າພະເຈົ້າເຂົ້າຢູ່ ฯລฯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ฯລฯ ຂ້າພະເຈົ້າເປັນຜູ້ໄດ້ອັບປະນິຫິຕະສະມາທິ ฯລฯ ຂ້າພະເຈົ້າເປັນຜູ້ຊຳນານ ฯລฯ ຂ້າພະເຈົ້າເຮັດອັບປະນິຫິຕະສະມາທິໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກສູນຍະຕະສະມາບັດ - ອັບປະນິຫິຕະສະມາບັດ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າສູນຍະຕະສະມາບັດ ฯລฯ ອະນິມິດຕະສະມາບັດ ฯລฯ ອັບປະນິຫິຕະສະມາບັດແລ້ວ ฯລฯ ຂ້າພະເຈົ້າເຂົ້າຢູ່

ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອັບປະນິຫິຕະສະມາບັດຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອັບປະນິຫິຕະສະມາບັດໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

**ບອກວິດຊາ ໓**

ຄຳວ່າ ບອກ ຄືພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າວິດຊາ ໓ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ວິດຊາ ໓ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດວິດຊາ ໓ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

**ບອກສະຕິປັດຖານ ໔ - ອິດທິບາດ ໔**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າສະຕິປັດຖານ ໔ ຯລຯ ຯລຯ ສຳມັບປະທານ ໔ ຯລຯ ອິດທິບາດ ໔ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອິດທິບາດ ໔ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອິດທິບາດ ໔ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

**ບອກອິນຊີ ໕ - ພະລະ ໕**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າອິນຊີ ໕ ຯລຯ ພະລະ ໕ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ພະລະ ໕ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າກະທຳພະລະ ໕ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

**ບອກໂພດຊົງ ໗**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າໂພດຊົງ ໗ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ໂພດຊົງ ໗ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດໂພດຊົງ ໗ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

**ບອກອະຣິຍະມັກມີອົງ ໘**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າອະຣິຍະມັກມີອົງ ໘ ແລ້ວຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອະຣິຍະມັກມີອົງ ໘ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດອະຣິຍະມັກມີອົງ ໘ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກໂສດາປັດຕິຜົນ - ອະຣະຫັດຕະຜົນ

ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຂ້າພະເຈົ້າເຂົ້າໂສດາປັດຕິຜົນ ຯລຯ ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ອະຣະຫັດຕະຜົນ ຯລຯ ຂ້າພະເຈົ້າເປັນຜູ້ຊໍານານ ຯລຯ ຂ້າພະເຈົ້າເຮັດອະຣະຫັດຕະຜົນໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກການສະລະຣາຄະ ໂທສະ ແລະໂມຫະ

ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຂ້າພະເຈົ້າສະລະຣາຄະແລ້ວ ຯລຯ ຂ້າພະເຈົ້າສະລະໂທສະແລ້ວ ຂ້າພະເຈົ້າສະລະ ຄາຍ ພົ້ນ ລະ ສະລັດ ເພີກ ຖອນໂມຫະຂຶ້ນແລ້ວ" ຕ້ອງອາບັດປາຈິດຕິ

## ບອກວ່າຈິດປອດຈາກຣາຄະ ໂທສະ ແລະໂມຫະ

ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຈິດຂອງຂ້າພະເຈົ້າປອດຈາກຣາຄະ ຯລຯ ຈິດຂອງຂ້າພະເຈົ້າປອດຈາກໂທສະ ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານ - ຈະຕຸດຖະຊານໃນເຮືອນວ່າງ

ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ຯລຯ ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານໃນເຮືອນວ່າງແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ຈະຕຸດຖະຊານ ຯລຯ ຂ້າພະເຈົ້າເປັນຜູ້ຊໍານານ ຯລຯ ຂ້າພະເຈົ້າເຮັດຈະຕຸດຖະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານແລະທຸຕິຍະຊານ

[໗໔] ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະທຸຕິຍະຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະທຸຕິຍະຊານຯລຯ ຂ້າພະເຈົ້າເປັນຜູ້ຊໍານານຯລຯ ຂ້າພະເຈົ້າເຮັດປະຖົມຊານແລະ ທຸຕິຍະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານແລະຕະຕິຍະຊານ - ຈະຕຸດຖະຊານ

ຄໍາວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສໍາບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະ ຕະຕິຍະຊານ ຯລຯ ປະຖົມຊານແລະຈະຕຸດຖະຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ຯລຯ ຂ້າພະເຈົ້າ

ເປັນຜູ້ເຂົ້າແລ້ວຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະຈະຕຸດຖະຊານຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານ ແລະ ຈະຕຸດຖະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕີ

**ບອກປະຖົມຊານແລະສູນຍະຕະວິໂມກ - ອັບປະນິຫິຕະສະມາທິ**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະສູນຍະຕະວິໂມກ ຯລຯ ອະນິມິດຕະວິໂມກ ຯລຯ ອັບປະນິຫິຕະວິໂມກ ຯລຯ ສູນຍະຕະສະມາທິ ຯລຯ ອະນິມິດຕະສະມາທິ ຯລຯ ອັບປະນິຫິຕະສະມາທິແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະອັບປະນິຫິຕະສະມາທິ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານ ແລະ ອັບປະນິຫິຕະສະມາທິໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕີ

**ບອກປະຖົມຊານແລະສູນຍະຕະສະມາບັດ - ອັບປະນິຫິຕະສະມາບັດ**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະສູນຍະຕະສະມາບັດ ຯລຯ ອະນິມິດຕະສະມາບັດ ຯລຯ ອັບປະນິຫິຕະສະມາບັດແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະອັບປະນິຫິຕະສະມາບັດຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານ ແລະ ອັບປະນິຫິຕະສະມາບັດໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕີ

**ບອກປະຖົມຊານແລະວິດຊາ ໓**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະວິດຊາ ໓ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະວິດຊາ ໓ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານແລະວິດຊາ ໓ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕີ

**ບອກປະຖົມຊານແລະສະຕິປັດຖານ ໔ - ອິດທິບາດ ໔**

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ແລະສະຕິປັດຖານ ໔ ຯລຯ ສຳມັບປະທານ ໔ ຯລຯ ອິດທິບາດ ໔ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະອິດທິບາດ ໔ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານຯລຯ ຂ້າພະເຈົ້າເຮັດປະຖົມຊານແລະອິດທິບາດ ໔ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕີ

## ບອກປະຖົມຊານແລະອິນຊີ ໕ - ພະລະ ໕

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ແລະ ອິນຊີ ໕ ຯລຯ ພະລະ ໕ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະພະລະ ໕ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານແລະ ພະລະ ໕ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານແລະໂພດຊົງ ໗

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະໂພດຊົງ ໗ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະໂພດຊົງ ໗ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານແລະໂພດຊົງ ໗ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານແລະອະຣິຍະມັກມີອົງ ໘

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະອະຣິຍະມັກມີອົງ ໘ ແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະອະຣິຍະມັກມີອົງ ໘ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານແລະອະຣິຍະມັກມີອົງ ໘ ໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານແລະໂສດາປັດຕິຜົນ - ອະຣະຫັດຕະຜົນ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລະໂສດາປັດຕິຜົນ ຯລຯ ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານແລະອະຣະຫັດຕະຜົນ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດປະຖົມຊານ ແລະ ອະຣະຫັດຕະຜົນໃຫ້ແຈ້ງແລ້ວ" ຕ້ອງອາບັດປາ ຈິດຕິ

## ບອກປະຖົມຊານ - ສະລະຣາຄະ ໂທສະ ແລະໂມຫະ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ຂ້າພະເຈົ້າ ສະລະຣາຄະ ຂ້າພະເຈົ້າສະລະໂທສະແລ້ວ ຂ້າພະເຈົ້າສະລະ ຄາຍ ພົ້ນ ລະ ສະລັດເພີກ ຖອນໂມຫະ ຂຶ້ນແລ້ວ" ຕ້ອງອາບັດປາຈິດຕິ

## ບອກປະຖົມຊານ - ຈິດປອດຈາກຣາຄະ ໂທສະ ແລະໂມຫະ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຈິດຂອງຂ້າພະເຈົ້າປອດຈາກຣາຄະ ຈິດຂອງຂ້າພະເຈົ້າປອດຈາກໂທສະ ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ຕ້ອງອາບັດປາຈິດຕິ

## ບອກທຸຕິຍະຊານແລະຈະຕຸດຖະຊານ

[໗໓] ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານ ແລະ ຕະຕິຍະຊານ ທຸຕິຍະຊານ ແລະ ຈະຕຸດຖະຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ທຸຕິຍະຊານ ແລະ ຈະຕຸດຖະຊານ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດທຸຕິຍະຊານ ແລະ ຈະຕຸດຖະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ

## ບອກທຸຕິຍະຊານແລະສູນຍະຕະວິໂມກ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານ ແລະສູນຍະຕະວິໂມກແລ້ວ ຯລຯ ແລະ ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ຕ້ອງອາບັດປາຈິດຕິ

## ບອກທຸຕິຍະຊານແລະປະຖົມຊານ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານ ແລະ ປະຖົມຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຂ້າພະເຈົ້າເປັນຜູ້ໄດ້ ທຸຕິຍະຊານແລະປະຖົມຊານ ຯລຯ ຂ້າພະເຈົ້າເປັນຜູ້ຊຳນານ ຯລຯ ຂ້າພະເຈົ້າເຮັດທຸຕິຍະຊານ ແລະ ປະຖົມຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ ຯລຯ

(ມູລະໄນທ່ານຫຍໍ້ໄວ້ແລ້ວ)

## ບອກວ່າຈິດປອດຈາກໂມຫະແລະປະຖົມຊານ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຈິດຂອງຂ້າພະເຈົ້າປອດຈາກໂມຫະ ແລະຂ້າພະເຈົ້າເຂົ້າປະຖົມຊານແລ້ວ ຯລຯ ຂ້າພະເຈົ້າເຂົ້າຢູ່ ຯລຯ ຂ້າພະເຈົ້າເປັນຜູ້ເຂົ້າແລ້ວ ຯລຯ ຈິດຂອງຂ້າພະເຈົ້າປອດຈາກໂມຫະ ແລະ ຂ້າພະເຈົ້າເປັນຜູ້ໄດ້ປະຖົມຊານ ຂ້າພະເຈົ້າເປັນຜູ້ຊຳນານ ຈິດຂອງຂ້າພະເຈົ້າປອດຈາກໂມຫະ ແລະ ຂ້າພະເຈົ້າເຮັດປະຖົມຊານໃຫ້ແຈ້ງແລ້ວ" ຕ້ອງອາບັດປາຈິດຕິ ຯລຯ

### ບອກວ່າຈິດປອດຈາກໂມຫະແລະໂທສະ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຈິດຂອງຂ້າພະເຈົ້າປອດຈາກໂມຫະ ແລະຈິດຂອງຂ້າພະເຈົ້າປອດຈາກໂທສະ" ຕ້ອງອາບັດປາຈິດຕິ ฯລฯ

### ບອກປະຖົມຊານ - ຈິດປອດຈາກຣາຄະ ໂທສະ ແລະໂມຫະ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ທຸຕິຍະ ຊານ ຕະຕິຍະຊານ ຈະຕຸດຖະຊານ ສູນຍະຕະວິໂມກ ອະນິມິດຕະວິໂມກ ອັບປະນິຫິຕະວິໂມກ ສູນຍະຕະສະມາທິ ອະນິມິດຕະສະມາທິ ອັບປະນິຫິຕະສະມາທິ ສູນຍະຕະສະມາບັດ ອະນິມິ ດຕະສະມາບັດ ອັບປະນິຫິຕະສະມາບັດ ວິດຊາ ๓ ສະຕິປັດຖານ ๔ ສຳມັບປະທານ ๔ ອິດທິ ບາດ ๔ ອິນຊີ ๕ ພະລະ ๕ ໂພດຊົງ ๗ ອະຣິຍະມັກມີອົງ ๘ ໂສດາປັດຕິຜົນ ສະກະທາຄາມິ ຜົນ ອະນາຄາມິຜົນ ແລະອະຣະຫັດຕະຜົນ ฯລฯ ຂ້າພະເຈົ້າສະລະຣາຄະແລ້ວ ຂ້າພະເຈົ້າ ສະລະໂທສະແລ້ວ ແລະສະລະ ຄາຍ ພົ້ນ ລະ ສະລັດ ເພີກ ຖອນໂມຫະຂຶ້ນແລ້ວ" ຕ້ອງອາບັ ດປາຈິດຕິ

## ວັດຖຸກາມະວາຣະກະຖາ

### ປະສົງຈະບອກປະຖົມຊານ

[໗໔] ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າ ເຂົ້າປະ ຖົມຊານແລ້ວ" ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາ ຈິດຕິ ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

### ປະສົງຈະບອກປະຖົມຊານ - ຈິດປອດຈາກຣາຄະ ໂທສະ ແລະໂມຫະ

ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານ ແລ້ວ" ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າຕະຕິຍະຊານ ฯລฯ ຈະຕຸດຖະຊານ ສູນຍະຕະວິໂມກ ອະນິມິດຕະວິໂມກ ອັບປະນິຫິຕະວິໂມກ ສູນຍະຕະສະມາທິ ອະນິມິດຕະສະມາທິ ອັບປະນິຫິຕະ ສະມາທິ ສູນຍະຕະສະມາບັດ ອະນິມິດຕະສະມາບັດ ອັບປະນິຫິຕະສະມາບັດ ວິດຊາ ๓ ສະຕິ ປັດຖານ ๔ ສຳມັບປະທານ ๔ ອິດທິບາດ ๔ ອິນຊີ ๕ ພະລະ ๕ ໂພດຊົງ ๗ ອະຣິຍະມັກມີອົງ ๘ ໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ແລະ ອະຣະຫັດຕະຜົນແລ້ວ ฯລฯ ຂ້າ ພະເຈົ້າສະລະ ຣາຄະແລ້ວ ຂ້າພະເຈົ້າສະລະໂທສະແລ້ວ ແລະ ຂ້າພະເຈົ້າສະລະ ຄາຍ ພົ້ນ ລະ ສະລັດ ເພີກ ຖອນໂມຫະ ຂຶ້ນແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ ເຂົ້າໃຈ ຕ້ອງອາບັດທຸກກົດ

## ປະສົງຈະບອກທຸຕິຍະຊານ - ຈິດປອດຈາກໂມຫະ

ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານແລ້ວ" ແຕ່ກ່າວວ່າ ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

## ປະສົງຈະບອກທຸຕິຍະຊານ

ຄຳວ່າ ບອກ ຄື ພິກຂຸຕ້ອງການຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານແລ້ວ" ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

(ມູລະໄນທ່ານຫຍໍ້ໄວ້ແລ້ວ)

## ປະສົງຈະບອກວ່າຈິດປອດຈາກໂມຫະ

ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

ຄຳວ່າ ບອກ ຄື ພິກຂຸຕ້ອງການຈະກ່າວແກ່ອະນຸປະສຳບັນວ່າ "ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ແຕ່ກ່າວວ່າ "ຈິດຂອງຂ້າພະເຈົ້າປອດຈາກໂທສະ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

## ປະສົງຈະບອກປະຖົມຊານ ຯລຯ

ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າປະຖົມຊານທຸຕິຍະຊານ ຕະຕິຍະຊານ ຈະຕຸດຖະຊານແລ້ວ ຯລຯ ຈິດຂອງຂ້າພະເຈົ້າປອດຈາກໂມຫະ"

ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອ ເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

## ປະສົງຈະບອກທຸຕິຍະຊານ ຯລຯ

ຄຳວ່າ ບອກ ຄື ພິກຂຸປະສົງຈະກ່າວແກ່ອະນຸປະສຳບັນວ່າ "ຂ້າພະເຈົ້າເຂົ້າທຸຕິຍະຊານຕະຕິຍະຊານ ຈະຕຸດຖະຊານແລ້ວ ຯລຯ ຈິດຂອງຂ້າພະເຈົ້າປອດຈາກໂມຫະ" ແຕ່ກ່າວວ່າ "ຂ້າພະເຈົ້າເຂົ້າປະຖົມຊານແລ້ວ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດປາຈິດຕິ ເມື່ອເຂົາບໍ່ເຂົ້າໃຈຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າປະຖົມຊານ

[໗໕] ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດຢູ່ໃນວິຫານ ຂອງທ່ານ ພິກຂຸອົງນັ້ນເຂົ້າປະຖົມຊານແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນ ຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ປະຖົມຊານ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນເຮັດປະຖົມຊານໃຫ້ແຈ້ງແລ້ວ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າທຸຕິຍະຊານ ຯລຯ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເຂົ້າທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ທຸຕິຍະຊານ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານຯລຯ ພິກຂຸອົງນັ້ນເຮັດຈະຕຸດຖະຊານໃຫ້ແຈ້ງແລ້ວ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າສູນຍະຕະວິໂມກ ຯລຯ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເຂົ້າສູນຍະຕະວິໂມກ ຯລຯ ອະນິມິດຕະວິໂມກ ອັບປະນິຫິຕະວິໂມກ ສູນຍະຕະສະມາທິ ອະນິມິດຕະສະມາທິ ອັບປະນິຫິຕະສະມາທິແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ອັບປະນິຫິຕະສະມາທິ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນເຮັດອັບປະນິຫິຕະສະມາທິໃຫ້ແຈ້ງແລ້ວ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າສູນຍະຕະສະມາບັດ ຯລຯ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດ ຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເຂົ້າສູນຍະຕະສະມາບັດ ຯລຯ ອະນິມິດຕະສະມາບັດ ອັບປະນິຫິຕະສະມາບັດແລ້ວຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ອັບປະນິຫິຕະສະມາບັດ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນ ເຮັດອັບປະນິຫິຕະສະມາບັດໃຫ້ແຈ້ງແລ້ວ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າວິດຊາ ໓ ຯລຯ

ຄຳວ່າ ບອກ ຄື ພິກຂຸກ່າວອອດອະນຸປະສຳບັນວ່າ "ພິກຂຸອົງໃດ ຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເຂົ້າວິດຊາ ໓ ຯລຯ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ແລະອະຣະຫັດຕະຜົນແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ

ພິກຂຸອົງນັ້ນສະລະຣາຄະແລ້ວ ພິກຂຸອົງນັ້ນສະລະໂທສະແລ້ວ ພິກຂຸອົງນັ້ນສະລະ ຄາຍ ພົ້ນ ລະ ສະລັດ ເພີກ ຖອນໂມຫະຂຶ້ນແລ້ວ ຈິດຂອງພິກຂຸອົງນັ້ນປອດຈາກຣາຄະ ຈິດຂອງພິກຂຸອົງນັ້ນປອດຈາກໂທສະ ຈິດຂອງພິກຂຸອົງນັ້ນປອດຈາກໂມຫະ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າປະຖົມຊານໃນເຮືອນວ່າງ ຯລຯ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານ ພິກຂຸອົງນັ້ນເຂົ້າປະຖົມຊານ ຯລຯ ທຸຕິຍະຊານ ຕະຕິຍະຊານ ຈະຕຸດຖະຊານໃນເຮືອນວ່າງແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນ ເຮັດຈະຕຸດຖະຊານໃຫ້ແຈ້ງໃນເຮືອນວ່າງແລ້ວ" ຕ້ອງອາບັດທຸກກົດ

## ບອກວ່າພິກຂຸອື່ນເຂົ້າຈະຕຸດຖະຊານໃນເຮືອນວ່າງ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ພິກຂຸອົງໃດ ໃຊ້ສອຍຈີວອນຂອງທ່ານ ພິກຂຸອົງໃດສັນບິນທະບາດຂອງທ່ານ ພິກຂຸອົງໃດໃຊ້ສອຍເສນາສະນະຂອງທ່ານ ພິກຂຸອົງໃດບໍຣິໂພກຄິລານະປັດໄຈເພສັດບໍຣິຂານຂອງທ່ານ ພິກຂຸອົງນັ້ນເຂົ້າຈະຕຸດຖະຊານໃນເຮືອນວ່າງແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນເຮັດຈະຕຸດຖະຊານໃຫ້ແຈ້ງໃນເຮືອນວ່າງແລ້ວ" ຕ້ອງອາບັດທຸກກົດ

[໗໙] ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ວິຫານຂອງທ່ານພິກຂຸອົງໃດໃຊ້ສອຍແລ້ວ ຈີວອນຂອງທ່ານພິກຂຸອົງໃດໃຊ້ສອຍແລ້ວ ບິນທະບາດຂອງທ່ານພິກຂຸອົງໃດສັນແລ້ວ ເສນາສະນະຂອງທ່ານພິກຂຸອົງໃດໃຊ້ສອຍແລ້ວ ຄິລານະປັດໄຈເພສັດບໍຣິຂານຂອງທ່ານພິກຂຸອົງໃດບໍຣິໂພກແລ້ວ ພິກຂຸອົງນັ້ນເຂົ້າຈະຕຸດຖະຊານໃນເຮືອນວ່າງແລ້ວ ຯລຯ ພິກຂຸອົງນັ້ນເຂົ້າຢູ່ ຯລຯ ພິກຂຸອົງນັ້ນເປັນຜູ້ເຂົ້າແລ້ວ ຯລຯ ພິກຂຸອົງນັ້ນເປັນຜູ້ໄດ້ ຯລຯ ພິກຂຸອົງນັ້ນເປັນຜູ້ຊຳນານ ຯລຯ ພິກຂຸອົງນັ້ນເຮັດຈະ ຕຸດຖະຊານໃຫ້ແຈ້ງໃນເຮືອນວ່າງແລ້ວ" ຕ້ອງອາບັດທຸກກົດ

ຄຳວ່າ ບອກ ຄື ພິກຂຸກ່າວແກ່ອະນຸປະສຳບັນວ່າ "ທ່ານອາໄສພິກຂຸອົງໃດແລ້ວໄດ້ຖວາຍວິຫານ ໄດ້ຖວາຍຈີວອນ ໄດ້ຖວາຍບິນທະບາດ ໄດ້ຖວາຍເສນາສະນະ ໄດ້ຖວາຍຄິລານະປັດໄຈເພສັດບໍຣິຂານ ພິກຂຸອົງນັ້ນເຂົ້າແລ້ວ ກຳລັງເຂົ້າ ເປັນຜູ້ເຂົ້າຈະຕຸດຖະຊານໃນເຮືອນວ່າງ ພິກຂຸອົງນັ້ນເປັນຜູ້ໄດ້ ເປັນຜູ້ຊຳນານ ເຮັດໃຫ້ແຈ້ງຈະຕຸດຖະຊານໃນເຮືອນວ່າງແລ້ວ" ຕ້ອງອາບັດທຸກກົດ

**ອະນາປັດຕິວານ**

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໗] ໑. ພິກຂຸບອກອຸດຕະຣິມະນຸດສະທຳທີ່ມີຈິງແກ່ອຸປະສຳບັນ
໔. ພິກຂຸຕົ້ນບັນຍັດ

**ພູຕາໂຣຈະນະສິກຂາບົດທີ ๙ ຈົບ**

# ໑. ມຸສາວາທະວັກ

# ໙. ທຸດຖຸນລາໂຣຈະນະສິກຂາບົດ

## ວ່າດ້ວຍການບອກອາບັດຊົ່ວຫຍາບ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໗๙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຜິດຖຽງກັບພວກພິກຂຸສັບພັກຄີ ທ່ານຕ້ອງອາບັດສັງຄາທິເສດທີ່ຈິງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງຂໍສົງຢູ່ປະຣິວາດເພື່ອອອກຈາກອາບັດນັ້ນ ສົງໃຫ້ທ່ານຢູ່ປະຣິວາດເພື່ອອອກຈາກອາບັດນັ້ນ

ສະໄໝນັ້ນ ໃນນະຄອນສາວັດຖີມີສັງຄະພັດຂອງສະມາຄົມໜຶ່ງເກີດຂຶ້ນ ທ່ານພຣະອຸປະນັນທະ ສາກະຍະບຸດກຳລັງຢູ່ປະຣິວາດ ຈຶ່ງນັ່ງ ໃນອາສະນະສຸດທ້າຍໃນໂຮງອາຫານ

ພວກພິກຂຸສັບພັກຄີກ່າວກັບອຸປາສົກເຫຼົ່ານັ້ນວ່າ "ທ່ານພຣະອຸປະນັນທະສາກະຍະບຸດເປັນພຣະປະຈຳຕະກູນທີ່ພວກທ່ານຍ້ອງຍໍ ໃຊ້ມືທີ່ຈັບເຂົ້າທີ່ເຂົາຖວາຍດ້ວຍສັດທາພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ທ່ານຕ້ອງອາບັດທີ່ຈິງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ ຈຶ່ງຂໍສົງຢູ່ປະຣິວາດເພື່ອອອກຈາກອາບັດນັ້ນ ສົງໃຫ້ທ່ານຢູ່ປະຣິວາດເພື່ອອອກຈາກອາບັດນັ້ນ ທ່ານກຳລັງຢູ່ປະຣິວາດ ຈຶ່ງນັ່ງໃນອາສະນະສຸດທ້າຍ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄືວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນ ແມ່ນບໍ?" ພວກພິກຂຸສັບພັກຄືທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯลฯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງບອກອາບັດຊົ່ວຫຍາບ ຂອງພິກຂຸແກ່ອະນຸປະສຳບັນແນວນັ້ນນໍ? ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯลฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໘໙] ກໍ ພິກຂຸໃດ ບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ຮັບສົມມຸດ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໙໐] ຄຳວ່າ ກໍฯลฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯลฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຂອງພິກຂຸ ຄື ຂອງພິກຂຸອົງອື່ນ

ອາບັດທີ່ຊື່ວ່າ ຊົ່ວຫຍາບ ໄດ້ແກ່ ອາບັດປາຣາຊິກ ໔ ສິກຂາບົດ ແລະອາບັດສັງຄາທິເສດ ໑໓ ສິກຂາບົດ

ທີ່ຊື່ວ່າ ອະນຸປະສຳບັນ ຄື ຍົກເວັ້ນພິກຂຸແລະພິກຂຸນີ ນອກນັ້ນຊື່ວ່າອະນຸປະສຳບັນ

ຄຳວ່າ ບອກ ຄື ບອກແກ່ສະຕີ ຫຼື ແກ່ບຸຣຸດ ແກ່ຄະລືຫັດ ຫຼື ແກ່ບັນພະຊິດ

ຄຳວ່າ ເວັ້ນໄວ້ແຕ່ພິກຂຸໄດ້ຮັບສົມມຸດ ຄື ຍົກເວັ້ນພິກຂຸທີ່ໄດ້ຮັບມອບໝາຍຈາກສົງ

## ບົດພາຊະນີ

ພິກຂຸທີ່ໄດ້ຮັບສົມມຸດໃຫ້ບອກ ກຳນົດອາບັດ ບໍ່ກຳນົດຕະກູນກໍມີ

ພິກຂຸທີ່ໄດ້ຮັບສົມມຸດໃຫ້ບອກ ກຳນົດຕະກູນ ບໍ່ກຳນົດອາບັດກໍມີ

ພິກຂຸທີ່ໄດ້ຮັບສົມມຸດໃຫ້ບອກ ກຳນົດອາບັດ ແລະ ກຳນົດຕະກູນກໍມີ

ພິກຂຸທີ່ໄດ້ຮັບສົມມຸດໃຫ້ບອກ ບໍ່ກຳນົດອາບັດ ແລະ ບໍ່ກຳນົດຕະກູນກໍມີ

ທີ່ຊື່ວ່າ ກຳນົດອາບັດ ຄື ສົງກຳນົດອາບັດວ່າ ເພິ່ງບອກຕາມຈຳນວນອາບັດເທົ່ານີ້

ທີ່ຊື່ວ່າ ກຳນົດຕະກູນ ຄື ສົງກຳນົດຕະກູນວ່າ ເພິ່ງບອກໃນຕະກູນມີປະມານເທົ່ານີ້

ທີ່ຊື່ວ່າ ກຳນົດອາບັດ ແລະ ກຳນົດຕະກູນ ຄື ສົງກຳນົດອາບັດ ແລະ ກຳນົດຕະກູນໄວ້ວ່າ ເພິ່ງບອກຕາມຈຳນວນອາບັດເທົ່ານີ້ ໃນຕະກູນມີປະມານເທົ່ານີ້

ທີ່ຊື່ວ່າ ບໍ່ກຳນົດອາບັດແລະບໍ່ກຳນົດຕະກູນ ຄື ສົງບໍ່ກຳນົດອາບັດແລະບໍ່ກຳນົດຕະກູນໄວ້ວ່າ ເພິ່ງບອກຕາມຈຳນວນອາບັດເທົ່ານີ້ ໃນຕະກູນມີປະມານເທົ່ານີ້

[໗໑] ໃນການກຳນົດອາບັດ ພິກຂຸບອກອາບັດອື່ນນອກຈາກອາບັດທີ່ສົງກຳນົດໄວ້ ຕ້ອງອາບັດປາຈິດຕີ

ໃນການກຳນົດຕະກູນ ພິກຂຸບອກໃນຕະກູນອື່ນນອກຈາກຕະກູນທີ່ສົງກຳນົດໄວ້ ຕ້ອງອາບັດປາຈິດຕີ

ໃນການກຳນົດອາບັດ ແລະ ໃນການກຳນົດຕະກູນ ພິກຂຸບອກອາບັດອື່ນ ນອກຈາກອາບັດທີ່ສົງກຳນົດໄວ້ ແລະໃນຕະກູນອື່ນນອກຈາກຕະກູນທີ່ສົງກຳນົດໄວ້ ຕ້ອງອາບັດປາຈິດຕີ

ໃນກໍລະນີທີ່ບໍ່ໄດ້ກຳນົດອາບັດ ແລະ ໃນກໍລະນີທີ່ບໍ່ໄດ້ກຳນົດຕະກູນ ບໍ່ຕ້ອງອາບັດ

## ຕິກະປາຈິດຕີ

[໗໔] ອາບັດຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດຊົ່ວຫຍາບ ບອກແກ່ອະນຸປະສຳບັນ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ຮັບສົມມຸດ

ອາບັດຊົ່ວຫຍາບ ພິກຂຸບໍ່ແນ່ໃຈ ບອກແກ່ອະນຸປະສຳບັນ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ຮັບສົມມຸດ

ອາບັດຊົ່ວຫຍາບ ພິກຂຸສຳຄັນວ່າບໍ່ເປັນອາບັດຊົ່ວຫຍາບ ບອກແກ່ອະນຸປະສຳບັນ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພິກຂຸໄດ້ຮັບສົມມຸດ

## ທຸກກົດ

ພິກຂຸບອກອາບັດບໍ່ຊົ່ວຫຍາບ ຕ້ອງອາບັດທຸກກົດ

ພິກຂຸບອກຄວາມປະພຶດຊົ່ວຫຍາບ ຫຼື ບໍ່ຊົ່ວຫຍາບແກ່ອະນຸປະສຳບັນຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດຊົ່ວຫຍາບ ຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດບໍ່ຊົ່ວຫຍາບ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖] ໑. ພິກຂຸບອກເລື້ອງທີ່ເກີດແຕ່ບໍ່ບອກອາບັດ
໒. ພິກຂຸບອກອາບັດແຕ່ບໍ່ບອກເລື້ອງທີ່ເກີດ
໓. ພິກຂຸຜູ້ໄດ້ຮັບສົມມຸດ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ທຸດຖຸນລາໂຣຈະນະສິກຂາບົດທີ ໗ ຈົບ**

# ໑. ມຸສາວາທະວັກ

## ໑໐. ປະຖະວີຂະນະນະສິກຂາບົດ

### ວ່າດ້ວຍການຂຸດດິນ

### ເລື້ອງພິກຂຸຊາວເມືອງອາລະວີ

[໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນອັກຄາລະວະເຈດີ ເຂດເມືອງອາລະວີ ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີຊ່ອຍກັນກໍ່ສ້າງ ຂຸດແດ່ ໃຊ້ໃຫ້ຂຸດແດ່ເຊິ່ງດິນ ພວກຊາວບ້ານຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍ ສາກະຍະບຸດຈຶ່ງຂຸດແດ່ ໃຊ້ໃຫ້ຂຸດແດ່ເຊິ່ງດິນແນວນັ້ນນໍ ພຣະສະມະນະເຊື້ອສາຍສາກະຍະບຸດບຽດບຽນຊີວະເຊິ່ງມີອິນຊີດຽວ

ພວກພິກຂຸໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຊາວເມືອງອາລະວີ ຈຶ່ງຂຸດແດ່ ໃຊ້ໃຫ້ຂຸດແດ່ເຊິ່ງດິນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸຊາວເມືອງອາລະວີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຂຸດແດ່ ໃຊ້ໃຫ້ຂຸດແດ່ເຊິ່ງດິນ

ແມ່ນບໍ?" ພິກຂຸຊາວເມືອງອາລະວີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຂຸດແດ່ ໃຊ້ໃຫ້ຂຸດແດ່ເຊິ່ງດິນນໍ ໂມຄະບຸຣຸດທັງຫຼາຍ ພວກຊາວບ້ານສຳຄັນວ່າດິນມີຊີວະ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໙໘] ກໍ ພິກຂຸໃດ ຂຸດ ຫຼື ໃຊ້ໃຫ້ຂຸດເຊິ່ງດິນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸຊາວເມືອງອາລະວີ ຈົບ

## ສິກຂາບົດວິພັງ

[໙໙] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີ ພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ດິນ ໄດ້ແກ່ ດິນ ໒ ຊະນິດ ຄື (໑) ດິນແທ້ (໒) ດິນບໍ່ແທ້

ທີ່ຊື່ວ່າ ດິນແທ້ ຄື ດິນລ້ວນ ດິນໜຽວລ້ວນ ດິນມີຫີນປະສົມບໍ່ຫຼາຍ ດິນມີແຮ່ປະສົມບໍ່ຫຼາຍ ດິນມີກະເບື້ອງປະສົມບໍ່ຫຼາຍ ດິນມີກ້ອນຫີນນ້ອຍປະສົມບໍ່ຫຼາຍ ດິນມີຊາຍປະສົມບໍ່ຫຼາຍ ດິນລ້ວນເປັນສ່ວນຫຼາຍ ດິນໜຽວເປັນສ່ວນຫຼາຍ ແມ່ນດິນທີ່ຍັງບໍ່ເຜົາໄຟກໍຮຽກວ່າ ດິນແທ້ກອງດິນລ້ວນ ຫຼື ດິນໜຽວທີ່ຝົນຕົກໃສ່ເກີນ ໔ ເດືອນກໍຮຽກວ່າ ດິນແທ້

ທີ່ຊື່ວ່າ ດິນບໍ່ແທ້ ຄື ຫີນລ້ວນ ດິນມີແຮ່ລ້ວນ ດິນມີກະເບື້ອງລ້ວນ ດິນມີກ້ອນຫີນນ້ອຍລ້ວນ ດິນມີຊາຍລ້ວນ ດິນມີດິນລ້ວນປະສົມບໍ່ຫຼາຍ ດິນມີດິນໜຽວປະສົມບໍ່ຫຼາຍ ດິນມີຫີນຫຼາຍ ດິນມີແຮ່ຫຼາຍ ດິນມີກະເບື້ອງຫຼາຍ ດິນມີກ້ອນຫີນນ້ອຍຫຼາຍ ດິນມີຊາຍຫຼາຍ ແມ່ນດິນທີ່ເຜົາໄຟແລ້ວກໍຮຽກວ່າ ດິນບໍ່ແທ້ ກອງດິນລ້ວນ ຫຼື ດິນໜຽວທີ່ຝົນຕົກໃສ່ຍັງບໍ່ເຖິງ ໔ ເດືອນກໍຮຽກວ່າ ດິນບໍ່ແທ້

ຄຳວ່າ ຂຸດ ຄື ພິກຂຸຂຸດເອງ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ຂຸດ ຄື ພິກຂຸໃຊ້ຜູ້ອື່ນໃຫ້ຂຸດ ຕ້ອງອາບັດປາຈິດຕີ

ພິກຂຸສັ່ງຄັ້ງດຽວ ເຂົາຂຸດຫຼາຍຄັ້ງ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໘໗] ດິນ ພິກຂຸສຳຄັນວ່າເປັນດິນ ຂຸດ ຫຼື ໃຊ້ໃຫ້ຂຸດ ທຳລາຍຫຼືໃຊ້ໃຫ້ທຳລາຍ ເຜົາຫຼືໃຊ້ໃຫ້ເຜົາ ຕ້ອງອາບັດປາຈິດຕີ

ດິນ ພິກຂຸບໍ່ແນ່ໃຈ ຂຸດຫຼືໃຊ້ໃຫ້ຂຸດ ທຳລາຍຫຼືໃຊ້ໃຫ້ທຳລາຍ ເຜົາຫຼືໃຊ້ໃຫ້ເຜົາ ຕ້ອງອາບັດທຸກກົດ

ດິນ ພິກຂຸສຳຄັນວ່າບໍ່ແມ່ນດິນ ຂຸດຫຼືໃຊ້ໃຫ້ຂຸດ ທຳລາຍຫຼືໃຊ້ໃຫ້ທຳລາຍ ເຜົາຫຼືໃຊ້ໃຫ້ເຜົາບໍ່ຕ້ອງອາບັດ

ບໍ່ແມ່ນດິນ ພິກຂຸສຳຄັນວ່າເປັນດິນ ຕ້ອງອາບັດທຸກກົດ

ບໍ່ແມ່ນດິນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນດິນ ພິກຂຸສຳຄັນວ່າບໍ່ແມ່ນດິນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໘] ໑. ພິກຂຸກ່າວວ່າ "ທ່ານຈົ່ງຮູ້ ຈົ່ງໃຫ້ ຈົ່ງນຳສິ່ງນີ້ມາ ເຮົາຕ້ອງການສິ່ງນີ້ ທ່ານຈົ່ງເຮັດສິ່ງນີ້ໃຫ້ເປັນກັບປິຍະ

໒. ພິກຂຸບໍ່ຈົງໃຈ

໓. ພິກຂຸບໍ່ມີສະຕິ

໔. ພິກຂຸບໍ່ຮູ້

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ປະຖະວີຂະນະນະສິກຂາບົດທີ ໑໐ ຈົບ**

**ມຸສາວາທະວັກທີ ໑ ຈົບ**

## ລວມສິກຂາບົດທີ່ມີໃນມຸສາວາທະວັກ

ມຸສາວາທະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ມຸສາວາທະສິກຂາບົດ | ວ່າດ້ວຍການກ່າວຕົວະ |
| ໒. ໂອມະສະວາທະສິກຂາບົດ | ວ່າດ້ວຍການກ່າວສຽດສີ |
| ໓. ເປສຸນຍະສິກຂາບົດ | ວ່າດ້ວຍການກ່າວສໍ່ສຽດ |

໔. ປະທະໂສທຳມະສິກຂາບົດ ວ່າດ້ວຍການໃຫ້ກ່າວທຳເປັນບົດ ໆ
໕. ສະຫະເສີຍຍະສິກຂາບົດ ວ່າດ້ວຍການນອນຮ່ວມກັນ
໖. ທຸຕິຍະສະຫະເສີຍຍະສິກຂາບົດ ວ່າດ້ວຍການນອນຮ່ວມກັນຂໍ້ທີ ໔
໗. ທຳມະເທສະນາສິກຂາບົດ ວ່າດ້ວຍການສະແດງທຳ
໘. ພູຕາໂຣຈະນະສິກຂາບົດ ວ່າດ້ວຍການບອກອຸດຕະຣິມະນຸດສະທຳທີ່ມີຈິງ
໙. ທຸດຖຸນລາໂຣຈະນະສິກຂາບົດ ວ່າດ້ວຍການບອກອາບັດຊົ່ວຫຍາບ
໑໐. ປະຖະວີຂະນະນະສິກຂາບົດ ວ່າດ້ວຍການຂຸດດິນ

# ໔. ພູຕະຄາມະວັກ

## ໝວດວ່າດ້ວຍພູຕະຄາມ

## ໑. ພູຕະຄາມະສິກຂາບົດ

### ວ່າດ້ວຍການພາກພູຕະຄາມ

### ເລື່ອງພິກຂຸຊາວເມືອງອາລະວີ

[໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນອັກຄາລະວະເຈດີ ເຂດເມືອງອາລະວີ ຄັ້ງນັ້ນ ພວກພິກຂຸຊາວເມືອງອາລະວີເຮັດການກໍ່ສ້າງ ຕັດແດ່ ໃຊ້ໃຫ້ຕັດແດ່ເຊິ່ງຕົ້ນໄມ້ ພິກຂຸຊາວເມືອງອາລະວີອົງໜຶ່ງກຳລັງຕັດຕົ້ນໄມ້ ເທວະດາຜູ້ສິງຢູ່ທີ່ຕົ້ນໄມ້ໄດ້ກ່າວກັບພິກຂຸນັ້ນວ່າ "ທ່ານຜູ້ຈະເລີນ ທ່ານຕ້ອງການຈະສ້າງທີ່ຢູ່ຂອງທ່ານກໍໂຜດຢ່າຕັດຕົ້ນໄມ້ທີ່ເປັນທີ່ຢູ່ຂອງຂ້າພະເຈົ້າເລີຍ" ພິກຂຸນັ້ນບໍ່ຟັງຂືນຕັດຕົ້ນໄມ້ນັ້ນຈົນລົ້ມ ໄດ້ຟັນຖືກແຂນລູກຂອງເທວະດາ

ໃນບັດນັ້ນ ເທວະດາໄດ້ມີຄວາມຄິດວ່າ "ເຮົາຄວນຈະຂ້າພິກຂຸນີ້ຖິ້ມໃນທີ່ນີ້ດີບໍ່ນໍ?" ແຕ່ແລ້ວໄດ້ມີຄວາມຄິດວ່າ "ການທີ່ເຮົາຈະຂ້າພິກຂຸໃນທີ່ນີ້ບໍ່ສົມຄວນ ທາງທີ່ດີ ເຮົາຄວນນຳເລື່ອງນີ້ໄປຂາບ ທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຊາບ" ຈຶ່ງໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນເລື່ອງນັ້ນໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າປະທານສາທຸການວ່າ "ເທວະດາ ດີແລ້ວ ດີຫຼາຍແທ້ ທີ່ທ່ານບໍ່ຂ້າພິກຂຸ ຖ້າທ່ານຂ້າພິກຂຸໃນວັນນີ້ ທ່ານຈະປະສົບບາບອັນໜັກ ເທວະດາ ໄປເທີ້ນ ທ່ານຈົ່ງໄປຫາຢູ່ຕົ້ນໄມ້ວ່າງໃນທີ່ນັ້ນ"

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງຕັດແດ່ ໃຊ້ໃຫ້ຕັດແດ່ເຊິ່ງຕົ້ນໄມ້ນໍ ພຣະສະມະນະເຊື້ອສາຍສາກະຍະບຸດບຽດບຽນຊີວະເຊິ່ງມີອິນຊີດຽວ"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຊາວເມືອງອາລະວີຈຶ່ງຕັດແດ່ ໃຊ້ໃຫ້ຕັດແດ່ເຊິ່ງຕົ້ນໄມ້ນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ພວກພິກຂຸຊາວເມືອງອາລະວີໂດຍປະການ ຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸຊາວເມືອງອາລະວີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຕັດແດ່ ໃຊ້ໃຫ້ຕັດແດ່ ເຊິ່ງຕົ້ນໄມ້ ແມ່ນບໍ?" ພວກພິກຂຸຊາວເມືອງອາລະວີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຕັດແດ່ ໃຊ້ໃຫ້ຕັດແດ່ ເຊິ່ງຕົ້ນໄມ້ນໍ? ໂມຄະບຸຣຸດທັງຫຼາຍ ຍ້ອນພວກຊາວບ້ານມີຄວາມສຳຄັນວ່າຕົ້ນໄມ້ມີຊີວະ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໙໐] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນຕັດພູຕະຄາມ

### ເລື້ອງພິກຂຸຊາວເມືອງອາລະວີ ຈົບ

## ສິກຂາບົດວິພັງ

[໙໑] ທີ່ຊື່ວ່າ ພູຕະຄາມ ໄດ້ແກ່ ພືດພັນ ໕ ຊະນິດ ຄື (໑) ພືດພັນເກີດຈາກເຫງົ້າ (໔) ພືດພັນເກີດຈາກລຳຕົ້ນ (໓) ພືດພັນເກີດຈາກຕາ (໔) ພືດພັນເກີດຈາກຍອດ (໕) ພືດພັນເກີດຈາກເມັດ

ທີ່ຊື່ວ່າ ພືດພັນເກີດຈາກເຫງົ້າ ໄດ້ແກ່ ຂີ້ໝິ້ນ ຂີງ ວ່ານນ້ຳ ວ່ານເປາະ ອຸຕະພິດ ຂ່າແຝກ ແຫ້ວໝູ ຫຼື ພືດພັນຢ່າງອື່ນເຊິ່ງເກີດຢູ່ເຫງົ້າ ງອກຢູ່ເຫງົ້າ ນີ້ຊື່ວ່າພືດພັນເກີດຈາກເຫງົ້າ

ທີ່ຊື່ວ່າ ພືດພັນເກີດຈາກລຳຕົ້ນ ໄດ້ແກ່ ຕົ້ນໂພ ຕົ້ນໄຮ ຕົ້ນດີປີ ຕົ້ນໝາກເດື່ອ ຕົ້ນຕາວ ຕົ້ນໝາກຂວິດ ຫຼື ພືດພັນຢ່າງອື່ນເຊິ່ງເກີດທີ່ລຳຕົ້ນ ງອກທີ່ລຳຕົ້ນ ນີ້ຊື່ວ່າ ພືດພັນເກີດຈາກລຳຕົ້ນ

ທີ່ຊື່ວ່າ ພືດພັນເກີດຈາກຕາ ໄດ້ແກ່ ອ້ອຍ ໄມ້ໄຜ່ ໄມ້ອໍ້ ຫຼື ພືດພັນຢ່າງອື່ນ ເຊິ່ງເກີດທີ່ຕາ ງອກທີ່ຕາ ນີ້ຊື່ວ່າ ພືດພັນເກີດຈາກຕາ

ທີ່ຊື່ວ່າ ພືດພັນເກີດຈາກຍອດ ໄດ້ແກ່ ຜັກບົ້ງ ຜັກອີ່ຕູ່ ເຄືອຢານາງ ຫຼື ພືດພັນຢ່າງອື່ນ ເຊິ່ງເກີດຢູ່ຍອດ ງອກຢູ່ຍອດ ນີ້ຊື່ວ່າ ພືດພັນເກີດຈາກຍອດ

ທີ່ຊື່ວ່າ ພືດພັນເກີດຈາກເມັດ ໄດ້ແກ່ ເຂົ້າ ຖົ່ວ ງາ ຫຼື ພືດພັນຢ່າງອື່ນເຊິ່ງ ເກີດທີ່ເມັດ ງອກທີ່ເມັດ ນີ້ຊື່ວ່າ ພືດພັນເກີດຈາກເມັດ

## ບົດພາຊະນີ

[໙໔] ພືດພັນ ພິກຂຸສຳຄັນວ່າເປັນພືດພັນ ຕັດ ຫຼື ໃຊ້ໃຫ້ຕັດ ທຳລາຍ ຫຼື ໃຊ້ໃຫ້ທຳລາຍ ຕົ້ມ ຫຼືໃຊ້ໃຫ້ຕົ້ມ ຕ້ອງອາບັດປາຈິດຕີ

ພືດພັນ ພິກຂຸບໍ່ແນ່ໃຈ ຕັດ ຫຼື ໃຊ້ໃຫ້ຕັດ ທຳລາຍ ຫຼື ໃຊ້ໃຫ້ທຳລາຍ ຕົ້ມ ຫຼື ໃຊ້ໃຫ້ຕົ້ມ ຕ້ອງອາບັດທຸກກົດ

ພືດພັນ ພິກຂຸສຳຄັນວ່າບໍ່ແມ່ນພືດພັນ ຕັດ ຫຼື ໃຊ້ໃຫ້ຕັດ ທຳລາຍ ຫຼື ໃຊ້ໃຫ້ທຳລາຍ ຕົ້ມ ຫຼືໃຊ້ໃຫ້ຕົ້ມ ບໍ່ຕ້ອງອາບັດ

ບໍ່ແມ່ນພືດພັນ ພິກຂຸສຳຄັນວ່າເປັນພືດພັນ ຕ້ອງອາບັດທຸກກົດ

ບໍ່ແມ່ນພືດພັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນພືດພັນ ພິກຂຸສຳຄັນວ່າບໍ່ແມ່ນພືດພັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໓] ໑. ພິກຂຸກ່າວວ່າ "ທ່ານຈົ່ງຮູ້ ຈົ່ງໃຫ້ ຈົ່ງນຳສິ່ງນີ້ມາ ເຮົາຕ້ອງການສິ່ງນີ້ ທ່ານຈົ່ງເຮັດສິ່ງນີ້ໃຫ້ເປັນກັບປິຍະ

໒. ພິກຂຸບໍ່ຈົງໃຈ

໓. ພິກຂຸບໍ່ມີສະຕິ

໔. ພິກຂຸຜູ້ບໍ່ຮູ້

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ພູຕະຄາມະສິກຂາບົດທີ ໑ ຈົບ**

# ໔. ພູຕະຄາມະວັກ

## ໔. ອັນຍະວາທະກະສິກຂາບົດ

### ວ່າດ້ວຍການກ່າວປົກປິດ

### ເລື້ອງພຣະສັນນະ

[໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນ ທ່ານພຣະສັນນະປະພຶດບໍ່ເໝາະສົມ ຖືກພຣະວິໄນທອນສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ “ໃຜຕ້ອງ ຕ້ອງອັນໃດ ຕ້ອງໃນເລື້ອງອັນໃດ ຕ້ອງຢ່າງໃດ ພວກທ່ານກ່າວເຖິງຜູ້ໃດ ກ່າວເລື້ອງອັນໃດ”

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ທ່ານພຣະສັນນະຖືກພຣະວິໄນທອນສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ “ໃຜຕ້ອງ ຕ້ອງອັນໃດ ຕ້ອງໃນເລື້ອງອັນໃດ ຕ້ອງຢ່າງໃດ ພວກທ່ານກ່າວເຖິງໃຜ ກ່າວເລື້ອງອັນໃດ” ເມື່ອພິກຂຸເຫຼົ່ານັ້ນຕຳໜິ ທ່ານພຣະສັນນະໂດຍປະການ ຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງສອບຖາມພຣະສັນນະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມທ່ານພຣະສັນນະວ່າ “ສັນນະ ໄດ້ຂ່າວວ່າ ເມື່ອທ່ານຖືກສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ ໃຜຕ້ອງ ຕ້ອງອັນໃດ ຕ້ອງໃນເລື້ອງໃດ ຕ້ອງຢ່າງໃດ ພວກທ່ານກ່າວເຖິງໃຜ ກ່າວເລື້ອງອັນໃດ ແມ່ນບໍ?” ທ່ານພຣະສັນນະທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານ ເມື່ອຖືກສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງໄວ້ວ່າ ໃຜຕ້ອງ ຯລຯ ພວກທ່ານກ່າວເລື້ອງອັນໃດນໍ? ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ເມື່ອຊົງຕຳໜິແລ້ວໄດ້ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງລົງອັນຍະວາທະກະກຳ ແກ່ພິກຂຸສັນນະ

ພິກຂຸທັງຫຼາຍ ສົງເພິ່ງລົງອັນຍະວາທະກະກຳຢ່າງນີ້ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

## ກຳມະວາຈາ

[໗໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ສັນນະນີ້ຖືກສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງ ຖ້າສົງພ້ອມກັນແລ້ວ ເພິ່ງລົງອັນຍະວາທະກະກຳແກ່ພິກຂຸຊື່ສັນນະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ສັນນະນີ້ຖືກສອບສວນອາບັດທ່າມກາງສົງ ກັບນຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງ ສົງຈຶ່ງລົງອັນຍະວາທະກະກຳ ແກ່ພິກຂຸຊື່ສັນນະ ທ່ານອົງໃດເຫັນດ້ວຍກັບການລົງອັນຍະວາທະກະກຳແກ່ພິກຂຸຊື່ສັນນະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເພິ່ງທັກທ້ວງ

ອັນຍະວາທະກະກຳສົງລົງແກ່ພິກຂຸຊື່ສັນນະແລ້ວ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

## ຊົງບັນຍັດສິກຂາບົດ

ໃນບັດນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

### ພິກຂຸຕ້ອງອາບັດປາຈິດຕິ ຍ້ອນນຳເອົາເລື້ອງອື່ນມາກ່າວປົກປິດ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

[໗໖] ສະໄໝນັ້ນ ທ່ານພຣະສັນນະຖືກສອບສວນອາບັດທ່າມກາງສົງ ຄິດວ່າ "ເມື່ອເຮົານຳເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງຕ້ອງອາບັດ" ຈຶ່ງນິ່ງເສີຍຢູ່ ເຮັດສົງໃຫ້ລຳບາກ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະສັນນະເມື່ອຖືກສອບສວນອາບັດທ່າມກາງສົງ ຈຶ່ງນິ່ງເສີຍຢູ່ ເຮັດສົງໃຫ້ລຳບາກແນວນີ້ນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມພຣະສັນນະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານເມື່ອຖືກສອບສວນອາບັດທ່າມກາງສົງ ກັບນິ່ງເສີຍ ເຮັດສົງໃຫ້ລຳບາກແມ່ນບໍ່?" ທ່ານ

ພຣະສັນນະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ ໆລໆ ໂມຄະບຸຣຸດ ເປັນຫຍັງ ທ່ານເມື່ອຖືກສອບສວນອາບັດທ່າມກາງສົງ ຈຶ່ງນິ່ງ ເຮັດສົງໃຫ້ລຳບາກນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ໆລໆ" ເມື່ອຊົງຕຳໜິແລ້ວໄດ້ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງລົງວິເຫສະກະກຳແກ່ພິກຂຸສັນນະ

ພິກຂຸທັງຫຼາຍ ສົງເພິ່ງລົງວິເຫສະກະກຳຢ່າງນີ້ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

## ກຳມະວາຈາ

[໙໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ສັນນະນີ້ຖືກສອບສວນອາບັດທ່າມກາງສົງ ໄດ້ນິ່ງເສີຍ ເຮັດສົງໃຫ້ລຳບາກ ຖ້າສົງພ້ອມກັນແລ້ວເພິ່ງລົງວິເຫສະກະກຳແກ່ພິກຂຸຊື່ສັນນະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ສັນນະນີ້ຖືກສອບສວນອາບັດທ່າມກາງສົງໄດ້ນິ່ງເສີຍ ເຮັດສົງໃຫ້ລຳບາກ ສົງຈຶ່ງລົງວິເຫສະກະກຳແກ່ພິກຂຸຊື່ສັນນະ ທ່ານອົງໃດເຫັນດ້ວຍກັບການລົງວິເຫສະກະກຳແກ່ພິກຂຸຊື່ສັນນະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ວິເຫສະກະກຳສົງລົງແກ່ພິກຂຸຊື່ສັນນະແລ້ວ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

## ຊົງບັນຍັດສິກຂາບົດ

ບັດນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວໄດ້ ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ໆລໆ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໙໘] ພິກຂຸຕ້ອງອາບັດປາຈິດຕິ ຍ້ອນນຳເອົາເລື້ອງອື່ນມາກ່າວປົກປິດ ຍ້ອນເຮັດສົງໃຫ້ລຳບາກ

**ເລື້ອງພຣະສັນນະ ຈົບ**

## ສິກຂາບົດວິພັງ

[໙໙] ທີ່ຊື່ວ່າ ນໍາເອົາເລື້ອງອື່ນມາກ່າວປົກປິດ ຄື ພິກຂຸເມື່ອຖືກສອບສວນ ວັດຖຸ ຫຼື ອາບັດທ່າມກາງສົງ ບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ

ກັບນໍາເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ "ໃຜຕ້ອງ ຕ້ອງອັນໃດ ຕ້ອງໃນເລື້ອງໃດ ຕ້ອງຢ່າງໃດ ພວກທ່ານກ່າວເຖິງໃຜ ກ່າວເລື້ອງອັນໃດ" ນີ້ຊື່ວ່ານໍາເອົາເລື້ອງອື່ນມາກ່າວປົກປິດ

ທີ່ຊື່ວ່າ ເຮັດສົງໃຫ້ລໍາບາກ ຄື ພິກຂຸເມື່ອຖືກສອບສວນວັດຖຸຫຼືອາບັດທ່າມກາງສົງບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ ຈຶ່ງນິ່ງເສີຍ ນີ້ຊື່ວ່າເຮັດສົງໃຫ້ລໍາບາກ

## ບົດພາຊະນີ

[໑໐໐] ເມື່ອສົງຍັງບໍ່ລົງອັນຍະວາທະກະກໍາ ພິກຂຸຖືກສອບສວນວັດຖຸ ຫຼື ອາບັດທ່າມກາງສົງ ບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ ກັບນໍາເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ "ໃຜຕ້ອງ ຕ້ອງອັນໃດ ຕ້ອງໃນເລື້ອງໃດ ຕ້ອງຢ່າງໃດ ພວກທ່ານກ່າວເຖິງໃຜ ກ່າວເລື້ອງອັນໃດ" ຕ້ອງອາບັດທຸກກົດ

ເມື່ອສົງຍັງບໍ່ລົງວິເຫສະກະກໍາ ພິກຂຸຖືກສອບສວນວັດຖຸ ຫຼື ອາບັດທ່າມກາງສົງ ບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ ຈຶ່ງນິ່ງເສີຍເຮັດສົງໃຫ້ລໍາບາກ ຕ້ອງອາບັດທຸກກົດ

ເມື່ອສົງລົງອັນຍະວາທະກະກໍາ ພິກຂຸຖືກສອບສວນວັດຖຸ ຫຼື ອາບັດທ່າມກາງສົງບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ ກັບນໍາເອົາເລື້ອງອື່ນມາກ່າວປົກປິດອີກເລື້ອງໜຶ່ງວ່າ "ໃຜຕ້ອງ ฯລฯ ພວກທ່ານກ່າວເລື້ອງອັນໃດ" ຕ້ອງອາບັດປາຈິດຕີ

ເມື່ອສົງລົງວິເຫສະກໍາ ພິກຂຸຖືກສອບສວນວັດຖຸ ຫຼື ອາບັດທ່າມກາງສົງ ບໍ່ຕ້ອງການຈະບອກ ບໍ່ຕ້ອງການຈະເປີດເຜີຍເລື້ອງນັ້ນ ຈຶ່ງນິ່ງເສີຍ ເຮັດສົງໃຫ້ລໍາບາກ ຕ້ອງອາບັດປາຈິດຕີ

## ຕິກະປາຈິດຕີ

[໑໐໑] ກໍາທີ່ເຮັດຖືກຕ້ອງ ພິກຂຸສໍາຄັນວ່າເປັນກໍາທີ່ເຮັດຖືກຕ້ອງ ຕ້ອງອາບັດປາຈິດຕີຍ້ອນນໍາເອົາເລື້ອງອື່ນມາກ່າວປົກປິດ ຍ້ອນເຮັດສົງໃຫ້ລໍາບາກ

ກໍາທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດປາຈິດຕີ ຍ້ອນນໍາເອົາເລື້ອງອື່ນມາ ກ່າວປົກປິດຍ້ອນເຮັດສົງໃຫ້ລໍາບາກ

ກໍາທີ່ເຮັດຖືກຕ້ອງ ພິກຂຸສໍາຄັນວ່າເປັນກໍາທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດປາຈິດຕີ ຍ້ອນນໍາເອົາເລື້ອງອື່ນມາກ່າວປົກປິດ ຍ້ອນເຮັດສົງໃຫ້ລໍາບາກ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໔] ໑. ພິກຂຸບໍ່ເຂົ້າໃຈຈຶ່ງຖາມ
໒. ພິກຂຸເປັນໄຂ້ໃຫ້ການບໍ່ໄດ້
໓. ພິກຂຸບໍ່ຍອມກ່າວຍ້ອນຄິດວ່າ ສົງຈະມີຄວາມໝາງໃຈກັນ ຜິດຖຽງກັນ ຂັດແຍ້ງກັນ ຫຼື ວິວາດກັນ
໔. ພິກຂຸບໍ່ຍອມກ່າວຍ້ອນຄິດວ່າ ສົງຈັກແຕກແຍກ ຫຼື ສົງຈະຂັດເຄືອງກັນ
໕. ພິກຂຸບໍ່ຍອມກ່າວຍ້ອນຄິດວ່າ ສົງຈັກເຮັດກຳທີ່ບໍ່ຖືກຕ້ອງ ຈະແຍກພວກກັນເຮັດ ຫຼືຈະລົງໂທດພິກຂຸຜູ້ບໍ່ຄວນລົງໂທດ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ອັນຍະວາທະກະສິກຂາບົດທີ ໒ ຈົບ**

# ໒. ພູຕະຄາມະວັກ

## ໓. ອຸດຊາປະນະກະສິກຂາບົດ

### ວ່າດ້ວຍການກ່າວໃຫ້ເພ່ງໂທດ

### ເລື້ອງພຣະທັບພະມັນລະບຸດ

[໑໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະທັບພະມັນລະບຸດຈັດແຈງເສນາສະນະ ແລະແຈກພັດຕາຫານສົງ

ສະໄໝນັ້ນ ພຣະເມດຕິຍະ ແລະ ພຣະພຸມມະຊະກະ ເປັນພຣະບວດໃໝ່ ມີບຸນໜ້ອຍ ເສນາສະນະຂອງສົງຊັ້ນບໍ່ດີ ພັດຕາຫານກໍຊັ້ນບໍ່ດີ ຕົກເຖິງທ່ານທັງສອງ ທ່ານເຫຼົ່ານັ້ນຈຶ່ງກ່າວ ໃຫ້ພິກຂຸທັງຫຼາຍເພ່ງໂທດ ທ່ານພຣະທັບພະມັນລະບຸດວ່າ "ພຣະທັບພະມັນລະບຸດຈັດແຈງເສ ນາສະນະດ້ວຍຄວາມບໍ່ຊອບທຳ ແລະ ແຈກພັດຕາຫານດ້ວຍຄວາມບໍ່ຊອບທຳ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະເມດ ຕິຍະ ແລະພຣະພຸມມະຊະກະຈຶ່ງກ່າວໃຫ້ພິກຂຸທັງຫຼາຍເພ່ງໂທດທ່ານພຣະທັບພະມັນລະບຸດນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະເມດຕິຍະ ແລະ ພຣະພຸມມະຊະກະໂດຍປະການຕ່າງ ໆ ແລ້ວຈຶ່ງ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ ສອບຖາມພຣະເມດຕິຍະແລະພຣະພຸມມະຊະກະວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານກ່າວ ໃຫ້ພິກຂຸທັງຫຼາຍເພ່ງໂທດທັບພະມັນລະບຸດ ແມ່ນບໍ?" ພຣະເມດຕິຍະ ແລະ ພຣະພຸມມະຊະ ກະ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງກ່າວໃຫ້ພິກຂຸທັງຫຼາຍເພ່ງໂທດທັບພະມັນລະບຸດນໍ ໂມຄະ ບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

### ພິກຂຸຕ້ອງອາບັດປາຈິດຕິ ຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

[໑໐໔] ສະໄໝນັ້ນ ພຣະເມດຕິຍະ ແລະ ພຣະພຸມມະຊະກະຄິດວ່າ ພິກຂຸທັງຫຼາຍເຊື່ອ ຟັງພຣະບັນຍັດວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມການກ່າວໃຫ້ຜູ້ອື່ນເພ່ງໂທດ ຈຶ່ງຈົ່ມວ່າທ່ານ ພຣະທັບພະມັນລະບຸດໃກ້ ໆ ພິກຂຸທັງຫຼາຍວ່າ "ພຣະທັບພະມັນລະບຸດຈັດແຈງເສນາສະນະ ດ້ວຍຄວາມບໍ່ມັກກັນ ແລະແຈກພັດຕາຫານດ້ວຍຄວາມບໍ່ມັກກັນ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະເມດ ຕິຍະ ແລະ ພຣະພຸມມະຊະກະຈຶ່ງຈົ່ມວ່າທ່ານພຣະທັບພະມັນລະບຸດນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ພຣະເມດຕິຍະ ແລະ ພຣະພຸມມະຊະກະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ddww

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພຣະເມດຕິຍະ ແລະ ພຣະພຸມມະຊະກະ ວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຈົ່ມວ່າທັບພະມັນລະບຸດ ແມ່ນບໍ?" ທ່ານທັງ ໔ ທູນຮັບ ວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຈົ່ມວ່າທັບພະມັນລະບຸດນໍ ໂມຄະບຸຣຸດທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໐໕] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ ຍ້ອນຈົ່ມວ່າ

### ເລື້ອງພຣະທັບພະມັນລະບຸດ ຈົບ

## ສິກຂາບົດວິພັງ

[໑໐໖] ທີ່ຊື່ວ່າ ກ່າວໃຫ້ຜູ້ອື່ນເພ່ງໂທດ ຄື ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດໃຫ້ເກີ້ເຂີນ ຈຶ່ງກ່າວໃຫ້ພິກຂຸທັງຫຼາຍເພ່ງໂທດ ຫຼື ຈົ່ມວ່າອຸປະສຳບັນທີ່ສົງແຕ່ງຕັ້ງໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກພັດຕາຫານ ແຈກເຂົ້າຕົ້ມ ແຈກໝາກໄມ້ ແຈກຂອງຫຍ້ຳ ຫຼື ແຈກຂອງເລັກໜ້ອຍ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດປາຈິດຕີ ຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ ຍ້ອນຈົ່ມວ່າ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດປາຈິດຕີ ຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ ຍ້ອນຈົ່ມວ່າ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດປາຈິດຕີ ຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ ຍ້ອນຈົ່ມວ່າ

## ທຸກກົດ

ພິກຂຸກ່າວໃຫ້ຜູ້ອື່ນເພ່ງໂທດ ຫຼື ຈົ່ມວ່າອະນຸປະສຳບັນ ຕ້ອງອາບັດທຸກກົດ

ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດອຸປະສຳບັນທີ່ສົງບໍ່ໄດ້ແຕ່ງຕັ້ງໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກພັດຕາຫານ ແຈກເຂົ້າຕົ້ມ ແຈກ ໝາກໄມ້ ແຈກຂອງຫຍໍ້າ ຫຼື ແຈກຂອງເລັກໜ້ອຍ ໃຫ້ເກີ້ເຂີນ ຈຶ່ງກ່າວໃຫ້ພິກຂຸທັງຫຼາຍ ເພ່ງໂທດຫຼື ຈົ່ມວ່າອຸປະສຳບັນ ຫຼື ອະນຸປະສຳບັນ ຕ້ອງອາບັດທຸກກົດ

ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດອະນຸປະສຳບັນທີ່ສົງແຕ່ງຕັ້ງກໍຕາມ ບໍ່ໄດ້ແຕ່ງຕັ້ງກໍຕາມ ໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກພັດຕາຫານ ແຈກເຂົ້າຕົ້ມ ແຈກໝາກໄມ້ ແຈກຂອງຫຍໍ້າ ຫຼື ແຈກຂອງເລັກໜ້ອຍ ໃຫ້ເກີ້ເຂີນຈຶ່ງກ່າວໃຫ້ພິກຂຸທັງຫຼາຍເພ່ງໂທດ ຫຼື ຈົ່ມວ່າອຸປະສຳບັນຫຼືອະນຸປະສຳບັນ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກກຕ້ອງ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗] ໑. ພິກຂຸຜູ້ກ່າວໃຫ້ຜູ້ອື່ນເພ່ງໂທດ ຫຼື ຈົ່ມວ່າພິກຂຸຜູ້ມັກເຮັດດ້ວຍຄວາມຮັກ ດ້ວຍຄວາມຊັງ ດ້ວຍຄວາມຫຼົງ ດ້ວຍຄວາມຢ້ານ

໒. ພິກຂຸວິກົນຈະລິດ
໓. ພິກຂຸຕົ້ນບັນຍັດ

**ອຸດຊາປະນະກະສິກຂາບົດທີ ໓ ຈົບ**

# ໔. ພູຕະຄາມະວັກ

## ໔. ປະຖົມເສນາສະນະສິກຂາບົດ

### ວ່າດ້ວຍເສນາສະນະຂໍ້ທີ ໑

### ເລື້ອງພິກຂຸຫຼາຍອົງ

[໑໐໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນລະດູໜາວ ພິກຂຸທັງຫຼາຍ

ຈັດຕັ້ງເສນາສະນະໃນທີ່ກາງແຈ້ງຕາກກາຍກັນ ເມື່ອເຂົາບອກເວລາພັດຕາຫານ ເມື່ອຈະຈາກໄປບໍ່ເກັບ ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ບໍ່ບອກມອບໝາຍພາກັນຈາກໄປແລ້ວ ເສນາສະນະຈຶ່ງຖືກນ້ຳໝອກແລະຝົນຕົກໃສ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈັດຕັ້ງເສນາສະນະໃນທີ່ກາງແຈ້ງ ເມື່ອຈະຈາກໄປຈຶ່ງບໍ່ເກັບ ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ບໍ່ບອກມອບໝາຍພາກັນຈາກໄປນໍ ເສນາສະນະຖືກນ້ຳໝອກ ແລະ ຝົນຕົກໃສ່" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຈັດຕັ້ງເສນາສະນະໃນທີ່ກາງແຈ້ງ ເມື່ອຈະຈາກໄປບໍ່ເກັບ ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ບໍ່ບອກມອບໝາຍພາກັນຈາກໄປ ເສນາສະນະຖືກນ້ຳໝອກ ແລະ ຝົນຕົກໃສ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈັດຕັ້ງເສນາສະນະໄວ້ໃນທີ່ກາງແຈ້ງແລ້ວ ເມື່ອຈະຈາກໄປ ຈຶ່ງບໍ່ເກັບເອງ ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ບໍ່ບອກມອບໝາຍ ພາກັນຈາກໄປ ຈົນເສນາສະນະຖືກນ້ຳໝອກ ແລະຝົນຕົກໃສ່ນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໙] ກໍ ພິກຂຸໃດ ວາງໄວ້ ຫຼື ໃຊ້ໃຫ້ວາງໄວ້ເຊິ່ງເສນາສະນະ ຄື ຕຽງ ຕັ່ງ ຟູກ ຫຼື ຕັ່ງຂອງສົງໃນທີ່ກາງແຈ້ງ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບ ເສນາສະນະນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸຫຼາຍອົງ ຈົບ

## ຊົງອະນຸຍາດໃຫ້ເກັບເສນາສະນະ

[໑໑໐] ສະໄໝນັ້ນ ພິກຂຸທັງຫຼາຍຢູ່ໃນທີ່ກາງແຈ້ງ ຟ້າວເກັບເສນາສະນະກ່ອນເວລາອັນສົມຄວນ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນພິກຂຸເຫຼົ່ານັ້ນຟ້າວເກັບເສນາສະນະກ່ອນ

ເວລາອັນສົມຄວນ ເມື່ອແລ້ວຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບເສນາສະນະໄວ້ໃນມົນດົບ ເຫງົ້າໄມ້ ຫຼື ໃນທີ່ເຊິ່ງກາ ຫຼື ແຫຼວຈະບໍ່ຖ່າຍມູນໃສ່ໄດ້ຕະຫຼອດ ໘ ເດືອນທີ່ບໍ່ແມ່ນລະດູຝົນ"

## ສິກຂາບົດວິພັງ

[໑໑໑] ຄຳວ່າ ກໍໆລາໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລາໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລາໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລາໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຂອງສົງ ໄດ້ແກ່ ຂອງທີ່ມີຜູ້ຖວາຍ ບໍລິຈາກແກ່ສົງ

ທີ່ຊື່ວ່າ ຕຽງ ໄດ້ແກ່ ຕຽງ ໔ ຊະນິດ ຄື (໑) ຕຽງມີຂອບໄມ້ສອດເຂົ້າໃນຂາ (໒) ຕຽງມີຂອບໄມ້ຕິດກັບຂາ (໓) ຕຽງມີຂາດັ່ງກ້າມປູ (໔) ຕຽງມີຂາຮອດຂອບໄມ້

ທີ່ຊື່ວ່າ ຕັ່ງ ໄດ້ແກ່ຕັ່ງ ໔ ຊະນິດ ຄື (໑) ຕັ່ງມີຂອບໄມ້ສອດເຂົ້າໃນຂາ (໒) ຕັ່ງມີຂອບໄມ້ຕິດກັບຂາ (໓) ຕັ່ງມີຂາຄືກ້າມປູ (໔) ຕັ່ງມີຂາຮອດຂອບໄມ້

ທີ່ຊື່ວ່າ ຟູກ ໄດ້ແກ່ ຟູກ ໕ ຊະນິດ ຄື (໑) ຟູກຂົນສັດ (໒) ຟູກເສດຜ້າ (໓) ຟູກເປືອກໄມ້ (໔) ຟູກຫຍ້າ (໕) ຟູກໃບໄມ້

ທີ່ຊື່ວ່າ ຕັ່ງ ໄດ້ແກ່ ຕັ່ງທີ່ເຂົາຖັກພື້ນສຳລັບນັ່ງພາຍໃນ ເຮັດດ້ວຍເປືອກໄມ້ກໍມີ ເຮັດດ້ວຍຫຍ້າແຝກກໍມີ ເຮັດດ້ວຍຫຍ້າມຸງກະຕ່າຍກໍມີ ເຮັດດ້ວຍຫຍ້າປ້ອງກໍມີ

ຄຳວ່າ ວາງໄວ້ ຄື ວາງໄວ້ດ້ວຍຕົນເອງ

ຄຳວ່າ ໃຊ້ໃຫ້ວາງໄວ້ ຄື ໃຊ້ໃຫ້ຜູ້ອື່ນໃຫ້ວາງໄວ້

ພິກຂຸໃຊ້ອະນຸປະສຳບັນໃຫ້ວາງໄວ້ ເປັນພາລະຂອງພິກຂຸນັ້ນ ໃຊ້ອຸປະສຳບັນໃຫ້ວາງໄວ້ ເປັນພາລະຂອງຜູ້ວາງໄວ້

ຄຳວ່າ ເມື່ອຈະຈາກໄປບໍ່ເກັບ ໆລາໆ ເສນາສະນະນັ້ນ ຄື ບໍ່ເກັບດ້ວຍຕົນເອງ

ຄຳວ່າ ບໍ່ໃຊ້ໃຫ້ເກັບ ຄື ບໍ່ໃຊ້ໃຫ້ຜູ້ອື່ນເກັບ

ຄຳວ່າ ຫຼື ບໍ່ບອກມອບໝາຍ ໄປເລີຍ ຄວາມວ່າ ພິກຂຸບໍ່ບອກມອບໝາຍ

ພິກຂຸ ສາມະເນນຫຼືຄົນວັດ ຍ່າງລ່ວງຂອບເຂດຂອງບຸຣຸດມີກຳລັງປານກາງໄປ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໒] ເສນາສະນະຂອງສົງ ພິກຂຸສຳຄັນວ່າເປັນຂອງສົງ ວາງໄວ້ຫຼືໃຊ້ໃຫ້ວາງໄວ້ໃນທີ່

ກາງແຈ້ງ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ຫຼື ບໍ່ບອກ ມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

ເສນາສະນະຂອງສົງ ພິກຂຸບໍ່ແນ່ໃຈ ວາງໄວ້ ຫຼື ໃຊ້ໃຫ້ວາງໄວ້ໃນທີ່ກາງແຈ້ງ ເມື່ອຈະຈາກໄປບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ຫຼື ບໍ່ບອກມອບໝາຍໄປເລີຍ ຕ້ອງອາບັດປາຈິດຕີ

ເສນາສະນະຂອງສົງ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ວາງໄວ້ ຫຼື ໃຊ້ໃຫ້ວາງໄວ້ໃນທີ່ກາງແຈ້ງ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບເສນາສະນະນັ້ນ ຫຼື ບໍ່ບອກມອບໝາຍໄປເລີຍ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸວາງໄວ້ ຫຼື ໃຊ້ໃຫ້ວາງຜ້າປູຖືຮັກສາຜິວພື້ນ ຜ້າປູຕຽງ ຜ້າປູພື້ນ ສາດອ່ອນ ແຜ່ນໜັງ ທີ່ເຊັດຕີນ ຕັ່ງໄມ້ແປ້ນໄວ້ໃນທີ່ກາງແຈ້ງ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ ໃຫ້ເກັບຜ້າປູຖືຮັກສາຜິວເປັນຕົ້ນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດທຸກກົດ

ເສນາສະນະສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສົງ ຕ້ອງອາບັດທຸກກົດ

ເສນາສະນະສ່ວນບຸກຄົນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ເສນາສະນະສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ຕ້ອງອາບັດທຸກກົດ ຍ້ອນເປັນຂອງສ່ວນບຸກຄົນຂອງຜູ້ອື່ນ ເສນາສະນະເປັນຂອງສ່ວນບຸກຄົນຂອງຕົນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໓] ໑. ພິກຂຸເກັບໄວ້ແລ້ວຈຶ່ງໄປ

໒. ພິກຂຸໃຊ້ໃຫ້ເກັບໄວ້ແລ້ວຈຶ່ງໄປ

໓. ພິກຂຸບອກມອບໝາຍໄວ້ແລ້ວຈຶ່ງໄປ

໔. ພິກຂຸນຳອອກຕາກແດດໄວ້ ຈາກໄປດ້ວຍຄິດວ່າຈະກັບມາເກັບ

໕. ພິກຂຸຜູ້ມີເຫດບາງຢ່າງຂັດຂວາງ

໖. ພິກຂຸຜູ້ມີເຫດຂັດຂ້ອງ

໗. ພິກຂຸວິກົນຈະລິດ

໘. ພິກຂຸຕົ້ນບັນຍັດ

**ປະຖົມເສນາສະນະສິກຂາບົດທີ ໔ ຈົບ**

# ໒. ພູຕະຄາມະວັກ

## ໕. ທຸຕິຍະເສນາສະນະສິກຂາບົດ

## ວ່າດ້ວຍເສນາສະນະຂໍ້ທີ ໒

### ເລື້ອງພຣະສັດຕະຣະສະວັກຄີ

[໑໑໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພວກພິກຂຸສັດຕະຣະສະວັກຄີເປັນສະຫາຍກັນ ພິກຂຸເຫຼົ່ານັ້ນເມື່ອຈະຢູ່ກໍຢູ່ນຳກັນ ເມື່ອຈະຈາກໄປກໍຈາກໄປພ້ອມກັນ ພວກທ່ານປູທີ່ນອນໃນວິຫານຂອງສົງແຫ່ງໜຶ່ງ ເມື່ອຈະຈາກໄປ ບໍ່ເກັບ ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ບໍ່ບອກມອບໝາຍ ພາກັນຈາກໄປ ເສນາສະນະຖືກຕົວປວກກັດ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັດຕະຣະສະວັກຄີປູທີ່ນອນໃນວິຫານຂອງສົງແລ້ວ ເມື່ອຈະຈາກໄປບໍ່ເກັບ ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ບໍ່ບອກມອບໝາຍ ພາກັນຈາກໄປ ຈົນເສນາສະນະຖືກປວກກັດນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸສັດຕະຣະສະວັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັດຕະຣະສະວັກຄີປູທີ່ນອນໃນວິຫານຂອງສົງແລ້ວເມື່ອຈະຈາກໄປ ບໍ່ເກັບ ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ບໍ່ບອກມອບໝາຍພາກັນຈາກໄປ ຈົນເສນາສະນະຖືກຕົວປວກກັດ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນປູທີ່ນອນໃນວິຫານຂອງສົງແລ້ວ ເມື່ອຈະຈາກໄປ ຈຶ່ງບໍ່ເກັບ ບໍ່ໃຊ້ໃຫ້ເກັບ ບໍ່ບອກມອບໝາຍ ພາກັນຈາກໄປຈົນເສນາສະນະຖືກຕົວປວກກັດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໑໕] ກໍ ພິກຂຸໃດປູຫຼືໃຊ້ໃຫ້ປູທີ່ນອນໃນວິຫານຂອງສົງ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັດຕະຣະສະວັກຄີ ຈົບ**

## ສິກຂາບົດວິພັງ

[໑໑໙] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ວິຫານທີ່ຊື່ວ່າ ຂອງສົງ ໄດ້ແກ່ ວິຫານທີ່ມີຜູ້ຖວາຍ ບໍລິຈາກແກ່ສົງ

ທີ່ຊື່ວ່າ ທີ່ນອນ ໄດ້ແກ່ ຟູກ ຜ້າປູຖືຮັກສາຜິວພື້ນ ຜ້າປູຕຽງ ຜ້າປູພື້ນ ສາດອ່ອນ ແຜ່ນໜັງ ຜ້າປູນັ່ງ ຜ້າປູນອນ ເຄື່ອງປູເຮັດດ້ວຍຫຍ້າ ເຄື່ອງປູເຮັດດ້ວຍໃບໄມ້

ຄຳວ່າ ປູ ຄື ປູດ້ວຍຕົນເອງ

ຄຳວ່າ ໃຊ້ໃຫ້ປູ ຄື ໃຊ້ຜູ້ອື່ນໃຫ້ປູ

ຄຳວ່າ ເມື່ອຈະຈາກໄປບໍ່ເກັບ ໆລໆ ທີ່ນອນນັ້ນ ຄື ບໍ່ເກັບດ້ວຍຕົນເອງ

ຄຳວ່າ ບໍ່ໃຊ້ໃຫ້ເກັບ ຄື ບໍ່ໃຊ້ຜູ້ອື່ນໃຫ້ເກັບ

ຄຳວ່າ ຫຼືບໍ່ບອກມອບໝາຍ ໄປເລີຍ ຄວາມວ່າ ພິກຂຸບໍ່ບອກມອບໝາຍໃຫ້ພິກຂຸ ສາມະເນນຫຼືຄົນວັດ ຍ່າງລ່ວງເລີຍເຄື່ອງລ້ອມອາຣາມທີ່ມີຮົ້ວລ້ອມໄວ້ ຕ້ອງອາບັດປາຈິດຕີ ຍ່າງລ່ວງເລີຍອຸປະຈານອາຣາມທີ່ບໍ່ມີຮົ້ວລ້ອມໄວ້ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສົງ ປູຫຼືໃຊ້ໃຫ້ປູທີ່ນອນ ເມື່ອຈະຈາກໄປ ບໍ່ເກັບຫຼືບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸບໍ່ແນ່ໃຈ ປູຫຼືໃຊ້ໃຫ້ປູທີ່ນອນ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ປູຫຼືໃຊ້ໃຫ້ປູທີ່ນອນ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດປາຈິດຕີ

### ທຸກກົດ

[໑໑໗] ພິກຂຸປູຫຼືໃຊ້ໃຫ້ປູທີ່ນອນໄວ້ ໃນອຸປະຈານວິຫານ ໃນໂຮງສັນ ໃນມົນດົບ ຫຼື ທີ່ເຫງົ້າໄມ້ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບທີ່ນອນນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດທຸກກົດ

ພິກຂຸຈັດຕັ້ງໄວ້ ຫຼື ໃຊ້ໃຫ້ຈັດຕັ້ງຫຼືຕັ່ງໄວ້ໃນວິຫານ ໃນອຸປະຈານວິຫານ ໃນໂຮງສັນ ໃນມົນດົບ ຫຼື ທີ່ເຫງົ້າໄມ້ ເມື່ອຈະຈາກໄປ ບໍ່ເກັບ ຫຼື ບໍ່ໃຊ້ໃຫ້ເກັບຫຼືຕັ່ງນັ້ນ ຫຼື ບໍ່ບອກມອບໝາຍ ໄປເລີຍ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສົງ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ຕ້ອງອາບັດທຸກກົດ ຍ້ອນເປັນຂອງສ່ວນບຸກຄົນຂອງຜູ້ອື່ນ ວິຫານເປັນຂອງສ່ວນບຸກຄົນຂອງຕົນ ບໍ່ຕ້ອງອາບັດ

### ອະນາບັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໙] ໑. ພິກຂຸເກັບໄວ້ແລ້ວຈຶ່ງໄປ
໒. ພິກຂຸໃຊ້ໃຫ້ເກັບໄວ້ແລ້ວຈຶ່ງໄປ
໓. ພິກຂຸບອກມອບໝາຍໄວ້ແລ້ວຈຶ່ງໄປ
໔. ພິກຂຸຜູ້ບໍ່ເກັບເສນາສະນະທີ່ມີເຫດບາງຢ່າງຂັດຂວາງ
໕. ພິກຂຸເກີດຫ່ວງໃຍໄປຢືນໃນທີ່ນັ້ນບອກມອບໝາຍ
໖. ພິກຂຸຜູ້ມີເຫດບາງຢ່າງຂັດຂວາງ
໗. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ທຸຕິຍະເສນາສະນະສິກຂາບົດທີ ໔ ຈົບ**

## ໒. ພູຕະຄາມະວັກ

## ໖. ອະນຸປະຂັດຊະສິກຂາບົດ

### ວ່າດ້ວຍການເຂົ້າໄປແຊກແຊງ

### ເລື້ອງພຣະສັບພັກຄີ

[໑໑໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີກົດກັນທີ່ນອນ

ດີ ໆ ເອົາໄວ້ ໃຫ້ຍ້າຍພິກຂຸຜູ້ເປັນເຖຣະອອກໄປ ບັດນັ້ນ ພວກພິກຂຸສັບພັກຄີໄດ້ມີຄວາມຄິດວ່າ "ພວກເຮົາຈະຈຳພັນສາໃນທີ່ນີ້ດ້ວຍອຸບາຍຢ່າງໃດນໍ" ລຳດັບນັ້ນ ພວກພິກຂຸສັບພັກຄີຈຶ່ງເຂົ້າໄປນອນແຊກແຊງພິກຂຸຜູ້ເປັນເຖຣະດ້ວຍຕັ້ງໃຈວ່າ ເມື່ອທ່ານມີຄວາມຄັບໃຈກໍຈັກຈາກໄປເອງ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງເຂົ້າໄປນອນແຊກແຊງພິກຂຸຜູ້ເປັນເຖຣະນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຂົ້າໄປນອນແຊກແຊງພິກຂຸຜູ້ເປັນເຖຣະແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງເຂົ້າໄປນອນແຊກແຊງພິກຂຸຜູ້ເປັນເຖຣະນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໑໔໐] ກໍ ພິກຂຸໃດຮູ້ຢູ່ ເຂົ້າໄປນອນແຊກແຊງພິກຂຸຜູ້ເຂົ້າໄປຢູ່ໃນວິຫານຂອງສົງກ່ອນດ້ວຍປະສົງວ່າ "ທ່ານຈະໄດ້ຄັບໃຈກໍຈັກຈາກໄປເອງ" ປະສົງພຽງເທົ່ານີ້ບໍ່ມີອັນອື່ນ ຕ້ອງອາບັດປາຈິດຕີ

### ເລື່ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໑໔໑] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ວິຫານທີ່ຊື່ວ່າ ຂອງສົງ ໄດ້ແກ່ ວິຫານທີ່ມີຜູ້ຖວາຍ ບໍລິຈາກແກ່ສົງ

ທີ່ຊື່ວ່າ ຮູ້ ຄື ຮູ້ວ່າ "ເປັນພິກຂຸຜູ້ເຖົ້າ" ຮູ້ວ່າ "ເປັນພິກຂຸຜູ້ເປັນໄຂ້" ຫຼື ຮູ້ວ່າ "ເປັນພິກຂຸທີ່ສົງມອບວິຫານໃຫ້

ຄຳວ່າ ເຂົ້າໄປແຊກແຊງ ຄື ເຂົ້າໄປບຽດສຽດ

ຄຳວ່າ ນອນ ຄວາມວ່າ ພິກຂຸປູໄວ້ ຫຼື ໃຊ້ໃຫ້ປູທີ່ນອນໄວ້ໃນອຸປະຈານຕຽງ ຕັ່ງຫຼືປະຕູເຂົ້າອອກ ຕ້ອງອາບັດທຸກກົດ ພິກຂຸນັ່ງຫຼືນອນ ຕ້ອງອາບັດປາຈິດຕີ

ຄຳວ່າ ປະສົງພຽງເທົ່ານີ້ ຄວາມວ່າ ບໍ່ມີເຫດຜົນຢ່າງອື່ນໃນການເຂົ້າໄປນອນແຊກແຊງ

## ບົດພາຊະນີ

## ຕິກະປາຈິດຕີ

[໑໔໔] ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສົງ ເຂົ້າໄປນອນແຊກແຊງ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸບໍ່ແນ່ໃຈ ເຂົ້າໄປນອນແຊກແຊງ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ເຂົ້າໄປນອນແຊກແຊງ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸປູຫຼືໃຊ້ໃຫ້ປູທີ່ນອນ ເວັ້ນອຸປະຈານຕຽງ ຕັ່ງ ຫຼື ປະຕູເຂົ້າອອກ ຕ້ອງອາບັດທຸກກົດ ພິກຂຸນັ່ງຫຼືນອນ ຕ້ອງອາບັດທຸກກົດ

ພິກຂຸປູຫຼືໃຊ້ໃຫ້ປູທີ່ນອນໃນອຸປະຈານວິຫານ ໃນໂຮງສັນ ໃນມົນດົບ ເຫງົ້າໄມ້ ຫຼື ໃນທີ່ກາງແຈ້ງ ຕ້ອງອາບັດທຸກກົດ ພິກຂຸນັ່ງຫຼືນອນ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສົງ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ຕ້ອງອາບັດທຸກກົດ ຍ້ອນເປັນຂອງສ່ວນບຸກຄົນຂອງຜູ້ອື່ນ ວິຫານເປັນສ່ວນບຸກຄົນຂອງຕົນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໕] ໑. ພິກຂຸຜູ້ເປັນໄຂ້ເຂົ້າໄປຢູ່

໔. ພິກຂຸຖືກຄວາມໜາວຫຼືຄວາມຮ້ອນບຽດບຽນແລ້ວເຂົ້າໄປຢູ່

໓. ພິກຂຸຜູ້ມີເຫດຂັດຂ້ອງ

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ອະນຸປະຂັດຊະສິກຂາບົດທີ ໖ ຈົບ**

# ໘. ພູຕະຄາມະວັກ

## ໆ. ນິກກັມຖະນະສິກຂາບົດ
## ວ່າດ້ວຍການລາກອອກ
## ເລື່ອງພຣະສັດຕະຣະສະວັກຄີ

[໑໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັດຕະຣະສະວັກຄີຊ້ອມແປງ ວິຫານຫຼັງໃຫຍ່ແຫ່ງໜຶ່ງຢູ່ສຸດເຂດອາຣາມດ້ວຍໝາຍໃຈວ່າ ພວກເຮົາຈັກຈຳພັນສາໃນທີ່ນີ້

ພວກພິກຂຸສັບພັກຄີເຫັນພວກພິກຂຸສັດຕະຣະສະວັກຄີຊ້ອມແປງວິຫານ ເມື່ອເຫັນແລ້ວຈຶ່ງກ່າວກັນຢ່າງນີ້ວ່າ "ທ່ານທັງຫຼາຍ ພວກພິກຂຸສັດຕະຣະສະວັກຄີເຫຼົ່ານີ້ຊ້ອມແປງວິຫານກັນມາເທີ້ນ ພວກເຮົາຈັກຂັບໄລ່ພິກຂຸເຫຼົ່ານັ້ນອອກໄປ"

ພິກຂຸບາງພວກກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ໂຜດຖ້າໃຫ້ພິກຂຸເຫຼົ່ານັ້ນຊ້ອມແປງວິຫານເທີ້ນເມື່ອຊ້ອມແປງສຳເລັດແລ້ວ ພວກເຮົາຈຶ່ງຂັບໄລ່ອອກໄປ"

ເມື່ອພວກພິກຂຸສັດຕະຣະສະວັກຄີຊ້ອມແປງວິຫານສຳເລັດ ພວກພິກຂຸສັບພັກຄີໄດ້ກ່າວກັບພວກພິກຂຸສັດຕະຣະສະວັກຄີດັ່ງນີ້ວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ທ່ານທັງຫຼາຍ ພວກທ່ານຄວນຈະບອກກ່ອນພວກເຮົາຈະໄດ້ຊ້ອມແປງວິຫານຫຼັງອື່ນ"

ພວກພິກຂຸສັບພັກຄີກ່າວວ່າ "ທ່ານທັງຫຼາຍ ວິຫານເປັນຂອງສົງບໍ່ແມ່ນບໍ?"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ແມ່ນ ທ່ານທັງຫຼາຍ ວິຫານເປັນຂອງສົງ

ພວກພິກຂຸສັບພັກຄີກ່າວວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ວິຫານຫຼັງໃຫຍ່ ພວກທ່ານກໍຢູ່ໄດ້ ພວກເຮົາກໍຢູ່ໄດ້"

ພວກພິກຂຸສັບພັກຄີກ່າວວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ" ແລ້ວໂກດ ບໍ່ພໍໃຈ ຈັບຄໍລາກອອກໄປ

ພວກພິກຂຸສັດຕະຣະສະວັກຄີເຫຼົ່ານັ້ນ ເມື່ອຖືກລາກອອກໄປ ກໍຮ້ອງໄຫ້ ພິກຂຸທັງຫຼາຍກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເຮັດຫຍັງ?"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈລາກພວກຂ້ານ້ອຍອອກຈາກວິຫານຂອງສົງ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍອອກຈາກວິຫານຂອງສົງນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍໄດ້ຂ່າວວ່າ ພວກທ່ານໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍອອກຈາກວິຫານຂອງສົງ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍອອກຈາກວິຫານຂອງສົງນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໑໘໕] ກໍ ພິກຂຸໃດໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກພິກຂຸອອກຈາກ ວິຫານຂອງສົງ ຕ້ອງອາບັດປາຈິດຕີ

### ເລື່ອງພຣະສັດຕະຣະສະວັກຄີ ຈົບ

## ສິກຂາບົດວິພັງ

[໑໘໖] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໄດ້ແກ່ ພິກຂຸອື່ນ

ຄຳວ່າ ໂກດ ບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ວິຫານທີ່ຊື່ວ່າ ຂອງສົງ ໄດ້ແກ່ ວິຫານທີ່ມີຜູ້ສ້າງຖວາຍແກ່ສົງ

ຄຳວ່າ ລາກ ຄື ຈັບໃນຫ້ອງລາກອອກໄປໄວ້ໜ້າຫ້ອງ ຕ້ອງອາບັດປາຈິດຕີ ຈັບທີ່ໜ້າຫ້ອງລາກອອກໄປຂ້າງນອກ ຕ້ອງອາບັດປາຈິດຕີ ພິກຂຸລາກພົ້ນປະຕູຫຼາຍປະຕູດ້ວຍຄວາມພະຍາຍາມຄັ້ງດຽວ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ລາກ ຄວາມວ່າ ພິກຂຸສັ່ງຜູ້ອື່ນ ຕ້ອງອາບັດປາຈິດຕີ ຜູ້ຮັບຄຳສັ່ງ ຄັ້ງດຽວ ແຕ່ລາກອອກໄປພົ້ນຫຼາຍປະຕູ ພິກຂຸຜູ້ສັ່ງ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໘໗] ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສົງ ໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸບໍ່ແນ່ໃຈ ໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງພິກຂຸນັ້ນ ຕ້ອງອາບັດທຸກກົດ

ພິກຂຸລາກ ຫຼື ໃຊ້ໃຫ້ລາກອອກຈາກອຸປະຈານວິຫານ ຈາກໂຮງສັນ ຈາກມົນດົບ ຈາກເຫງົ້າໄມ້ ຫຼື ຈາກທີ່ກາງແຈ້ງ ຕ້ອງອາບັດທຸກກົດ

ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງພິກຂຸນັ້ນ ຕ້ອງອາບັດທຸກກົດ

ພິກຂຸລາກ ຫຼື ໃຊ້ໃຫ້ລາກອະນຸປະສຳບັນອອກຈາກວິຫານ ຈາກອຸປະຈານວິຫານ ຈາກໂຮງສັນ ຈາກມົນດົບ ຈາກເຫງົ້າໄມ້ ຫຼື ຈາກທີ່ກາງແຈ້ງ ຕ້ອງອາບັດທຸກກົດ

ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງອະນຸປະສຳບັນນັ້ນ ຕ້ອງອາບັດທຸກກົດ

ວິຫານຂອງສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສົງ ຕ້ອງອາບັດທຸກກົດ

ວິຫານຂອງສ່ວນບຸກຄົນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ວິຫານຂອງສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ຕ້ອງອາບັດທຸກກົດ ຍ້ອນເປັນຂອງສ່ວນບຸກຄົນຂອງຜູ້ອື່ນ ວິຫານສ່ວນບຸກຄົນຂອງຕົນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໘໘] ໑. ພິກຂຸລາກ ຫຼື ໃຊ້ໃຫ້ລາກພິກຂຸອະລັດຊີ

໒. ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງພິກຂຸອະລັດຊີ

໓. ພິກຂຸລາກ ຫຼື ໃຊ້ໃຫ້ລາກພິກຂຸວິກົນຈະລິດ

໔. ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງພິກຂຸວິກົນຈະລິດ
໕. ພິກຂຸລາກ ຫຼື ໃຊ້ໃຫ້ລາກພິກຂຸຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ການວິວາດ ກໍ່ໃຫ້ເກີດການຜິດໃຈ ຫຼື ກໍ່ອະທິກອນໃນສົງ
໖. ພິກຂຸລາກ ຫຼື ໃຊ້ໃຫ້ລາກບໍຣິຂານຂອງພິກຂຸຜູ້ກໍ່ເຫດເຫຼົ່ານັ້ນ
໗. ພິກຂຸລາກຫຼືໃຊ້ໃຫ້ລາກອັນເຕວາສິກ ຫຼື ສັດທິວິຫາຣິກຜູ້ບໍ່ປະພຶດໂດຍຊອບ
໘. ພິກຂຸລາກ ຫຼືໃຊ້ໃຫ້ລາກບໍຣິຂານຂອງອັນເຕວາສິກຫຼືສັດທິວິຫາຣິກຜູ້ເຊັ່ນນັ້ນ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ນິກັນຖະນະສິກຂາບົດທີ ໗ ຈົບ**

# ໔. ພູຕະຄາມະວັກ

## ໘. ເວຫາສະກຸຕິສິກຂາບົດ

## ວ່າດ້ວຍກຸຕິຊັ້ນລອຍ

## ເລື້ອງພິກຂຸ ໔ ອົງ

[໑໔໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸ ໔ ອົງຢູ່ເທິງກຸຕິຊັ້ນລອຍໃນວິຫານຂອງສົງ ອົງໜຶ່ງຢູ່ຊັ້ນລຸ່ມ ອີກອົງໜຶ່ງຢູ່ຊັ້ນເທິງ ອົງທີ່ຢູ່ຊັ້ນເທິງນັ່ງລົງດ້ວຍຄວາມແຮງເທິງຕຽງຊະນິດທີ່ມີຕີນສຽບ (ບໍ່ມີຫຼິ້ມສະລັກ) ຕີນຕຽງຕົກໃສ່ຫົວອົງທີ່ນັ່ງຢູ່ຊັ້ນລຸ່ມຈົນທ່ານຮ້ອງສຽງດັງ ພິກຂຸທັງຫຼາຍແລ່ນເຂົ້າໄປຫາແລ້ວໄດ້ກ່າວດັ່ງນີ້ວ່າ "ທ່ານ ທ່ານສົ່ງສຽງເຮັດຫຍັງ" ພິກຂຸອົງທີ່ນັ່ງຢູ່ຊັ້ນລຸ່ມຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງນັ່ງລົງແຮງເທິງຕຽງມີຕີນສຽບເທິງກຸຕິຊັ້ນລອຍໃນວິຫານຂອງສົງນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານນັ່ງລົງແຮງເທິງຕຽງມີຕີນສຽບເທິງກຸຕິຊັ້ນລອຍໃນວິຫານຂອງສົງແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ

ທ່ານຈຶ່ງນັ່ງລົງແຮງເທິງຕຽງມີຕີນສຽບເທິງກຸຕິຊັ້ນລອຍໃນວິຫານຂອງສົງນໍ? ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໓໐] ກໍ ພິກຂຸໃດນັ່ງ ຫຼື ນອນເທິງຕຽງ ຫຼື ເທິງຕັ່ງອັນມີຕີນສຽບ ເທິງກຸຕິຊັ້ນລອຍໃນວິຫານຂອງສົງ ຕ້ອງອາບັດປາຈິດຕີ

## ເລື້ອງພິກຂຸ ໔ ອົງ ຈົບ

## ສິກຂາບົດວິພັງ

[໑໓໑] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ວິຫານທີ່ຊື່ວ່າ ຂອງສົງ ໄດ້ແກ່ ວິຫານທີ່ມີຜູ້ຖວາຍ ບໍລິຈາກແກ່ສົງ
ທີ່ຊື່ວ່າ ກຸຕິຊັ້ນລອຍ ໄດ້ແກ່ ກຸຕິຊັ້ນລອຍສູງຈົນຫົວບຸຣຸດກາງຄົນບໍ່ກະທົບ
ຕຽງທີ່ຊື່ວ່າ ມີຕີນສຽບ ຄື ສອດຕີນສຽບຕິດໄວ້ໃນຕົວຕຽງ
ຕັ່ງທີ່ຊື່ວ່າ ມີຕີນສຽບ ຄື ສອດຕີນສຽບຕິດໄວ້ໃນຕົວຕັ່ງ
ຄຳວ່າ ນັ່ງ ຄື ພິກຂຸນັ່ງເທິງຕຽງ ຫຼື ເທິງຕັ່ງນັ້ນ ຕ້ອງອາບັດປາຈິດຕີ
ຄຳວ່າ ນອນ ຄື ພິກຂຸນອນເທິງຕຽງ ຫຼື ເທິງຕັ່ງນັ້ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໓໔] ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສົງ ນັ່ງ ຫຼື ນອນເທິງຕຽງ ຫຼື ເທິງຕັ່ງມີຕີນສຽບເທິງກຸຕິຊັ້ນລອຍ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸບໍ່ແນ່ໃຈ ນັ່ງ ຫຼື ນອນເທິງຕຽງ ຫຼື ເທິງຕັ່ງມີຕີນສຽບເທິງກຸຕິຊັ້ນລອຍ ຕ້ອງອາບັດປາຈິດຕີ

ວິຫານຂອງສົງ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ນັ່ງ ຫຼື ນອນເທິງຕຽງ ຫຼື ເທິງຕັ່ງ ມີຕີນສຽບເທິງກຸຕິຊັ້ນລອຍ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສົງ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ວິຫານສ່ວນບຸກຄົນ ພິກຂຸສຳຄັນວ່າເປັນຂອງສ່ວນບຸກຄົນ ຕ້ອງອາບັດທຸກກົດ ຍ້ອນເປັນຂອງສ່ວນບຸກຄົນຂອງຜູ້ອື່ນ ວິຫານສ່ວນບຸກຄົນຂອງຕົນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໓໓] ໑. ພິກຂຸນັ່ງເທິງທີ່ທີ່ບໍ່ແມ່ນກຸຕິຊັ້ນລອຍ
໒. ພິກຂຸນັ່ງເທິງກຸຕິຊັ້ນລອຍສູງພໍກະທົບຫົວ
໓. ພິກຂຸນັ່ງເທິງທີ່ທີ່ຂ້າງລຸ່ມບໍ່ເປັນທີ່ຢູ່
໔. ພິກຂຸນັ່ງເທິງກຸຕິຊັ້ນລອຍປູພື້ນໄວ້
໕. ພິກຂຸນັ່ງເທິງກຸຕິຊັ້ນລອຍມີຕີນຕຽງ ຫຼື ຕີນຕັ່ງຕຶງສະລັກຕິດ
໖. ພິກຂຸຢືນເທິງຕຽງ ຫຼື ຕັ່ງຈັບ ຫຼື ພາດຈີວອນໄດ້
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ເວຫາສະກຸຕິສິກຂາບົດທີ ໘ ຈົບ**

# ໔. ພູຕະຄາມະວັກ

## ໙. ມະຫັນລະກະວິຫາຣະສິກຂາບົດ

## ວ່າດ້ວຍການສ້າງວິຫານໃຫຍ່

## ເລື້ອງພຣະສັນນະ

[໑໓໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ມະຫາອຳມາດຜູ້ເປັນອຸປັດຖາກຂອງທ່ານພຣະສັນນະ ສ້າງວິຫານຖວາຍທ່ານ

ພຣະສັນນະ ໃນທີ່ນັ້ນ ທ່ານພຣະສັນນະສັ່ງໃຫ້ມຸງໃຫ້ສາບທາວິຫານທີ່ສ້າງສຳເລັດແລ້ວຫຼາຍ ໆ ຄັ້ງວິຫານມີນ້ຳໜັກຫຼາຍຈຶ່ງເພລົງມາ ຕໍ່ມາ ທ່ານພຣະສັນນະຈຶ່ງຫາເກັບຫຍ້າແລະໄມ້ ເຮັດໃຫ້ນາເຂົ້າໝຽວຂອງພາມຄົນໜຶ່ງເສຍຫາຍ ພາມນັ້ນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງຄູບາທັງຫຼາຍຈຶ່ງເຮັດນາເຂົ້າໝຽວຂອງເຮົາໃຫ້ເສຍຫາຍແນວນີ້ບໍ?

ພິກຂຸທັງຫຼາຍ ໄດ້ຍິນພາມຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະສັນນະຈຶ່ງໃຫ້ມຸງ ໃຫ້ສາບທາວິຫານທີ່ສ້າງສຳເລັດແລ້ວຫຼາຍ ໆ ຄັ້ງບໍ ເຮັດໃຫ້ວິຫານມີນ້ຳໜັກຫຼາຍ ຈຶ່ງພັງລົງມາ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານໃຫ້ມຸງໃຫ້ສາບທາວິຫານທີ່ສ້າງສຳເລັດແລ້ວຫຼາຍ ໆ ຄັ້ງ ວິຫານມີນ້ຳໜັກຫຼາຍ ຈຶ່ງເພລົງມາ ແມ່ນບໍ? ທ່ານພຣະສັນນະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໃຫ້ມຸງ ໃຫ້ສາບທາວິຫານທີ່ສ້າງເສັດແລ້ວຫຼາຍ ໆ ຄັ້ງ ຈົນວິຫານຮັບນ້ຳໜັກຫຼາຍ ຈົນເພລົງມາ ໂມຄະບຸຣຸດ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໓໔] ກໍ ພິກຂຸຈະສ້າງວິຫານຫຼັງໃໝ່ ຈະຕິດຕັ້ງບານປະຕູໃຫ້ວົງກັບປະຕູ ແລະຕົບແຕ່ງບານໜ້າຕ່າງ ຄວນຕັ້ງໃນທີ່ທີ່ປາສະຈາກຂອງຂຽວ ກະທຳການມຸງຫຼັງຄາໄດ້ ໒ – ໓ ຊັ້ນ ຖ້າທ່ານກະທຳການເກີນກວ່ານັ້ນ ແມ່ນຈະຕັ້ງໃນທີ່ທີ່ປາສະຈາກຂອງຂຽວ ຕ້ອງອາບັດປາຈິດຕິ

### ເລື້ອງພຣະສັນນະ ຈົບ

## ສິກຂາບົດວິພັງ

[໑໓໕] ວິຫານທີ່ຊື່ວ່າ ຫຼັງໃຫຍ່ ທ່ານກ່າວເຖິງວິຫານທີ່ມີເຈົ້າຂອງ

ທີ່ຊື່ວ່າ ວິຫານ ໄດ້ແກ່ ທີ່ຢູ່ເຊິ່ງໂບກສາບພາຍໃນ ຫຼື ພາຍນອກ ຫຼື ໂບກສາບທັງພາຍໃນພາຍນອກ

ຄຳວ່າ ສ້າງ ຄື ສ້າງເອງ ຫຼື ໃຊ້ຄົນອື່ນສ້າງ

ຄໍາວ່າ ໃກ້ວົງກົບປະຕູ ຄື ຊົ່ວໄລຍະຫັດຖະບາດອ້ອມວົງກົບ

ຄໍາວ່າ ຈະຕິດຕັ້ງບານປະຕູ ຄື ວາງບານປະຕູ

ຄໍາວ່າ ຕົບແຕ່ງບານໜ້າຕ່າງ ຄື ສາບທາບານໜ້າຕ່າງໃຫ້ມີສີຂາວ ໃຫ້ມີສີດໍາ ໃຫ້ມີສີຢາງໄມ້ ຂຽນລວດລາຍດອກໄມ້ ຂຽນລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ຫຼື ຂຽນລວດລາຍດອກຈອກ

ຄໍາວ່າ ຕັ້ງໃນທີ່ທີ່ປາສະຈາກຂອງຂຽວກະທໍາການມຸງຫຼັງຄາໄດ້ ໔ - ໓ ຊັ້ນ ຄວາມວ່າທີ່ຊື່ວ່າຂອງຂຽວ ໄດ້ແກ່ ບຸບພັນຊາດ ແລະ ອະປະຣັນຊາດ

ຖ້າພິກຂຸຕັ້ງໃນທີ່ທີ່ມີຂອງຂຽວ ຕ້ອງອາບັດທຸກກົດ

ພິກຂຸເມື່ອຈະມຸງຕາມແນວ ເພິ່ງດໍາເນີນການ ໔ ແນວ ສັ່ງແນວທີ ໓ ແລ້ວຈາກໄປ

ພິກຂຸເມື່ອຈະມຸງເປັນຊັ້ນ ເພິ່ງດໍາເນີນການ ໔ ຮອບ ສັ່ງຮອບທີ ໓ ແລ້ວຈາກໄປ

[໑໓໗] ຄໍາວ່າ ຖ້າທ່ານກະທໍາການເກີນວ່ານັ້ນ ແມ່ນຈະຢືນໃນທີ່ທີ່ປາສະຈາກຂອງຂຽວ ຄວາມວ່າ ພິກຂຸເມື່ອມຸງດ້ວຍດິນຈີ່ ຕ້ອງອາບັດປາຈິດຕິທຸກ ໆ ກ້ອນ ເມື່ອມຸງ ດ້ວຍແຜ່ນສີລາ ຕ້ອງອາບັດປາຈິດຕິທຸກ ໆ ກ້ອນ ເມື່ອມຸງດ້ວຍປູນຂາວ ຕ້ອງອາບັດປາຈິດຕິທຸກ ໆ ກ້ອນ ເມື່ອມຸງດ້ວຍຫຍ້າ ຕ້ອງອາບັດປາຈິດຕິທຸກ ໆ ກໍາຫຍ້າ ເມື່ອ ມຸງດ້ວຍໃບໄມ້ ຕ້ອງອາບັດປາຈິດຕິທຸກ ໆ ໃບ

## ບົດພາຊະນີ

## ຕິກະປາຈິດຕິ

ເກີນ ໔-໓ ຊັ້ນ ພິກຂຸສໍາຄັນວ່າເກີນ ດໍາເນີນການ ຕ້ອງອາບັດປາຈິດຕິ

ເກີນ ໔-໓ ຊັ້ນ ພິກຂຸບໍ່ແນ່ໃຈ ດໍາເນີນການ ຕ້ອງອາບັດປາຈິດຕິ

ເກີນ ໔-໓ ຊັ້ນ ພິກຂຸສໍາຄັນວ່າຍ່ອນກວ່າ ດໍາເນີນການ ຕ້ອງອາບັດປາຈິດຕິ

## ທຸກະທຸກກົດ

ຍ່ອນກວ່າ ໔-໓ ຊັ້ນ ພິກຂຸສໍາຄັນວ່າເກີນ ຕ້ອງອາບັດທຸກກົດ

ຍ່ອນກວ່າ ໔-໓ ຊັ້ນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຍ່ອນກວ່າ ໔-໓ ຊັ້ນ ພິກຂຸສໍາຄັນວ່າຍ່ອນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໓໘] ໑. ພິກຂຸມຸງພຽງ ໔-໓ ຊັ້ນ

໔. ພິກຂຸມຸງຢ່ອນກວ່າ ໔-໓ ຊັ້ນ
໓. ພິກຂຸມຸງເງື່ອມຜາມີປະຕູ
໔. ພິກຂຸຕົບແຕ່ງຖໍ້າ
໕. ພິກຂຸມຸງກຸຕິຫຍ້າ
໖. ພິກຂຸມຸງກຸຕິເພື່ອພິກຂຸອື່ນ
໗. ພິກຂຸມຸງດ້ວຍຊັບຕົນເອງ
໘. ພິກຂຸມຸງອາຄານນອກຈາກນັ້ນ[๑] ຍົກເວັ້ນອາຄານທີ່ພັກຂອງຕົນ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ມະຫັນລະກະວິຫາຣະສິກຂາບົດທີ ໙ ຈົບ**

# ໔. ພູຕະຄາມະວັກ

## ໑໐. ສັບປານະກະສິກຂາບົດ

## ວ່າດ້ວຍສິ່ງມີຊີວິດ

### ເລື້ອງພິກຂຸຊາວເມືອງອາລະວີ

[໑໓໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນອັກຄາລະວະເຈດີ ເຂດເມືອງອາລາວີ ຄັ້ງນັ້ນ ພວກພິກຂຸຊາວເມືອງອາລະວີກຳລັງຊ່ອຍກັນກໍ່ສ້າງ ຮູ້ຢູ່ວ່ານໍ້າມີສິ່ງມີຊີວິດ ຫົດຫຍ້າແດ່ ດິນແດ່ ໃຊ້ໃຫ້ຫົດຫຍ້າແດ່ ດິນແດ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຊາວເມືອງອາລະວີຮູ້ຢູ່ວ່ານໍ້າມີສິ່ງມີຊີວິດ ຫົດຫຍ້າແດ່ ດິນແດ່ ໃຊ້ໃຫ້ຫົດຫຍ້າແດ່ ດິນແດ່ນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸຊາວເມືອງອາລະວີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸຊາວເມືອງອາລະວີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ວ່ານໍ້າມີສິ່ງມີຊີວິດ ຫົດຫຍ້າແດ່ ດິນແດ່ ໃຊ້ໃຫ້ຫົດຫຍ້າແດ່ ດິນແດ່ ແມ່ນບໍ?" ພິກຂຸເຫຼົ່ານັ້ນ ທູນຮັບວ່າ

"ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຮູ້ຢູ່ວ່ານ້ຳມີສິ່ງມີຊີວິດ ຈຶ່ງທົດຫຍ້າແດ່ ດິນແດ່ ໃຊ້ໃຫ້ທົດຫຍ້າແດ່ ດິນແດ່ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໐] ກໍ ພິກຂຸໃດຮູ້ຢູ່ວ່ານ້ຳມີສິ່ງມີຊີວິດ ທົດ ຫຼື ໃຊ້ໃຫ້ທົດຫຍ້າ ຫຼື ດິນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸຊາວເມືອງອາລະວີ ຈົບ

## ສິກຂາບົດວິພັງ

[໑໔໑] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ໄດ້ແກ່ ພິກຂຸນັ້ນຮູ້ເອງ ຫຼື ຜູ້ອື່ນບອກໃຫ້ພິກຂຸນັ້ນຮູ້

ຄຳວ່າ ທົດ ຄື ພິກຂຸທົດເອງ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ທົດ ຄື ພິກຂຸໃຊ້ຜູ້ອື່ນໃຫ້ທົດ ຕ້ອງອາບັດປາຈິດຕີ

ຜູ້ຮັບຄຳສັ່ງຄັ້ງດຽວແຕ່ທົດຫຼາຍຄັ້ງ ພິກຂຸຜູ້ສັ່ງຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໑໔໔] ນ້ຳມີສິ່ງມີຊີວິດ ພິກຂຸສຳຄັນວ່າມີສິ່ງມີຊີວິດ ທົດ ຫຼື ໃຊ້ໃຫ້ທົດຫຍ້າ ຫຼື ດິນ ຕ້ອງອາບັດປາຈິດຕີ

ນ້ຳມີສິ່ງມີຊີວິດ ພິກຂຸບໍ່ແນ່ໃຈ ທົດ ຫຼື ໃຊ້ໃຫ້ທົດຫຍ້າ ຫຼື ດິນ ຕ້ອງອາບັດທຸກກົດ

ນ້ຳມີສິ່ງມີຊີວິດ ພິກຂຸສຳຄັນວ່າບໍ່ມີສິ່ງມີຊີວິດ ທົດ ຫຼື ໃຊ້ໃຫ້ທົດຫຍ້າ ຫຼື ດິນ ບໍ່ຕ້ອງອາບັດ

ນ້ຳບໍ່ມີສິ່ງມີຊີວິດ ພິກຂຸສຳຄັນວ່າມີສິ່ງມີຊີວິດ ຕ້ອງອາບັດທຸກກົດ

ນ້ຳບໍ່ມີສິ່ງມີຊີວິດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ນ້ຳບໍ່ມີສິ່ງມີຊີວິດ ພິກຂຸສຳຄັນວ່າບໍ່ມີສິ່ງມີຊີວິດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໓] ໑. ພິກຂຸບໍ່ຈົງໃຈ

໒. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ສັບປານະກະສິກຂາບົດທີ ໑໐ ຈົບ**

**ພູຕະຄາມວັກທີ ໒ ຈົບ**

## ລວມສິກຂາບົດທີ່ມີໃນພູຕະຄາມວັກ

ພູຕະຄາມວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ພູຕະຄາມສິກຂາບົດ | ວ່າດ້ວຍການພາກພູຕະຄາມ |
| ໒. ອັນຍະວາທະກະສິກຂາບົດ | ວ່າດ້ວຍການກ່າວປົກປິດ |
| ໓. ອຸດຊາປະນະກະສິກຂາບົດ | ວ່າດ້ວຍການກ່າວໃຫ້ເພ່ງໂທດ |
| ໔. ປະຖົມເສນາສະນະສິກຂາບົດ | ວ່າດ້ວຍເສນາສະນະຂໍ້ທີ ໑ |
| ໕. ທຸຕິຍະເສນາສະນະສິກຂາບົດ | ວ່າດ້ວຍເສນາສະນະຂໍ້ທີ ໒ |
| ໖. ອະນຸປະຂັດຊະສິກຂາບົດ | ວ່າດ້ວຍການເຂົ້າໄປແຊກແຊງ |
| ໗. ນິກກັນຖະນະສິກຂາບົດ | ວ່າດ້ວຍການລາກອອກ |
| ໘. ເວຫາສະກຸຕິສິກຂາບົດ | ວ່າດ້ວຍກຸຕິຊັ້ນລອຍ |
| ໙. ມະຫັນລະກະວິຫາຣະສິກຂາບົດ | ວ່າດ້ວຍການສ້າງວິຫານໃຫຍ່ |
| ໑໐. ສັບປານະກະສິກຂາບົດ | ວ່າດ້ວຍສິ່ງມີຊີວິດ |

# ໓. ໂອວາທະວັກ

##ໝວດວ່າດ້ວຍໂອວາດ

## ໑. ໂອວາທະສິກຂາບົດ

### ວ່າດ້ວຍການສັ່ງສອນພິກຂຸນີ

### ເລື້ອງພຣະສັບພັກຄີ

[໑໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພວກພິກຂຸນີ ຍ່ອມໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ບັດນັ້ນ ພວກພິກຂຸສັບພັກຄີໄດ້ມີການປຶກສາກັນດັ່ງນີ້ວ່າ "ທ່ານທັງຫຼາຍ ບັດນີ້ພິກຂຸ ຜູ້ເປັນເຖຣະທັງຫຼາຍສັ່ງສອນພວກພິກຂຸນີ ຍ່ອມໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ທ່ານທັງຫຼາຍ ມາເທີ້ນ ແມ່ນພວກເຮົາກໍຈະສັ່ງສອນພວກພິກຂຸນີແດ່" ເມື່ອແລ້ວພວກພິກຂຸສັບພັກຄີຈຶ່ງໄດ້ເຂົ້າໄປຫາພວກພິກຂຸນີ ແລ້ວໄດ້ກ່າວດັ່ງນີ້ວ່າ "ມາເທີ້ນ ນາງທັງຫຼາຍ ພວກທ່ານຈົ່ງເຂົ້າໄປຫາພວກອາດຕະມາແດ່ ພວກອາດຕະມາຈັກສັ່ງສອນໃຫ້"

ຫຼັງຈາກນັ້ນ ພວກພິກຂຸນີເຫຼົ່ານັ້ນໄດ້ພາກັນເຂົ້າໄປຫາພວກພິກຂຸສັບພັກຄີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ໄຫວ້ພວກພິກຂຸສັບພັກຄີແລ້ວນັ່ງໃນທີ່ສົມຄວນ ບັດນັ້ນພວກພິກຂຸສັບພັກຄີໄດ້ສະແດງທຳມິກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາ ແລ້ວສົ່ງກັບດ້ວຍກ່າວວ່າ "ພວກທ່ານກັບໄປເທີ້ນ ນາງທັງຫຼາຍ"

ຕໍ່ມາ ພວກພິກຂຸນີເຫຼົ່ານັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຢືນໃນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພວກພິກຂຸນີຜູ້ຢືນຢູ່ໃນທີ່ສົມຄວນເຫຼົ່ານັ້ນດັ່ງນີ້ວ່າ "ການສັ່ງສອນພວກພິກຂຸນີສຳເລັດຜົນດີບໍ?"

ພວກພິກຂຸນີຂາບທູນວ່າ "ການສັ່ງສອນຈະສຳເລັດຜົນໄດ້ມາແຕ່ໃສນໍ ຂ້ານ້ອຍພວກພຣະສັບພັກຄີສະແດງທຳມິກະຖາພຽງເລັກໜ້ອຍ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາ ແລ້ວສົ່ງພວກຂ້ານ້ອຍໃຫ້ກັບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພວກພິກຂຸນີເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ພິກຂຸນີເຫຼົ່ານັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວຈຶ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວກະທຳປະທັກຂິນຈາກໄປ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄືວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສະແດງທຳມີກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາແລ້ວສົ່ງໃຫ້ກັບ ແມ່ນບໍ?” ພວກພິກຂຸສັບພັກຄືທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງສະແດງທຳມີກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາແລ້ວສົ່ງໃຫ້ກັບແນວນັ້ນບໍ? ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ເມື່ອຊົງຕຳໜິແລ້ວໄດ້ຊົງສະແດງທຳມີກະຖາ ແລ້ວຈຶ່ງຮັບສັ່ງກັບພິກຂຸທັງຫຼາຍ ວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸເປັນຜູ້ສັ່ງສອນພິກຂຸນີ”

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງພິກຂຸເປັນຜູ້ສັ່ງສອນພິກຂຸນີຢ່າງນີ້

## ວິທີແຕ່ງຕັ້ງແລະກຳມະວາຈາແຕ່ງຕັ້ງພິກຂຸສັ່ງສອນພິກຂຸນີ

ເບື້ອງຕົ້ນເພິ່ງຂໍໃຫ້ພິກຂຸຮັບ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງ ຮັບຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໔໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ສັ່ງສອນພິກຂຸນີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ສັ່ງສອນພິກຂຸນີ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ສັ່ງສອນພິກຂຸນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໒ ຯລຯ ຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໓

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ສັ່ງສອນພິກຂຸນີ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ສັ່ງສອນພິກຂຸນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ສັ່ງສອນພິກຂຸນີແລ້ວ ສົງເຫັນດ້ວຍ ດັ່ງນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງຕັດໂທດຄວາມເປັນຄົນລ້ຽງຍາກ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໙] ກໍ ພິກຂຸໃດ ບໍ່ໄດ້ຮັບແຕ່ງຕັ້ງ ເພິ່ງສັ່ງສອນພິກຂຸນີທັງຫຼາຍ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງພຣະສັບພັກຄີ

[໑໔໗] ສະໄໝນັ້ນ ພິກຂຸຜູ້ເປັນເຖຣະທັງຫຼາຍຜູ້ໄດ້ຮັບແຕ່ງຕັ້ງແລ້ວສັ່ງສອນພວກພິກຂຸນີຍັງໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານຢູ່ເໝືອນເດີມ ຄັ້ງນັ້ນພວກພິກຂຸສັບພັກຄີໄດ້ມີການປຶກສາກັນດັ່ງນີ້ວ່າ "ທ່ານທັງຫຼາຍ ບັດນີ້ ພິກຂຸ ຜູ້ເປັນເຖຣະທັງຫຼາຍຜູ້ໄດ້ຮັບແຕ່ງຕັ້ງແລ້ວສັ່ງສອນພວກພິກຂຸນີຍັງໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານຢູ່ເໝືອນເດີມ ທ່ານທັງຫຼາຍ ມາເທີ້ນ ແມ່ນພວກເຮົາກໍຈະໄປນອກສີມາ ແຕ່ງຕັ້ງກັນແລະກັນໃຫ້ເປັນຜູ້ສັ່ງສອນພິກຂຸນີ ແລ້ວສັ່ງສອນພວກພິກຂຸນີຄືກັນ" ເມື່ອແລ້ວພວກພິກຂຸສັບພັກຄີຈຶ່ງໄດ້ພາກັນໄປນອກສີມາ ໄດ້ແຕ່ງຕັ້ງກັນ ແລະ ກັນໃຫ້ເປັນຜູ້ສັ່ງສອນພິກຂຸນີແລ້ວເຂົ້າໄປຫາພິກຂຸນີທັງຫຼາຍ ໄດ້ກ່າວດັ່ງນີ້ວ່າ "ນາງທັງຫຼາຍ ພວກອາດຕະມາໄດ້ຮັບແຕ່ງຕັ້ງແລ້ວ ພວກທ່ານຈົ່ງເຂົ້າໄປຫາພວກອາດຕະມາແດ່ ພວກອາດຕະມາຈັກສັ່ງສອນໃຫ້"

ຕໍ່ມາ ພວກພິກຂຸນີເຫຼົ່ານັ້ນໄດ້ພາກັນເຂົ້າໄປຫາພວກພິກຂຸສັບພັກຄີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ໄຫວ້ພວກພິກຂຸສັບພັກຄີແລ້ວນັ່ງໃນທີ່ສົມຄວນ ບັດນັ້ນ ພວກພິກຂຸສັບພັກຄີໄດ້ສະແດງທຳມີກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາ ແລ້ວສົ່ງກັບດ້ວຍກ່າວວ່າ "ພວກທ່ານກັບໄປເທີ້ນ ນາງທັງຫຼາຍ"

ຕໍ່ມາ ພວກພິກຂຸນີເຫຼົ່ານັ້ນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຢືນໃນທີ່ສົມຄວນ ພຣະຜູ້ມີພຣະພາກ

ເຈົ້າໄດ້ຕັດກັບພວກພິກຂຸນີຜູ້ຢືນຢູ່ ໃນທີ່ສົມຄວນເຫຼົ່ານັ້ນດັ່ງນີ້ວ່າ "ການສັ່ງສອນພວກພິກຂຸນີສຳເລັດຜົນດີບໍ?"

ພວກພິກຂຸນີຂາບທູນວ່າ "ການສັ່ງສອນຈະສຳເລັດຜົນໄດ້ມາແຕ່ໃສນໍ ຂ້ານ້ອຍ ພຣະສັບພັກຄີສະແດງທຳມີກະຖາພຽງເລັກໜ້ອຍ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາ ແລ້ວສົ່ງໃຫ້ກັບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພວກພິກຂຸນີເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ພິກຂຸນີເຫຼົ່ານັ້ນເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງ ດ້ວຍທຳມີກະຖາແລ້ວຈຶ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວກະທຳປະທັກຂິນ ຈາກໄປ

## ຊົງປະຊຸມສົງແຕ່ງຕັ້ງພິກຂຸສັ່ງສອນພິກຂຸນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສະແດງທຳມີກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາກ່ຽວກັບເດຍຣັດສານກະຖາ ແລ້ວສົ່ງໃຫ້ກັບ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງສະແດງທຳມີກະຖາພຽງເລັກໜ້ອຍແກ່ພວກພິກຂຸນີ ແລ້ວໃຫ້ວັນເວລາຜ່ານໄປດ້ວຍການສົນທະນາ ກ່ຽວກັບເດຍຣັດສານກະຖາແລ້ວສົ່ງໃຫ້ກັບນໍ? ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ເມື່ອຊົງຕຳໜິແລ້ວໄດ້ຊົງສະແດງທຳມີກະຖາແລ້ວຈຶ່ງຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໘ ຢ່າງ ເປັນຜູ້ສັ່ງສອນພິກຂຸນີ ຄື

### ຄຸນສົມບັດຂອງພິກຂຸຜູ້ສັ່ງສອນພິກຂຸນີ ໘ ຢ່າງ

໑. ເປັນຜູ້ມີສີນ ສຳລວມໃນປາຕິໂມກສັງວອນສີນ ເຖິງພ້ອມດ້ວຍອາຈາຣະແລະໂຄຈອນ ເຫັນໄພໃນຄວາມຜິດແມ່ນພຽງເລັກໜ້ອຍ ສະມາທານສຶກສາສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ເປັນຜູ້ຊົງສຸຕະ (ຈື່ສິ່ງທີ່ໄດ້ຮ່ຳຮຽນມາ) ສັ່ງສົມສຸຕະ (ສັ່ງສົມສິ່ງທີ່ໄດ້ຮ່ຳຮຽນມາ) ທ່ານໄດ້ຍິນໄດ້ຟັງທຳອັນງາມໃນເບື້ອງຕົ້ນ ງາມໃນທ່າມກາງ ງາມໃນ

ທີ່ສຸດ ອັນປະກາດພົມມະຈັນພ້ອມທັງອັດຖະ ພ້ອມທັງພະຍັນຊະນະ ຄົບຖ້ວນ ບໍລິບູນຫຼາຍ ຊົງຈຳໄວ້ໄດ້ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດແລ້ວດ້ວຍທິດຖິ

໓. ເປັນຜູ້ຊຳນານປາຕິໂມກທັງສອງ ແຈກແຈງໄດ້ຖືກຕ້ອງວ້ອງໄວ ສະຫຼຸບໄດ້ຮຽບຮ້ອຍ ທັງໂດຍສູດ ແລະ ໂດຍອະນຸພະຍັນຊະນະ

໔. ເປັນຜູ້ມີວາຈາສະຫຼະສະຫຼວຍ ມີສຽງໄພເລາະ

໕. ເປັນທີ່ນິຍົມຊົມຊອບຂອງພວກພິກຂຸນີໂດຍສ່ວນຫຼາຍ

໖. ເປັນຜູ້ສາມາດສັ່ງສອນພວກພິກຂຸນີໄດ້

໗. ເປັນຜູ້ບໍ່ເຄີຍປະພຶດລ່ວງຄະຣຸທຳໃນສະຕີຜູ້ນຸ່ງຫົ່ມຜ້າກາສາຍະບວດອຸທິດພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໘. ເປັນຜູ້ມີພັນສາ ໒໐ ຫຼື ເກີນກວ່າ ໒໐

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໘ ຢ່າງນີ້ ເປັນຜູ້ສັ່ງສອນພິກຂຸນີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໔໘] ຄຳວ່າ ກໍ່ຫລຸຫໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລຸຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລຸຫໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລຸຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ບໍ່ໄດ້ຮັບແຕ່ງຕັ້ງ ຄື ສົງຍັງບໍ່ໄດ້ແຕ່ງຕັ້ງດ້ວຍຍັດຕິຈະຕຸດຖະກຳ

ທີ່ຊື່ວ່າ ພິກຂຸນີທັງຫຼາຍ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ຄຳວ່າ ສັ່ງສອນ ຄວາມວ່າ ພິກຂຸສັ່ງສອນຄະຣຸທຳ ໘ ຢ່າງ ຕ້ອງອາບັດປາຈິດຕິ ສັ່ງສອນທຳຢ່າງອື່ນ ຕ້ອງອາບັດທຸກກົດ ສັ່ງສອນພິກຂຸນີທີ່ອຸປະສົມບົດໃນສົງຝ່າຍດຽວ ຕ້ອງອາບັດທຸກກົດ

[໑໔໙] ພິກຂຸຜູ້ໄດ້ຮັບແຕ່ງຕັ້ງແລ້ວນັ້ນເພິ່ງປັດກວາດບໍລິເວນ ຕັ້ງນ້ຳສັນນ້ຳໃຊ້ ປູອາສະນະໄວ້ ຊວນເພື່ອນພິກຂຸໄປນັ່ງດ້ວຍ

ພິກຂຸນີທັງຫຼາຍເພິ່ງໄປທີ່ນັ້ນ ແລ້ວໄຫວ້ພິກຂຸນັ້ນ ແລ້ວນັ່ງ ໃນທີ່ສົມຄວນ

ພິກຂຸຜູ້ໄດ້ຮັບແຕ່ງຕັ້ງແລ້ວນັ້ນ ເພິ່ງຖາມພິກຂຸນີທັງຫຼາຍວ່າ “ນາງທັງຫຼາຍ ພວກທ່ານພ້ອມພຽງກັນແລ້ວບໍ?”

ຖ້າພວກພິກຂຸນີຕອບວ່າ "ພວກເຮົາພ້ອມພຽງກັນແລ້ວ ຂ້ານ້ອຍ"
ເພິ່ງຖາມວ່າ "ນາງທັງຫຼາຍ ຄະຣຸທຳ ໘ ຂໍ້ຍັງຈຳກັນໄດ້ຢູ່ບໍ?"
ຖ້າພວກພິກຂຸນີຕອບວ່າ "ຍັງຈຳກັນໄດ້ຢູ່ ຂ້ານ້ອຍ"
ເພິ່ງກ່າວວ່າ "ນາງທັງຫຼາຍ ທຳນີ້ເປັນໂອວາດ" ແລ້ວເພິ່ງມອບໝາຍ
ຖ້າພວກພິກຂຸນີຕອບວ່າ "ຈຳກັນບໍ່ໄດ້ ຂ້ານ້ອຍ"
ເພິ່ງສູດຄະຣຸທຳດັ່ງນີ້ວ່າ

## ຄະຣຸທຳ ໘ ຂໍ້

໑. ພິກຂຸນີເຖິງຈະບວດໄດ້ ໑໐໐ ພັນສາ ກໍຕ້ອງກະທຳການຂາບໄຫວ້ ຕ້ອນຮັບ ກະທຳອັນຊະລີກຳ ກະທຳສາມີຈິກຳແກ່ພິກຂຸຜູ້ບວດແມ່ນໃນວັນນັ້ນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໒. ພິກຂຸນີບໍ່ເພິ່ງຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໓. ພິກຂຸນີເພິ່ງຫວັງທຳ ໒ ຢ່າງ ຄື ຖາມອຸໂປສົດ ແລະ ໄປຮັບໂອວາດຈາກພິກຂຸສົງທຸກເຄິ່ງເດືອນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໔. ພິກຂຸນີຈຳພັນສາແລ້ວເພິ່ງປະວາຣະນາໃນສົງ ໒ ຝ່າຍ ໂດຍຖານະ ໓ ຄື ໄດ້ເຫັນ ໄດ້ຟັງ ຫຼື ໄດ້ນຶກສົງໄສ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໕. ພິກຂຸນີຕ້ອງຄະຣຸທຳແລ້ວເພິ່ງປະພຶດປັກຂະມານັດໃນສົງ ໒ ຝ່າຍ ທຳຂໍ້ນີ້ ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໖. ພິກຂຸນີເພິ່ງສະແຫວງຫາການອຸປະສົມບົດໃນສົງ ໒ ຝ່າຍໃຫ້ແກ່ສິກຂະມານາທີ່ສິກສາ ທຳ ໖ ຂໍ້ເປັນເວລາ ໒ ປີແລ້ວ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໗. ພິກຂຸນີບໍ່ເພິ່ງດ່າ ບໍ່ເພິ່ງບໍຣິພາດພິກຂຸ ບໍ່ວ່າກໍລະນີໃດ ໆ ທຳຂໍ້ນີ້ພິກຂຸນີ ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໘. ຕັ້ງແຕ່ວັນນີ້ເປັນຕົ້ນໄປ ຫ້າມພິກຂຸນີສັ່ງສອນພິກຂຸ ແຕ່ບໍ່ຫ້າມພິກຂຸສັ່ງສອນພິກຂຸນີ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

ຖ້າພວກພິກຂຸນີຕອບວ່າ "ພວກເຮົາພ້ອມພຽງກັນແລ້ວ ຂ້ານ້ອຍ" ພິກຂຸຜູ້ໄດ້ຮັບແຕ່ງຕັ້ງແລ້ວ ສັ່ງສອນທຳອື່ນ ຕ້ອງອາບັດທຸກກົດ

ຖ້າພວກພິກຂຸນິຕອບວ່າ "ພວກເຮົາຍັງບໍ່ພ້ອມພຽງກັນ ຂ້ານ້ອຍ" ພິກຂຸຜູ້ໄດ້ຮັບ ແຕ່ງຕັ້ງແລ້ວ ສັ່ງສອນຄະຣຸທຳ ໘ ຂໍ້ ຕ້ອງອາບັດທຸກກົດ ພິກຂຸບໍ່ໃຫ້ໂອວາດ ສັ່ງສອນທຳອື່ນ ຕ້ອງອາບັດທຸກກົດ

## ບົດພາຊະນີ

[໑໕໐] ກຳ ທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸບໍ່ແນ່ໃຈ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຯລຯ ພິກຂຸບໍ່ແນ່ໃຈ ສັ່ງສອນ ຯລຯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຯລຯ ພິກຂຸບໍ່ແນ່ໃຈ ສັ່ງສອນ ຯລຯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຯລຯ ພິກຂຸບໍ່ແນ່ໃຈ ສັ່ງສອນ ຯລຯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ພິກຂຸນີສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຯລຯ ພິກຂຸບໍ່ແນ່ໃຈ ສັ່ງສອນ ຯລຯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນີສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຯລຯ ພິກຂຸບໍ່ແນ່ໃຈ ສັ່ງສອນ ຯລຯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

[໑໕໑] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສົງຍັງບໍ່ພ້ອມພຽງກັນ ພິກຂຸບໍ່ແນ່ໃຈ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນິສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ພິກຂຸນິສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນສັ່ງສອນ ฯลฯ ພິກຂຸບໍ່ແນ່ໃຈ ສັ່ງສອນ ฯลฯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນິສົງຍັງບໍ່ພ້ອມພຽງກັນ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ฯลฯ ພິກຂຸບໍ່ແນ່ໃຈ ສັ່ງສອນ ฯลฯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນິສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ฯลฯ ພິກຂຸບໍ່ແນ່ໃຈສັ່ງສອນ ฯลฯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ພິກຂຸນິສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນສັ່ງສອນ ฯลฯ ພິກຂຸບໍ່ແນ່ໃຈ ສັ່ງສອນ ฯลฯ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນິສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າຍັງບໍ່ພ້ອມພຽງກັນ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນິສົງພ້ອມພຽງກັນແລ້ວ ພິກຂຸບໍ່ແນ່ໃຈ ສັ່ງສອນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ພິກຂຸນິສົງພ້ອມພຽງກັນແລ້ວ ພິກຂຸສຳຄັນວ່າພ້ອມພຽງກັນແລ້ວ ສັ່ງສອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໕໔] ໑. ພິກຂຸໃຫ້ອຸດເທດ

໒. ພິກຂຸໃຫ້ປະຣິປຸດສາ[១]

໓. ພິກຂຸທີ່ພິກຂຸນີກ່າວຂໍວ່າ "ນິມົນພຣະຜູ້ເປັນເຈົ້າສູດເທີ້ນ" ສູດຢູ່

໔. ພິກຂຸຖາມບັນຫາ

໕. ພິກຂຸຖືກຖາມບັນຫາແລ້ວຕອບບັນຫາ

໖. ພິກຂຸສັ່ງສອນຜູ້ອື່ນແຕ່ມີພິກຂຸນີຟັງຢູ່ດ້ວຍ

໗. ພິກຂຸສັ່ງສອນສິກຂະມານາ
໘. ພິກຂຸສັ່ງສອນສາມະເນຣີ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ໂອວາທະສິກຂາບົດທີ ໑ ຈົບ**

# ໓. ໂອວາທະວັກ

## ໔. ອັດຖັງຄະຕະສິກຂາບົດ

### ວ່າດ້ວຍການສັ່ງສອນພິກຂຸນີໃນເວລາທີ່ດວງອາທິດອັດສະດົງແລ້ວ

### ເລື່ອງພຣະຈູລະປັນຖະກະ

[໑໕໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸຜູ້ເປັນເຖຣະຜັດປ່ຽນກັນສັ່ງສອນພວກພິກຂຸນີ

ຄັ້ງນັ້ນ ເຖິງວາຣະທີ່ທ່ານພຣະຈູລະປັນຖະກະຈະສັ່ງສອນພວກພິກຂຸນີ ພວກພິກຂຸນີກ່າວກັນຢ່າງນີ້ວ່າ “ວັນນີ້ເຫັນວ່າການສັ່ງສອນຈະບໍ່ສຳເລັດຜົນ ອີກຈັກໜ່ອຍພຣະຈູລະປັນຖະກະກໍຄົງຈະເປ່ງອຸທານຊ້ຳຊາກຄືເກົ່າອີກ” ເມື່ອແລ້ວພວກພິກຂຸນີໄດ້ພາກັນໄປຫາພຣະຈູລະປັນຖະກະເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ໄຫວ້ທ່ານພຣະຈູລະປັນຖະກະແລ້ວນັ່ງໃນທີ່ສົມຄວນ

ທ່ານພຣະຈູລະປັນຖະກະໄດ້ກ່າວກັບພວກພິກຂຸນີຜູ້ນັ່ງໃນທີ່ສົມຄວນແລ້ວດັ່ງນີ້ວ່າ “ນາງທັງຫຼາຍ ພວກທ່ານພ້ອມພຽງກັນແລ້ວບໍ?”

ພວກພິກຂຸນີຕອບວ່າ “ພວກເຮົາພ້ອມພຽງກັນແລ້ວ ຂ້ານ້ອຍ”
ພຣະຈູລະປັນຖະກະຖາມວ່າ “ນາງທັງຫຼາຍ ຄະຣຸທຳ ໘ ຂໍ້ ຍັງຈຳກັນໄດ້ຢູ່ບໍ?”
ພວກພິກຂຸນີຕອບວ່າ “ຍັງຈຳກັນໄດ້ຢູ່ ຂ້ານ້ອຍ”
ພຣະຈູລະປັນຖະກະມອບໝາຍວ່າ “ນາງທັງຫຼາຍ ທຳນີ້ເປັນໂອວາດ” ແລ້ວເປ່ງອຸທານຊ້ຳວ່າ

ມຸນີຜູ້ມີຈິດໝັ້ນຄົງ ບໍ່ຜະໝາດ ສຶກສາທາງແຫ່ງຄວາມເປັນມຸນີ
ຜູ້ຄົງທີ່ ສະງົບ ມີສະຕິທຸກຂະນະ ຍ່ອມເປັນຜູ້ບໍ່ເສົ້າໂສກ

ພວກພິກຂຸນີກ່າວຢ່າງນີ້ວ່າ "ພວກເຮົາໄດ້ກ່າວແລ້ວບໍ່ແມ່ນບໍວ່າ ວັນນີ້ເຫັນວ່າການສັ່ງສອນຈະບໍ່ສຳເລັດຜົນ ອີກຈັກໜ່ອຍພຣະຈູລະປັນຖະກະກໍຄົງຈະເປ່ງອຸທານຊ້ຳຊາກຄືເກົ່າ"

ທ່ານພຣະຈູລະປັນຖະກະໄດ້ຍິນຄຳສົນທະນານີ້ຂອງພວກພິກຂຸນີເຫຼົ່ານັ້ນແລ້ວ ຈຶ່ງເຫາະຂຶ້ນໄປສູ່ອາກາດ ຈົງກົມແດ່ ຢືນແດ່ ນັ່ງແດ່ ນອນແດ່ ບັນດານໃຫ້ຄວັນພຸ້ງກະຈາຍແດ່ ບັນດານໃຫ້ໄຟຮຸ່ງສະຫວ່າງແຈ້ງແດ່ ຫາຍຕົວແດ່ ໃນອາກາດ ເປ່ງອຸທານນັ້ນ ໆ ແລ້ວກ່າວພຣະພຸດທະພົດອື່ນ ໆ ເປັນຈຳນວນຫຼາຍ

ພວກພິກຂຸນີພາກັນກ່າວຢ່າງນີ້ວ່າ "ໜ້າອັດສະຈັນ ບໍ່ເຄີຍມີ ການສັ່ງສອນກ່ອນໜ້ານີ້ບໍ່ເຄີຍສຳເລັດຜົນແກ່ພວກເຮົາເໝືອນການສັ່ງສອນຂອງພຣະຈູລະປັນຖະກະໃນເວລານີ້ເລີຍ"

ເວລານັ້ນ ທ່ານພຣະຈູລະປັນຖະກະສັ່ງສອນພວກພິກຂຸນີຢູ່ຈົນຄ່ຳມືດແລ້ວສົ່ງກັບດ້ວຍກ່າວວ່າ "ພວກທ່ານກັບໄປເທີ້ນ ນາງທັງຫຼາຍ"

ຄັ້ງນັ້ນ ເມື່ອເຈົ້າໜ້າທີ່ປິດປະຕູເມືອງແລ້ວ ພວກພິກຂຸນີໄດ້ພັກແຮມຢູ່ນອກເມືອງ ຮຸ່ງເຊົ້າຈຶ່ງພາກັນເຂົ້າເມືອງ

ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີພວກນີ້ເປັນຜູ້ບໍ່ປະພຶດພົມມະຈັນ ພັກແຮມກັບພວກພິກຂຸໃນອາຮາມທັ້ງຄືນຫາກໍກັບເຂົ້າເມືອງໃນເວລາເຊົ້ານີ້

ພວກພິກຂຸໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເມື່ອດວງອາທິດອັດສະດົງແລ້ວ ເປັນຫຍັງ ທ່ານພຣະຈູລະປັນຖະກະຍັງສັ່ງສອນພວກພິກຂຸນີຢູ່ແນວນັ້ນນໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະຈູລະປັນຖະກະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະຈູລະປັນຖະກະວ່າ "ຈູລະປັນຖະກະ ໄດ້ຂ່າວວ່າ ເມື່ອດວງອາທິດອັດສະດົງແລ້ວ ທ່ານຍັງສັ່ງສອນພວກພິກຂຸນີຢູ່ ແມ່ນບໍ?" ທ່ານພຣະຈູລະປັນຖະກະທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ຈູລະປັນຖະກະ ເປັນຫຍັງ ເມື່ອດວງອາທິດອັດສະດົງແລ້ວ ທ່ານຈຶ່ງຍັງສັ່ງສອນພວກພິກຂຸນີຢູ່ນໍ ຈູລະປັນຖະກະ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໕໔] ຖ້າພິກຂຸແມ່ນໄດ້ຮັບການແຕ່ງຕັ້ງແລ້ວ ເມື່ອດວງອາທິດອັດສະດົງແລ້ວ ຍັງສັ່ງສອນພິກຂຸນີທັງຫຼາຍຢູ່ ຕ້ອງອາບັດປາຈິດຕີ

### ເລື້ອງພຣະຈູລະປັນຖະກະ ຈົບ

## ສິກຂາບົດວິພັງ

[໑໕໕] ພິກຂຸທີ່ຊື່ວ່າ ໄດ້ຮັບການແຕ່ງຕັ້ງແລ້ວ ຄື ໄດ້ຮັບການແຕ່ງຕັ້ງດ້ວຍຍັດຕິຈະຕຸດຖະກຳມະວາຈາແລ້ວ

ຄຳວ່າ ເມື່ອດວງອາທິດອັດສະດົງແລ້ວ ຄື ເມື່ອດວງອາທິດຕົກແລ້ວ

ທີ່ຊື່ວ່າ ພິກຂຸນີທັງຫຼາຍ ໄດ້ແກ່ ມາຕຸຄາມຜູ້ທີ່ອຸປະສົມບົດໃນສົງ ໔ ຝ່າຍ

ຄຳວ່າ ສັ່ງສອນ ຄວາມວ່າ ພິກຂຸສັ່ງສອນຄະຣຸທຳ ໘ ຢ່າງ ຫຼື ທຳຢ່າງອື່ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໕໖] ດວງອາທິດອັດສະດົງແລ້ວ ພິກຂຸສຳຄັນວ່າອັດສະດົງແລ້ວ ສັ່ງສອນ ຕ້ອງອາບັດປາຈິດຕີ

ດວງອາທິດອັດສະດົງແລ້ວ ພິກຂຸບໍ່ແນ່ໃຈ ສັ່ງສອນ ຕ້ອງອາບັດປາຈິດຕີ

ດວງອາທິດອັດສະດົງແລ້ວ ພິກຂຸສຳຄັນວ່າຍັງບໍ່ອັດສະດົງ ສັ່ງສອນ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ພິກຂຸສັ່ງສອນພິກຂຸນີທີ່ອຸປະສົມບົດໃນສົງຝ່າຍດຽວ ຕ້ອງອາບັດທຸກກົດ

ດວງອາທິດຍັງບໍ່ອັດສະດົງ ພິກຂຸສຳຄັນວ່າອັດສະດົງແລ້ວ ສັ່ງສອນ ຕ້ອງອາບັດທຸກກົດ

ດວງອາທິດຍັງບໍ່ອັດສະດົງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ດວງອາທິດຍັງບໍ່ອັດສະດົງ ພິກຂຸສຳຄັນວ່າຍັງບໍ່ອັດສະດົງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໕໗] ໑. ພິກຂຸໃຫ້ອຸດເທດ
໒. ພິກຂຸໃຫ້ປະຣິປຸດສາ
໓. ພິກຂຸທີ່ພິກຂຸນີກ່າວຂໍວ່າ "ນິມົນພຣະຜູ້ເປັນເຈົ້າສູດເທີ້ນ" ສູດຢູ່
໔. ພິກຂຸຖາມບັນຫາ
໕. ພິກຂຸຖືກຖາມບັນຫາແລ້ວຕອບບັນຫາ
໖. ພິກຂຸສັ່ງສອນຜູ້ອື່ນແຕ່ມີພິກຂຸນີຟັງຢູ່ດ້ວຍ
໗. ພິກຂຸສັ່ງສອນສິກຂະມານາ
໘. ພິກຂຸສັ່ງສອນສາມະເນຣີ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ອັດຖັງຄະຕະສິກຂາບົດທີ ໔ ຈົບ**

# ໓. ໂອວາທະວັກ

## ໑. ພິກຂຸນູປັດສະຍະສິກຂາບົດ

## ວ່າດ້ວຍການໄປສັ່ງສອນພິກຂຸນີເຖິງສຳນັກ

### ເລື້ອງພຣະສັບພັກຄີ

[໑໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ພວກພິກຂຸສັບພັກຄີເຂົ້າໄປທີ່ສຳນັກຂອງພິກຂຸນີ

### ສັ່ງສອນພວກພິກຂຸນີສັບພັກຄີ

ພວກພິກຂຸນີໄດ້ກ່າວກັບພວກພິກຂຸນີສັບພັກຄີດັ່ງນີ້ວ່າ "ມາເທີ້ນ ແມ່ເຈົ້າທັງຫຼາຍ ພວກເຮົາຈະໄປຮັບໂອວາດກັນ"

ພວກພິກຂຸນີສັບພັກຄີກ່າວວ່າ "ເປັນຫຍັງ ພວກເຮົາຈະຕ້ອງໄປຮັບໂອວາດ ພວກພຣະສັບພັກຄີມາສັ່ງສອນພວກເຮົາເຖິງບ່ອນນີ້ຢູ່ແລ້ວ"

ພວກພິກຂຸນີຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງເຂົ້າໄປໃນສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍນໍ" ແລ້ວແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພຣະນາງມະຫາປະຊາບໍດີໂຄຕະມີເປັນໄຂ້

[໑໕໙] ສະໄໝນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເປັນໄຂ້ ພິກຂຸຜູ້ເປັນເຖຣະທັງຫຼາຍເຂົ້າໄປຢ້ຽມເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພຣະນາງມະຫາປະຊາບໍດີໂຄຕະມີດັ່ງນີ້ວ່າ "ທ່ານຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?

ພຣະນາງມະຫາປະຊາບໍດີໂຄຕະມີຕອບວ່າ ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍກຳລັງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ແລ້ວ ຂໍນິມົນພຣະຜູ້ເປັນເຈົ້າທັງຫຼາຍສະແດງທຳເທີ້ນ ຂ້ານ້ອຍ"

ພຣະເຖຣະທັງຫຼາຍກ່າວວ່າ "ການເຂົ້າມາທີ່ສຳນັກພິກຂຸນີແລ້ວສະແດງທຳແກ່ພິກຂຸນີບໍ່ສົມຄວນ" ພາກັນມີຄວາມຢຳເກງຢູ່ບໍ່ສະແດງທຳ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປຍັງມພຣະນາງມະຫາປະຊາບໍດີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ປະທັບນັ່ງເທິງອາສະນະ ທີ່ເຂົາຈັດໄວ້ແລ້ວ ເມື່ອພຣະຜູ້ມີພຣະພາກເຈົ້າປະທັບນັ່ງແລ້ວ ໄດ້ຕັດກັບພຣະນາງມະຫາປະຊາ ບໍດີໂຄຕະມີນັ້ນດັ່ງນີ້ວ່າ "ໂຄຕະມີ ທ່ານສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?

ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນວ່າ "ເມື່ອກ່ອນ ພິກຂຸຜູ້ເປັນເຖຣະທັງຫຼາຍມາ ສະແດງທຳ ຂ້ານ້ອຍ ຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພິກຂຸທັງຫຼາຍກ່າວວ່າ ພຣະອົງຊົງຫ້າມໄວ້ ໄດ້ມີຄວາມຢຳເກງຢູ່ບໍ່ສະແດງທຳ ເຫດນັ້ນຂ້ານ້ອຍຈຶ່ງບໍ່ມີຄວາມຜາສຸກ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະນາງມະຫາປະຊາບໍດີໂຄຕະມີເຫັນ ຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດ ຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວຊົງລຸກຈາກອາສະນະສະເດັດໄປ

ຕໍ່ມາພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບ ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນ ພິກຂຸນີຜູ້ເປັນໄຂ້ໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໙໐] ອັນໜຶ່ງ ພິກຂຸໃດເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ ນອກສະ ໄໝ ຕ້ອງອາບັດປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ພິກຂຸນີເປັນໄຂ້ ນີ້ເປັນສະໄໝ ໃນຂໍ້ນັ້ນ

### ເລື້ອງພຣະນາງມະຫາປະຊາບໍດີໂຄຕະມີ ຈົບ

[໑໙໑] ຄຳວ່າ ອັນໜຶ່ງຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ອັນໜຶ່ງຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ທີ່ສຳນັກພິກຂຸນີ ໄດ້ແກ່ ສະຖານທີ່ທີ່ພິກຂຸນີພັກແມ່ນຄືນດຽວ

ຄຳວ່າ ເຂົ້າໄປ ຄື ໄປໃນທີ່ນັ້ນ

ທີ່ຊື່ວ່າ ພິກຂຸນີທັງຫຼາຍ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ຄຳວ່າ ສັ່ງສອນ ຄວາມວ່າ ພິກຂຸສັ່ງສອນຄະຣຸທຳ ໘ ຢ່າງ ຕ້ອງອາບັດປາຈິດຕີ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ພິກຂຸນີເປັນໄຂ້ ໄດ້ແກ່ ພິກຂຸນີບໍ່ສາມາດໄປຮັບໂອວາດ ຫຼື ຮ່ວມປະຊຸມໄດ້

## ບົດພາຊະນີ

### ຕິກະປາຈິດຕິ

[໑໗໔] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນນອກສະໄໝ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນນອກສະໄໝ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າອະນຸປະສຳບັນ ເຂົ້າໄປທີ່ສຳນັກພິກຂຸນີແລ້ວ ສັ່ງສອນນອກສະໄໝ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸສັ່ງສອນທຳຢ່າງອື່ນ ຕ້ອງອາບັດທຸກກົດ

ພິກຂຸສັ່ງສອນພິກຂຸນີທີ່ອຸປະສົມບົດໃນສົງຝ່າຍດຽວ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໗໕] ໑. ພິກຂຸສອນໃນສະໄໝ

໒. ພິກຂຸໃຫ້ອຸດເທດ

໓. ພິກຂຸໃຫ້ປະຣິປຸດສາ

໔. ພິກຂຸທີ່ພິກຂຸນີກ່າວຂໍວ່າ "ນິມົນພຣະຜູ້ເປັນເຈົ້າສູດເທີ້ນ" ສູດຢູ່

໕. ພິກຂຸຖາມບັນຫາ

໖. ພິກຂຸຖືກຖາມບັນຫາແລ້ວຕອບບັນຫາ

໗. ພິກຂຸສັ່ງສອນຜູ້ອື່ນແຕ່ມີພິກຂຸນີຟັງຢູ່ດ້ວຍ

໘. ພິກຂຸສັ່ງສອນສິກຂະມານາ

໙. ພິກຂຸສັ່ງສອນສາມະເນຣີ

໑໐. ພິກຂຸວິກົນຈະລິດ

໑໑. ພິກຂຸຕົ້ນບັນຍັດ

**ພິກຂຸນູປັດສະຍະສິກຂາບົດທີ ໑ ຈົບ**

# ໓. ໂອວາທະວັກ

## ໔. ອາມິສະສິກຂາບົດ

## ວ່າດ້ວຍການສັ່ງສອນພິກຂຸນີຍ້ອນເຫັນແກ່ອາມິດ

## ເລື້ອງພຣະສັບພັກຄີ

[໑໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພວກພິກຂຸນີ ຍ່ອມໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ

ພວກພິກຂຸສັບພັກຄີກ່າວຢ່າງນີ້ວ່າ "ພິກຂຸຜູ້ເປັນເຖຣະທັງຫຼາຍບໍ່ຕັ້ງໃຈສັ່ງສອນພິກຂຸນີທັງຫຼາຍ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພິກຂຸນີທັງຫຼາຍກໍຍ້ອນເຫັນແກ່ ອາມິດ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງກ່າວຢ່າງນີ້ວ່າ ພິກຂຸຜູ້ເປັນເຖຣະທັງຫຼາຍບໍ່ຕັ້ງໃຈສັ່ງສອນພິກຂຸນີທັງຫຼາຍ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພິກຂຸນີທັງຫຼາຍກໍຍ້ອນເຫັນແກ່ອາມິດນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານກ່າວຢ່າງນີ້ວ່າ ພິກຂຸຜູ້ເປັນເຖຣະທັງຫຼາຍບໍ່ຕັ້ງໃຈສັ່ງສອນພິກຂຸນີທັງຫຼາຍ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພິກຂຸນີທັງຫຼາຍກໍຍ້ອນເຫັນແກ່ອາມິດ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງກ່າວຢ່າງນີ້ວ່າ ພິກຂຸຜູ້ເປັນເຖຣະທັງຫຼາຍບໍ່ຕັ້ງໃຈສັ່ງສອນພິກຂຸນີທັງຫຼາຍ ພິກຂຸຜູ້ເປັນເຖຣະທັງຫຼາຍສັ່ງສອນພິກຂຸນີທັງຫຼາຍກໍຍ້ອນເຫັນແກ່ອາມິດນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໙໕] ກໍ ພິກຂຸໃດ ກ່າວຢ່າງນີ້ວ່າ ພິກຂຸ (ຜູ້ເປັນເຖຣະ) ທັງຫຼາຍສັ່ງສອນພິກຂຸນີທັງຫຼາຍຍ້ອນເຫັນແກ່ອາມິດ ຕ້ອງອາບັດປາຈິດຕິ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໙໙] ຄຳວ່າ ກໍ່ຫລືໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລືໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸໃນຄວາມໝາຍນີ້

ຄຳວ່າ ຍ້ອນເຫັນແກ່ອາມິດ ຄື ຍ້ອນເຫັນແກ່ຈີວອນ ຍ້ອນເຫັນແກ່ບິນທະບາດ ຍ້ອນເຫັນແກ່ເສນາສະນະ ຍ້ອນເຫັນແກ່ຄິລານະປັດໄຈເພສັດບໍຣິຂານ ຍ້ອນເຫັນແກ່ສັກກາຣະ ຍ້ອນເຫັນແກ່ຄວາມເຄົາລົບ ຍ້ອນເຫັນແກ່ຄວາມນັບຖື ຍ້ອນເຫັນແກ່ການຂາບໄຫວ້ ຍ້ອນເຫັນແກ່ການບູຊາ

ຄຳວ່າ ກ່າວຢ່າງນີ້ ຄວາມວ່າ ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດອຸປະສຳບັນທີ່ສົງແຕ່ງຕັ້ງໃຫ້ເປັນຜູ້ສັ່ງສອນພິກຂຸນີໃຫ້ເກີ້ເຂີນ ຈຶ່ງກ່າວຫາຢ່າງນີ້ວ່າ "ພິກຂຸນັ້ນສັ່ງສອນຍ້ອນເຫັນແກ່ຈີວອນ ຍ້ອນເຫັນແກ່ບິນທະບາດ ຍ້ອນເຫັນແກ່ເສນາສະນະ ຍ້ອນເຫັນແກ່ຄິລານະປັດໄຈເພສັດບໍຣິຂານ ຍ້ອນເຫັນແກ່ສັກກາຣະ ຍ້ອນເຫັນແກ່ຄວາມເຄົາລົບ ຍ້ອນເຫັນແກ່ຄວາມນັບຖື ຍ້ອນເຫັນແກ່ການຂາບໄຫວ້ ຍ້ອນເຫັນແກ່ການບູຊາ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ
## ຕິກະປາຈິດຕີ

[໑໙໗] ກຳ ທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ກ່າວຢ່າງນີ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ກ່າວຢ່າງນີ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງກ່າວຢ່າງນີ້ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດອຸປະສຳບັນທີ່ສົງບໍ່ໄດ້ແຕ່ງຕັ້ງໃຫ້ເປັນຜູ້ສັ່ງສອນພິກຂຸນີໃຫ້ເກີ້ເຂີນ ຈຶ່ງກ່າວຫາຢ່າງນີ້ວ່າ "ພິກຂຸນັ້ນສັ່ງສອນຍ້ອນເຫັນແກ່ຈີວອນ ຍ້ອນເຫັນແກ່ບິນທະບາດ ຍ້ອນເຫັນແກ່ເສນາສະນະ ຍ້ອນເຫັນແກ່ຄິລານະປັດໄຈເພສັດບໍຣິຂານ ຍ້ອນເຫັນແກ່ສັກກາຣະ ຍ້ອນເຫັນແກ່ຄວາມເຄົາລົບ ຍ້ອນເຫັນແກ່ຄວາມນັບຖື ຍ້ອນເຫັນແກ່ການຂາບໄຫວ້ ຍ້ອນເຫັນແກ່ການບູຊາ" ຕ້ອງອາບັດທຸກກົດ

ພິກຂຸຕ້ອງການຈະເຮັດໃຫ້ເສຍຊື່ ຕ້ອງການຈະເຮັດໃຫ້ອັບປະຍົດ ຕ້ອງການຈະເຮັດ ອະນຸປະສຳບັນທີ່ສົງແຕ່ງຕັ້ງ ຫຼື ບໍ່ໄດ້ແຕ່ງຕັ້ງໃຫ້ເປັນຜູ້ສັ່ງສອນພິກຂຸນີໃຫ້ເກີ້ເຂີນ ຈຶ່ງກ່າວຫາຢ່າງນີ້ວ່າ "ອະນຸປະສຳບັນນັ້ນສັ່ງສອນຍ້ອນເຫັນແກ່ຈີວອນ ຍ້ອນເຫັນແກ່ບິນທະບາດ ຍ້ອນເຫັນແກ່ເສນາສະນະ ຍ້ອນເຫັນແກ່ຄິລານະປັດໄຈເພສັດບໍຣິຂານ ຍ້ອນເຫັນແກ່ສັກກາຣະ ຍ້ອນເຫັນແກ່ຄວາມເຄົາລົບ ຍ້ອນເຫັນແກ່ຄວາມນັບຖື ຍ້ອນເຫັນແກ່ການຂາບໄຫວ້ ຍ້ອນເຫັນແກ່ການບູຊາ" ຕ້ອງອາບັດທຸກກົດ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງກ່າວຢ່າງນີ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ກ່າວຢ່າງນີ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງກ່າວຢ່າງນີ້ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໖໗] ໑. ພິກຂຸກ່າວຫາພິກຂຸຜູ້ສັ່ງສອນຍ້ອນເຫັນແກ່ຈີວອນ ຍ້ອນເຫັນແກ່ບິນທະບາດ ຍ້ອນເຫັນແກ່ເສນາສະນະ ຍ້ອນເຫັນແກ່ຄິລານະປັດໄຈເພສັດບໍຣິຂານ ຍ້ອນເຫັນແກ່ສັກກາຣະ ຍ້ອນເຫັນແກ່ຄວາມເຄົາລົບ ຍ້ອນເຫັນແກ່ຄວາມນັບຖື ຍ້ອນເຫັນແກ່ການຂາບໄຫວ້ ຍ້ອນເຫັນແກ່ການບູຊາຕາມປົກກະຕິ

໒. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ອານິສະສິກຂາບົດທີ ໔ ຈົບ**

# ໓. ໂອວາທະວັກ

## ໕. ຈີວະຣະທານະສິກຂາບົດ

## ວ່າດ້ວຍການຖວາຍຈີວອນ

## ເລື້ອງພິກຂຸອົງໜຶ່ງ

[໑໖໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງ ທ່ຽວບິນທະບາດໄປຕາມຖະໜົນສາຍໜຶ່ງ ພິກຂຸນີອົງໜຶ່ງກໍທ່ຽວບິນທະບາດໄປຕາມຖະໜົນສາຍດຽວກັນນັ້ນ

ບັດນັ້ນ ພິກຂຸໄດ້ກ່າວກັບພິກຂຸນີອົງນັ້ນດັ່ງນີ້ວ່າ "ໄປເທີ້ນ ນາງ ໃນທີ່ນັ້ນມີຜູ້ຖວາຍພິກສາ" ພິກຂຸນີກໍກ່າວຢ່າງນີ້ວ່າ "ໄປເທີ້ນ ພຣະຜູ້ເປັນເຈົ້າ ທີ່ນັ້ນມີຜູ້ຖວາຍພິກສາ" ພິກຂຸແລະພິກຂຸນີທັງ ໔ ອົງນັ້ນຈຶ່ງເປັນເພື່ອນກັນ ຍ້ອນພົບກັນຢູ່ເນືອງ ໆ

ຕໍ່ມາ ພິກຂຸຜູ້ເປັນເຈົ້າໜ້າທີ່ແຈກຈີວອນກຳລັງແຈກຈີວອນຂອງສົງ ພິກຂຸນີອົງນັ້ນໄປຮັບໂອວາດ ແລ້ວເຂົ້າໄປຫາພິກຂຸອົງນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ໄຫວ້ພິກຂຸອົງນັ້ນ ແລ້ວຢືນໃນທີ່ສົມຄວນ

ພິກຂຸຜູ້ເປັນເພື່ອນອົງນັ້ນໄດ້ກ່າວກັບພິກຂຸນີອົງນັ້ນຜູ້ຢືນຢູ່ ໃນທີ່ສົມຄວນວ່າ "ນາງ ນີ້ຈີວອນສ່ວນແບ່ງຂອງເຮົາ ທ່ານຈະຮັບບໍ?

ພິກຂຸນີຕອບວ່າ "ຮັບ ຂ້ານ້ອຍ ຍ້ອນຂ້ານ້ອຍມີຈີວອນເກົ່າ"

ບັດນັ້ນ ພິກຂຸນັ້ນຈຶ່ງໄດ້ໃຫ້ຈີວອນແກ່ພິກຂຸນີອົງນັ້ນ ສ່ວນຕົນເອງກໍຍັງຄົງໃຊ້ຈີວອນເກົ່າ

ພິກຂຸທັງຫຼາຍ ໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ທ່ານບັດນີ້ທ່ານຈົ່ງຕັດຫຍິບຈີວອນຂອງທ່ານ"

ລຳດັບນັ້ນ ພິກຂຸອົງນັ້ນຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງໃຫ້ຈີວອນແກ່ພິກຂຸນີແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານໃຫ້ຈີວອນແກ່ພິກຂຸນີແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ພິກຂຸນີນັ້ນເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ" ພິກຂຸນັ້ນທູນຮັບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ພິກຂຸຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຄວາມໜ້າເຫຼື້ອມໃສ ຫຼື ບໍ່ໜ້າເຫຼື້ອມໃສ ຂອງທີ່ມີຢູ່ ຫຼື ບໍ່ມີຢູ່ຂອງພິກຂຸນີ ຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດນໍ ໂມຄະບຸຣຸດ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພິກຂຸອົງໜຶ່ງ ຈົບ**

## ເລື້ອງພິກຂຸຫຼາຍອົງ

[໑໗໐] ສະໄໝນັ້ນ ພິກຂຸທັງຫຼາຍພາກັນມີຄວາມຢຳເກງ ຈຶ່ງບໍ່ຍອມໃຫ້ຈີວອນແລກປ່ຽນກັບພິກຂຸນີທັງຫຼາຍ ພິກຂຸນີທັງຫຼາຍຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງບໍ່ຍອມໃຫ້ຈີວອນແລກປ່ຽນກັບພວກເຮົານໍ?"

ພິກຂຸທັງຫຼາຍໄດ້ຍິນພິກຂຸນີທັງຫຼາຍຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ແລກປ່ຽນຈີວອນໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະຫະທຳມິກ ໕ ຄື ພິກຂຸ ພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ໃຫ້ຈີວອນແລກປ່ຽນກັນໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະຫະທຳມິກ ໕ ເຫຼົ່ານີ້ ໃຫ້ຈີວອນແລກປ່ຽນກັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໗໑] ອັນໜຶ່ງ ພິກຂຸໃດໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດປາຈິດຕິ ເວັ້ນໄວ້ແຕ່ແລກປ່ຽນກັນ

### ເລື້ອງພິກຂຸຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໗໔] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໘ ຝ່າຍ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ເວັ້ນໄວ້ແຕ່ແລກປ່ຽນກັນ ຄື ພິກຂຸໃຫ້ ຕ້ອງອາບັດປາຈິດຕິ ຍົກເວັ້ນແລກປ່ຽນກັນ

## ບົດພາຊະນີ

### ຕິກະປາຈິດຕິ

[໑໗໙] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຫ້ຈີວອນ ຕ້ອງອາບັດປາຈິດຕິ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈໃຫ້ຈີວອນ ຕ້ອງອາບັດປາຈິດຕິ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ໃຫ້ຈີວອນ ຕ້ອງອາບັດປາຈິດຕິ ເວັ້ນໄວ້ແຕ່ແລກປ່ຽນກັນ

### ຕິກະທຸກກົດ

ພິກຂຸນີທີ່ອຸປະສົມບົດໃນສົງຝ່າຍດຽວ ພິກຂຸໃຫ້ຈີວອນ ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ແລກປ່ຽນກັນ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ໃຫ້ຈີວອນ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ໃຫ້ຈີວອນ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ໃຫ້ຈີວອນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໗໔] ໑. ພິກຂຸຜູ້ໃຫ້ແກ່ພິກຂຸນີທີ່ເປັນຍາດ

໒. ພິກຂຸແລກ ຄື ເອົາຈີວອນລາຄາຖືກແລກຈີວອນລາຄາແພງ ຫຼື ຈີວອນລາຄາແພງແລກຈີວອນລາຄາຖືກ

໓. ພິກຂຸເຈົ້າຂອງຈີວອນທີ່ພິກຂຸນີຖືວິສາສະເອົາໄປ

໔. ພິກຂຸເຈົ້າຂອງຈີວອນທີ່ພິກຂຸນີຂໍຢືມໄປ

໕. ພິກຂຸໃຫ້ບໍຣິຂານອື່ນ ນອກຈາກຈີວອນ

໖. ພິກຂຸໃຫ້ແກ່ສິກຂະມານາ

໗. ພິກຂຸໃຫ້ແກ່ສາມະເນຣີ

໘. ພິກຂຸວິກົນຈະລິດ

໙. ພິກຂຸຕົ້ນບັນຍັດ

**ຈີວະຣະທານະສິກຂາບົດທີ ໕ ຈົບ**

# ៦. ໂອວາທະວັກ

## ៥. ຈີວະຣະສິບພະນະສິກຂາບົດ

## ວ່າດ້ວຍການຫຍິບຈີວອນໃຫ້ພິກຂຸນີ

## ເລື້ອງພຣະອຸທາຍີ

[໑໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸທາຍີເປັນຜູ້ຊຳນານການຕັດຫຍິບຈີວອນ ພິກຂຸນີອົງໜຶ່ງເຂົ້າໄປຫາທ່ານພຣະອຸທາຍີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍຂໍໂອກາດ ພຣະຜູ້ເປັນເຈົ້າ ຊ່ວຍຫຍິບຈີວອນໃຫ້ດ້ວຍເທີ້ນ ຂ້ານ້ອຍ"

ບັດນັ້ນ ທ່ານພຣະອຸທາຍີຈຶ່ງໄດ້ຫຍິບຈີວອນໃຫ້ນາງພິກຂຸນີນັ້ນ ຍ້ອມຢ່າງດີ ຊັກສະອາດດີແລ້ວ ແຕ້ມຮູບໃສ່ຕາມຈິນຕະນາການໃສ່ກາງຜ້າແລ້ວພັບເກັບໄວ້

ຄັ້ງນັ້ນ ພິກຂຸນີອົງນັ້ນໄດ້ເຂົ້າໄປຫາທ່ານພຣະອຸທາຍີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຈີວອນນັ້ນຢູ່ໃສແລ້ວນໍ ຂ້ານ້ອຍ"

ທ່ານພຣະອຸທາຍີຕອບວ່າ "ນາງ ມາເທີ້ນ ທ່ານຈົ່ງນຳຈີວອນຜືນນີ້ທີ່ພັບເກັບໄວ້ນັ້ນແລ້ວ ຈົ່ງຫົ່ມຈີວອນຜືນນີ້ຢ່າງຕາມຫຼັງພິກຂຸນີສົງ ໃນເວລາທີ່ພິກຂຸນີສົງມາຮັບໂອວາດ"

ຄັ້ງນັ້ນ ພິກຂຸນີອົງນັ້ນໄດ້ນຳຈີວອນທີ່ພັບເກັບໄວ້ດີນັ້ນ ແລ້ວໄດ້ຫົ່ມຈີວອນຜືນນັ້ນຍ່າງຕາມຫຼັງພິກຂຸນີສົງມາ ໃນເວລາທີ່ພິກຂຸນີສົງມາຮັບໂອວາດ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ພວກພິກຂຸນີບໍ່ຢ້ານບາບ ໃຈເຖິງຂາດຢາງອາຍ ຈຶ່ງໄດ້ແຕ້ມຮູບໃສ່ກາງຈີວອນແນວນັ້ນ"

ພິກຂຸນີທັງຫຼາຍກ່າວຢ່າງນີ້ວ່າ "ຮູບນີ້ໃຜແຕ້ມ"

ພິກຂຸນີນັ້ນຕອບວ່າ "ພຣະອຸທາຍີ"

ພິກຂຸນີທັງຫຼາຍກ່າວວ່າ "ຮູບແຕ້ມຕາມຈິນຕະນາການປະເພດນີ້ ເຖິງພວກນັກເລງ ຕັດປ່ອງຍ່ອງເບົາ ບໍ່ຢ້ານບາບ ກໍຍັງບໍ່ເຫັນວ່າງາມ ເປັນຫຍັງ ພຣະອຸທາຍີຈຶ່ງເຫັນວ່າງາມນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີ ຈຶ່ງຫຍິບຈີວອນໃຫ້ພິກຂຸນີນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານຫຍິບຈີວອນໃຫ້ພິກຂຸນີ ແມ່ນບໍ?" ທ່ານພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸທາຍີ ພິກຂຸນີນັ້ນເປັນຍາດຂອງທ່ານຫຼືບໍ່ແມ່ນຍາດ" ທ່ານພຣະອຸທາຍີຂາບທູນວ່າ "ບໍ່ແມ່ນຍາດ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ພິກຂຸຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ຄວາມເໝາະສົມ ຫຼື ບໍ່ເໝາະສົມ ຄວາມໜ້າເຫຼື້ອມໃສ ຫຼື ບໍ່ໜ້າເຫຼື້ອມໃສຂອງພິກຂຸນີຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງຫຍິບຈີວອນໃຫ້ແກ່ພິກຂຸນີຜູ້ບໍ່ແມ່ນຍາດນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໗໖] ກໍ ພິກຂຸໃດ ຫຍິບ ຫຼື ໃຊ້ໃຫ້ຫຍິບຈີວອນໃຫ້ພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດປາຈິດຕິ

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໑໗໗] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ທີ່ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ຫຍິບ ຄື ພິກຂຸຫຍິບໃຫ້ເອງ ຕ້ອງອາບັດປາຈິດຕິທຸກ ໆ ຮອຍເຂັມ

ຄຳວ່າ ໃຊ້ໃຫ້ຫຍິບ ຄື ພິກຂຸໃຊ້ໃຫ້ຜູ້ອື່ນຫຍິບໃຫ້ ຕ້ອງອາບັດປາຈິດຕິ ຜູ້ຮັບຄຳສັ່ງ ຄັ້ງດຽວ ແຕ່ຫຍິບຫຼາຍຄັ້ງ ພິກຂຸຜູ້ສັ່ງຕ້ອງອາບັດປາຈິດຕິ

## ບົດພາຊະນີ

### ຕິກະປາຈິດຕີ

[໑໗໘] ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຫຍິບ ຫຼື ໃຊ້ໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຫຍິບຫຼືໃຊ້ໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດປາຈິດຕີ

ພິກຂຸນີທີ່ບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຫຍິບ ຫຼື ໃຊ້ໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸນີທີ່ອຸປະສົມບົດໃນສົງຝ່າຍດຽວ ພິກຂຸຫຍິບ ຫຼື ໃຊ້ໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຫຍິບຫຼືໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸບໍ່ແນ່ໃຈ ຫຍິບ ຫຼື ໃຊ້ໃຫ້ຫຍິບຈີວອນໃຫ້ ຕ້ອງອາບັດທຸກກົດ

ພິກຂຸນີທີ່ເປັນຍາດ ພິກຂຸສຳຄັນວ່າເປັນຍາດ ຫຍິບຫຼືໃຊ້ໃຫ້ຫຍິບຈີວອນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໗໙] ໑. ພິກຂຸຫຍິບຈີວອນໃຫ້ພິກຂຸນີຜູ້ເປັນຍາດ

໒. ພິກຂຸຫຍິບຫຼືໃຊ້ໃຫ້ຫຍິບບໍຣິຂານອື່ນໃຫ້ນອກຈາກຈີວອນ

໓. ພິກຂຸຫຍິບຈີວອນໃຫ້ສິກຂະມານາ

໔. ພິກຂຸຫຍິບຈີວອນໃຫ້ສາມະເນຣີ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ຈີວະຣະສິບພະນະສິກຂາບົດທີ ໖ ຈົບ**

# ៩. ໂອວາທະວັກ

## ໗. ສັງວິທານະສິກຂາບົດ

### ວ່າດ້ວຍການຊັກຊວນເດີນທາງຮ່ວມກັນ

### ເລື້ອງພຣະສັບພັກຄີ

[໑໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີທັງຫຼາຍ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາ ວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດທ່ຽວໄປກັບພິກຂຸນີທັງຫຼາຍ ເໝືອນພວກເຮົາກັບພັນລະຍາທ່ຽວໄປນຳກັນ

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງຊັກຊວນກັນຍ່າງທາງໄກຮ່ວມກັນກັບພິກຂຸນີທັງຫຼາຍນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີ ໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີທັງຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີທັງຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍ ພິກຂຸໃດ ຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ ໂດຍທີ່ສຸດພຽງແຕ່ສິ້ນໄລຍະບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸແລະພິກຂຸນີຫຼາຍອົງ

[໑໗໑] ສະໄໝນັ້ນ ພວກພິກຂຸແລະພວກພິກຂຸນີຫຼາຍອົງຈະເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ພວກເຮົາຈະຂໍເດີນທາງໄປກັບພຣະຜູ້ເປັນທັງຫຼາຍ"

ພິກຂຸທັງຫຼາຍກ່າວວ່າ "ນາງທັງຫຼາຍ ການຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີບໍ່ສົມຄວນ ພວກທ່ານຈະໄປກ່ອນ ຫຼື ໃຫ້ພວກເຮົາໄປກ່ອນ"

ພິກຂຸນີທັງຫຼາຍຕອບວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ເປັນບຸຣຸດຜູ້ລ້ຳເລີດ ນິມົນລ່ວງໜ້າໄປກ່ອນເທີ້ນ ຂ້ານ້ອຍ"

ຄັ້ງນັ້ນ ເມື່ອພິກຂຸນີເຫຼົ່ານັ້ນເດີນທາງໄປພາຍຫຼັງ ພວກໂຈນຈຶ່ງປຸ້ນຈີ້ ແລະ ທຳຮ້າຍໃນລະຫວ່າງທາງ ບັດນັ້ນ ເມື່ອພິກຂຸນີເຫຼົ່ານັ້ນເດີນທາງເຖິງນະຄອນສາວັດຖີ ຈຶ່ງບອກເລື້ອງນັ້ນແກ່ພິກຂຸນີທັງຫຼາຍ ພິກຂຸນີເຫຼົ່ານັ້ນ ຈຶ່ງບອກເລື້ອງນັ້ນແກ່ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ເດີນທາງຮ່ວມກັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຫົນທາ໔໑ງທີ່ຈະເພິ່ງໄປດ້ວຍກອງກວຽນ ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານ ເຮົາອະນຸຍາດໃຫ້ຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໗໔] ອັນໜຶ່ງ ພິກຂຸໃດຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ ໂດຍທີ່ສຸດແມ່ນສິ້ນໄລຍະບໍລິເວນໝູ່ບ້ານໜຶ່ງ ນອກສະໄໝ ຕ້ອງອາບັດປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ເປັນຫົນທາງທີ່ຈະເພິ່ງໄປດ້ວຍກອງກວຽນ ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານ ນີ້ເປັນສະໄໝໃນຂໍ້ນັ້ນ

**ເລື້ອງພິກຂຸແລະນາງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໗໕] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໔ ຝ່າຍ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ຊັກຊວນກັນ ຄື ຊັກຊວນກັນວ່າ ພວກເຮົາໄປກັນເທີ້ນ ນາງ ພວກເຮົາໄປ ກັນເທີ້ນ ພຣະຜູ້ເປັນເຈົ້າ ໄປກັນເທີ້ນ ພຣະຜູ້ເປັນເຈົ້າ ພວກເຮົາໄປກັນເທີ້ນ ນາງ ພວກເຮົາຈະ ໄປວັນນີ້ ມື້ອື່ນ ຫຼື ມື້ຮືນີ້ ຕ້ອງອາບັດທຸກກົດ

ຄຳວ່າ ໂດຍທີ່ສຸດແມ່ນສິ້ນໄລຍະບໍລິເວນໝູ່ບ້ານໜຶ່ງ ຄື ໝູ່ບ້ານໜຶ່ງກຳນົດໂດຍໄກ່ບິນ ໄປຕົກ ຕ້ອງອາບັດປາຈິດຕີທຸກ ໆ ບໍລິເວນໝູ່ບ້ານ ໃນປ່າທີ່ບໍ່ມີໝູ່ບ້ານ ຕ້ອງອາບັດປາຈິດຕີທຸກ ໆ ເຄິ່ງໂຍດ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ຫົນທາງທີ່ຈະເພິ່ງໄປດ້ວຍກອງກວຽນ ຄື ບໍ່ສາມາດຈະໄປໄດ້ ເວັ້ນໄວ້ແຕ່ໄປ ດ້ວຍກອງກວຽນ

ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນຫົນທາງນັ້ນ ຜາກົດທີ່ຢູ່ ຜາກົດທີ່ກິນ ຜາກົດທີ່ຢືນ ຜາກົດທີ່ນັ່ງ ຜາກົດທີ່ນອນຂອງພວກໂຈນ

ທີ່ຊື່ວ່າ ມີໄພເປັນຕາຢ້ານ ຄື ໃນຫົນທາງນັ້ນ ຜາກົດມີມະນຸດຖືກພວກໂຈນຂ້າ ຜາກົດມີ ມະນຸດຖືກປຸ້ນ ຜາກົດມີມະນຸດຖືກທຸບຕີ

ພິກຂຸພາໄປຕະຫຼອດທາງທີ່ມີໄພເປັນຕາຢ້ານ ພໍເຫັນທີ່ປອດໄພເພິ່ງສົ່ງພິກຂຸນີທັງຫຼາຍ ໄປດ້ວຍກ່າວວ່າ “ພວກທ່ານຈົ່ງໄປເທີ້ນ”

## ບົດພາຊະນີ

### ຕິກະປາຈິດຕີ

[໑໘໔] ຊັກຊວນກັນແລ້ວ ພິກຂຸສຳຄັນວ່າຊັກຊວນກັນແລ້ວ ເດີນທາງໄກນຳກັນໂດຍທີ່ ສຸດແມ່ນຊົ່ວໄລຍະໝູ່ບ້ານໜຶ່ງ ນອກສະໄໝ ຕ້ອງອາບັດປາຈິດຕີ

ຊັກຊວນກັນແລ້ວ ພິກຂຸບໍ່ແນ່ໃຈ ເດີນທາງໄກນຳກັນໂດຍທີ່ສຸດແມ່ນຊົ່ວໄລຍະໝູ່ບ້ານ ໜຶ່ງ ນອກສະໄໝ ຕ້ອງອາບັດປາຈິດຕີ

ຊັກຊວນກັນແລ້ວ ພິກຂຸສຳຄັນວ່າບໍ່ໄດ້ຊັກຊວນ ເດີນທາງໄກນຳກັນໂດຍທີ່ສຸດແມ່ນ ຊົ່ວ ໄລຍະໝູ່ບ້ານໜຶ່ງ ນອກສະໄໝ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸຊັກຊວນ ພິກຂຸນີບໍ່ໄດ້ຊັກຊວນ ຕ້ອງອາບັດທຸກກົດ

ບໍ່ໄດ້ຊັກຊວນ ພິກຂຸສຳຄັນວ່າຊັກຊວນ ຕ້ອງອາບັດທຸກກົດ
ບໍ່ໄດ້ຊັກຊວນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ໄດ້ຊັກຊວນ ພິກຂຸສຳຄັນວ່າບໍ່ໄດ້ຊັກຊວນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໗໕] ໑. ພິກຂຸແລະພິກຂຸນີໄປໃນສະໄໝທີ່ຊົງອະນຸຍາດ
໒. ພິກຂຸແລະພິກຂຸນີບໍ່ໄດ້ຊັກຊວນກັນໄປ
໓. ພິກຂຸບໍ່ໄດ້ຊັກຊວນແຕ່ພິກຂຸນີຊັກຊວນ
໔. ພິກຂຸແລະພິກຂຸນີໄປນຳກັນໂດຍບໍ່ໄດ້ນັດໝາຍກັນ
໕. ພິກຂຸແລະພິກຂຸນີໄປໃນເວລາມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສັງວິທານະສິກຂາບົດທີ ໗ ຈົບ**

# ໓. ໂອວາທະວັກ

## ໗. ນາວາພິຣູຫະນະສິກຂາບົດ

## ວ່າດ້ວຍການໂດຍສານເຮືອລຳດຽວກັນ

### ເລື້ອງພຣະສັບພັກຄີ

[໑໗໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຊັກຊວນພິກຂຸນີທັງຫຼາຍໂດຍສານເຮືອລຳດຽວກັນ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ຊັກຊວນພິກຂຸນີທັງຫຼາຍຫຼິ້ນເຮືອລຳດຽວກັນ ເໝືອນພວກເຮົາກັບພັນລະຍາຫຼິ້ນເຮືອລຳດຽວກັນ"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຊັກຊວນພິກຂຸນີ

ທັງຫຼາຍໂດຍສານເຮືອລຳດຽວກັນບໍ" ເມື່ອແລ້ວພິກຂຸເຫຼົ່ານັ້ນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຊັກຊວນພິກຂຸນີທັງຫຼາຍໂດຍສານເຮືອລຳດຽວກັນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຊັກຊວນພິກຂຸນີທັງຫຼາຍໂດຍສານເຮືອລຳດຽວກັນບໍ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ ໄປທວນນ້ຳກໍຕາມ ໄປຕາມນ້ຳກໍຕາມ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸແລະພິກຂຸນີຫຼາຍອົງ

[໑໗໗] ສະໄໝນັ້ນ ພວກພິກຂຸ ແລະ ພວກພິກຂຸນີຫຼາຍອົງຈະເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ລະຫວ່າງທາງມີແມ່ນ້ຳທີ່ຕ້ອງຂ້າມ ຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ພວກຂ້ານ້ອຍຈະຂໍຂ້າມໄປພ້ອມກັບພຣະຜູ້ເປັນເຈົ້າທັງຫຼາຍ"

ພິກຂຸທັງຫຼາຍກ່າວວ່າ "ນາງທັງຫຼາຍ ການຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນບໍ່ສົມຄວນ ພວກທ່ານຈັກຂ້າມໄປກ່ອນ ຫຼື ໃຫ້ພວກເຮົາຂ້າມໄປກ່ອນ"

ພິກຂຸນີທັງຫຼາຍຕອບວ່າ "ພຣະຜູ້ເປັນເຈົ້າທັງຫຼາຍເປັນບຸຣຸດຜູ້ລ້ຳເລີດ ນິມົນຂ້າມໄປກ່ອນເທີ້ນ ຂ້ານ້ອຍ"

ຄັ້ງນັ້ນ ເມື່ອພິກຂຸນີເຫຼົ່ານັ້ນຂ້າມໄປພາຍຫຼັງ ພວກໂຈນຈຶ່ງປຸ້ນ ແລະ ທຳຮ້າຍ ໃນລະຫວ່າງທາງ ບັດນັ້ນ ເມື່ອພິກຂຸນີເຫຼົ່ານັ້ນເດີນທາງເຖິງນະຄອນສາວັດຖີ ຈຶ່ງບອກເລື້ອງນັ້ນ

ແກ່ພິກຂຸນີທັງຫຼາຍ ພິກຂຸນີເຫຼົ່ານັ້ນ ຈຶ່ງບອກເລື້ອງນັ້ນແກ່ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ໂດຍສານເຮືອລຳດຽວກັນຂ້າມຟາກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໃນການຂ້າມຟາກ ເຮົາອະນຸຍາດໃຫ້ຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໗໗] ອັນໜຶ່ງ ພິກຂຸໃດຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ ໄປທວນນ້ຳກໍຕາມໄປຕາມນ້ຳກໍຕາມ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ຂ້າມຟາກ

### ເລື້ອງພິກຂຸແລະພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໗໘] ຄຳວ່າ ອັນໜຶ່ງ ໆລ ໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລ ໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອັນໜຶ່ງ ໆລ ໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລ ໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໘ ຝ່າຍ

ຄຳວ່າ ກັບ ຄື ລວມກັນໂດຍຄວາມເປັນອັນດຽວກັນ

ຄຳວ່າ ຊັກຊວນກັນ ຄື ຊັກຊວນກັນວ່າ ໄປໂດຍສານເຮືອກັນເທີ້ນ ນາງ ໄປໂດຍສານເຮືອກັນເທີ້ນ ພຣະຜູ້ເປັນເຈົ້າ ໄປໂດຍສານເຮືອກັນເທີ້ນ ຂ້ານ້ອຍ ໄປໂດຍສານເຮືອກັນເທີ້ນນໍພວກເຮົາຈະໄປໂດຍສານເຮືອກັນວັນນີ້ ມື້ອື່ນ ຫຼື ມື້ຮືນີ້ ຕ້ອງອາບັດທຸກກົດ

ເມື່ອພິກຂຸນີໂດຍສານ ພິກຂຸໂດຍສານ ຕ້ອງອາບັດປາຈິດຕີ

ເມື່ອພິກຂຸໂດຍສານ ພິກຂຸນີໂດຍສານ ຕ້ອງອາບັດປາຈິດຕີ

ພິກຂຸແລະພິກຂຸນີທັງສອງໂດຍສານ ຕ້ອງອາບັດປາຈິດຕີ

ຄຳວ່າ ໄປທວນນ້ຳ ຄື ແລ່ນທວນກະແສນ້ຳ

ຄຳວ່າ ໄປຕາມນ້ຳ ຄື ແລ່ນຕາມກະແສນ້ຳ

ຄຳວ່າ ເວັ້ນໄວ້ແຕ່ຂ້າມຟາກ ຄື ຍົກເວັ້ນແຕ່ຂ້າມຈາກຝັ່ງນີ້ໄປຫາອີກຝັ່ງໜຶ່ງຂອງແມ່ນ້ຳ

ໝູ່ບ້ານໜຶ່ງກຳນົດສິ້ນໄລຍະໄກ່ບິນຕົກ ຕ້ອງອາບັດປາຈິດຕີທຸກ ໆ ບໍລິເວນໝູ່ບ້ານ ໃນປ່າທີ່ບໍ່ມີໝູ່ບ້ານ ຕ້ອງອາບັດປາຈິດຕີທຸກ ໆ ເຄິ່ງໂຍດ

## ບົດພາຊະນີ

### ຕິກະປາຈິດຕີ

[໑໙໐] ຊັກຊວນກັນແລ້ວ ພິກຂຸສຳຄັນວ່າຊັກຊວນກັນແລ້ວ ໂດຍສານເຮືອລຳດຽວກັນໄປທວນນ້ຳກໍຕາມ ໄປຕາມນ້ຳກໍຕາມ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ຂ້າມຟາກ

ຊັກຊວນກັນແລ້ວ ພິກຂຸບໍ່ແນ່ໃຈ ໂດຍສານເຮືອລຳດຽວກັນ ໄປທວນນ້ຳກໍຕາມ ໄປຕາມນ້ຳກໍຕາມ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ຂ້າມຟາກ

ຊັກຊວນກັນແລ້ວ ພິກຂຸສຳຄັນວ່າບໍ່ໄດ້ຊັກຊວນ ໂດຍສານເຮືອລຳດຽວກັນ ໄປທວນນ້ຳກໍຕາມ ໄປຕາມນ້ຳກໍຕາມ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ຂ້າມຟາກ

### ຕິກະທຸກກົດ

ພິກຂຸຊັກຊວນ ພິກຂຸນີບໍ່ໄດ້ຊັກຊວນ ຕ້ອງອາບັດທຸກກົດ

ບໍ່ໄດ້ຊັກຊວນ ພິກຂຸສຳຄັນວ່າຊັກຊວນກັນແລ້ວ ຕ້ອງອາບັດທຸກກົດ

ບໍ່ໄດ້ຊັກຊວນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ໄດ້ຊັກຊວນ ພິກຂຸສຳຄັນວ່າບໍ່ໄດ້ຊັກຊວນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໙໑] ໑. ພິກຂຸແລະພິກຂຸນີໂດຍສານເຮືອຂ້າມຟາກ

໒. ພິກຂຸແລະພິກຂຸນີບໍ່ໄດ້ຊັກຊວນກັນໂດຍສານເຮືອ

໓. ພິກຂຸບໍ່ໄດ້ຊັກຊວນ ແຕ່ພິກຂຸນີຊັກຊວນ

໔. ພິກຂຸແລະພິກຂຸນີໂດຍສານເຮືອໂດຍບໍ່ໄດ້ນັດໝາຍກັນ

໕. ພິກຂຸແລະພິກຂຸນີໄປໃນເວລາມີເຫດຂັດຂ້ອງ

໖. ພິກຂຸວິກົນຈະລິດ

໗. ພິກຂຸຕົ້ນບັນຍັດ

**ນາວາພິຣູຫະນະສິກຂາບົດທີ ໗ ຈົບ**

# ၆. ໂອວາທະວັກ

## ໙. ປະຣິປາຈິຕະສິກຂາບົດ

### ວ່າດ້ວຍການສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ

### ເລື່ອງພິກຂຸນີຖຸນລະນັນທາ

[໑໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພິກຂຸນີຊື່ຖຸນລະນັນທາເປັນຜູ້ໃກ້ຊິດຕະກູນຂອງຕະກູນໜຶ່ງຮັບພັດຕາຫານປະຈຳ ຄະຫະບໍດີນັ້ນນິມົນພິກຂຸຜູ້ເປັນເຖຣະຫຼາຍອົງໄວ້

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸນີຊື່ຖຸນລະນັນທາຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປເຖິງຕະກູນນັ້ນ ເມື່ອເຖິງແລ້ວໄດ້ກ່າວກັບຄະຫະບໍດີນັ້ນດັ່ງນີ້ວ່າ "ຄະຫະບໍດີ ເປັນຫຍັງທ່ານຈຶ່ງກຽມຂອງຫຍ້ຳຂອງສັນໄວ້ຫຼວງຫຼາຍແທ້ນໍ?"

ຄະຫະບໍດີຕອບວ່າ "ແມ່ເຈົ້າ ຂ້ານ້ອຍນິມົນພຣະເຖຣະທັງຫຼາຍໄວ້ ຂ້ານ້ອຍ"

ພິກຂຸນີຊື່ຖຸນລະນັນທາຖາມວ່າ "ຄະຫະບໍດີ ພຣະເຖຣະເຫຼົ່ານັ້ນ ມີໃຜແດ່"

ຄະຫະບໍດີຕອບວ່າ "ມີພຣະສາຣີບຸດ ພຣະມະຫາໂມກຄັນລານະ ພຣະມະຫາກັດຈາຍະນະ ພຣະມະຫາໂກດຖິຕະ ພຣະມະຫາກັບປິນະ ພຣະມະຫາຈຸນທະ ພຣະອະນຸຣຸດທະ ພຣະເຣວະຕະ ພຣະອຸບາລີ ພຣະອານົນ ພຣະຣາຫຸນ"

ພິກຂຸນີຖຸນລະນັນທາຖາມວ່າ "ຄະຫະບໍດີ ເມື່ອມີພຣະເຖຣະຜູ້ໃຫຍ່ ເປັນຫຍັງ ທ່ານຈຶ່ງນິມົນແຕ່ພຣະຜູ້ນ້ອຍນໍ"

ແລ້ວພຣະເຖຣະຜູ້ໃຫຍ່ຂອງທ່ານ ມີໃຜແດ່?

ພຣະເທວະທັດ ພຣະໂກກາລິກະ ພຣະກະຕະໂມຣະກະຕິດສະກະ ພຣະຂັນທະເທວີບຸດ ພຣະສະມຸດທະທັດ

ໃນຂະນະທີ່ພິກຂຸນີຊື່ຖຸນລະນັນທາກ່າວຄ້າງຢູ່ນີ້ ພໍດີກັບທີ່ພຣະເຖຣະເຫຼົ່ານັ້ນເຂົ້າມານາງກັບເວົ້າວ່າ "ຖືກແລ້ວ ຄະຫະບໍດີ ທ່ານນິມົນພຣະເຖຣະຜູ້ໃຫຍ່ທັ້ງຫຼາຍ"

ຄະຫະບໍດີກ່າວວ່າ "ເມື່ອຫວ່າງໜຶ່ງນີ້ເອງ ທ່ານກ່າວວ່າພຣະທັງຫຼາຍເປັນພຣະຜູ້ນ້ອຍ ແຕ່ທັນທີກັບກ່າວວ່າເປັນພຣະເຖຣະຜູ້ໃຫຍ່" ຈຶ່ງໄລ່ນາງອອກຈາກເຮືອນແລະງົດພັດຕາຫານທີ່ຖວາຍປະຈຳ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດຮູ້ຢູ່ ຈຶ່ງສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມໄວ້ແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພຣະເທວະທັດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະເທວະທັດວ່າ "ເທວະທັດ ໄດ້ຂ່າວວ່າ ທ່ານຮູ້ຢູ່ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ແມ່ນບໍ?" ພຣະເທວະທັດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຮູ້ຢູ່ຈຶ່ງສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມໄວ້ນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດຮູ້ຢູ່ ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມໄວ້ ຕ້ອງອາບັດປາຈິດຕິ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ເລື້ອງພິກຂຸອົງໜຶ່ງ

[໑໙໓] ສະໄໝນັ້ນ ພິກຂຸອົງໜຶ່ງ ບວດຈາກນະຄອນຣາຊະຄຶ ໄດ້ເດີນທາງໄປຕະກູນຍາດ ພວກຊາວບ້ານຖວາຍພັດຕາຫານດ້ວຍຄວາມດີໃຈວ່າ ດົນ ໆ ຄູບາຈຶ່ງມາ ພິກຂຸນີຜູ້ໃກ້ຊິດຕະກູນຂອງຕະກູນນັ້ນໄດ້ກ່າວກັບພວກຊາວບ້ານດັ່ງນີ້ວ່າ "ທ່ານທັງຫຼາຍຈົ່ງຖວາຍພັດຕາຫານແກ່ຄູບາ"

ບັດນັ້ນ ພິກຂຸນັ້ນມີຄວາມຢຳເກງວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມພິກຂຸຜູ້ຮູ້ຢູ່ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ຈຶ່ງບໍ່ຍອມຮັບປະເຄນ ບໍ່ສາມາດໄປທ່ຽວບິນທະບາດ ໄດ້ອົດອາຫານ ເມື່ອໄປອາຮາມຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ສັນບິນທະບາດທີ່ຄະລືຫັດຜາຣົບໄວ້ກ່ອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບ

ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອຄະລິຫັດຜາຣົບໄວ້ກ່ອນ ເຮົາອະນຸຍາດໃຫ້ພິກຂຸ ຜູ້ຮູ້ຢູ່ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໘໔] ອັນໜຶ່ງ ພິກຂຸໃດຮູ້ຢູ່ ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມໄວ້ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລິຫັດຜາຣົບໄວ້ກ່ອນ

### ເລື້ອງພິກຂຸອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໑໘໕] ຄຳວ່າ ອັນໜຶ່ງ...ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ...ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ...ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ...ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ຮູ້ເອງ ຜູ້ອື່ນບອກໃຫ້ພິກຂຸນັ້ນຮູ້ ຫຼື ພິກຂຸນີບອກ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ແນະນຳໃຫ້ຈັດກຽມ ຄື ເຂົາບໍ່ປະສົງຈະຖວາຍ ຫຼື ບໍ່ປະສົງຈະເຮັດແຕ່ທຳອິດ ພິກຂຸນີກ່າວວ່າ "ຄູບາເປັນນັກສູດ ຄູບາເປັນພະຫູສູດ ຄູບາເປັນຜູ້ຊຳນານພຣະສູດ ຄູບາເປັນຜູ້ຊົງວິໄນ ຄູບາເປັນທຳມະກະຖຶກ ທ່ານທັງຫຼາຍຈົ່ງຖວາຍແກ່ຄູບາ ຈົ່ງເຮັດຖວາຍແກ່ຄູບາ" ຢ່າງນີ້ ຊື່ວ່າແນະນຳໃຫ້ຈັດກຽມ

ທີ່ຊື່ວ່າ ບິນທະບາດ ໄດ້ແກ່ ໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງ

ຄຳວ່າ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລິຫັດຜາຣົບໄວ້ກ່ອນ ຄື ຍົກເວັ້ນທີ່ຄະລິຫັດລິເລີ່ມໄວ້

ທີ່ຊື່ວ່າ ຄະລິຫັດຜາຣົບໄວ້ ຄື ເຂົາເປັນຍາດ ເປັນຜູ້ປະວາຣະນາພິກຂຸໄວ້ ຫຼື ຂອງເຂົາຈັດແຈງໄວ້ຕາມປົກກະຕິ

[໑໘໖] ພິກຂຸຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ ພິກຂຸສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລິຫັດຜາຣົບໄວ້ກ່ອນ

## ບົດພາຊະນີ

ບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ພິກຂຸສຳຄັນວ່າພິກຂຸນີແນະນຳໃຫ້ຈັດກຽມ ສັນຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລິຫັດຜາຣົບໄວ້ກ່ອນ

ບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ພິກຂຸບໍ່ແນ່ໃຈ ສັນ ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລືຫັດຜາຣົບໄວ້ກ່ອນ

ບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ພິກຂຸສຳຄັນວ່າບໍ່ໄດ້ແນະນຳໃຫ້ຈັດກຽມສັນ ບໍ່ຕ້ອງອາບັດ

ພິກຂຸສັນບິນທະບາດທີ່ພິກຂຸນີຜູ້ອຸປະສົມບົດໃນສົງຝ່າຍດຽວແນະນຳໃຫ້ຈັດກຽມ ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ພັດຕາຫານທີ່ຄະລືຫັດຜາຣົບໄວ້ກ່ອນ

ບິນທະບາດທີ່ພິກຂຸນີບໍ່ໄດ້ແນະນຳໃຫ້ຈັດກຽມ ພິກຂຸສຳຄັນວ່າພິກຂຸນີແນະນຳໃຫ້ຈັດກຽມສັນ ຕ້ອງອາບັດທຸກກົດ

ບິນທະບາດທີ່ພິກຂຸນີບໍ່ໄດ້ແນະນຳໃຫ້ຈັດກຽມ ພິກຂຸບໍ່ແນ່ໃຈ ສັນ ຕ້ອງອາບັດທຸກກົດ

ບິນທະບາດທີ່ພິກຂຸນີບໍ່ໄດ້ແນະນຳໃຫ້ຈັດກຽມ ພິກຂຸສຳຄັນວ່າບໍ່ໄດ້ແນະນຳໃຫ້ຈັດກຽມ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໙໗] ໑. ພິກຂຸສັນບິນທະບາດທີ່ຄະລືຫັດຜາຣົບໄວ້ກ່ອນ
໒. ພິກຂຸສັນບິນທະບາດທີ່ສິກຂະມານາແນະນຳໃຫ້ຈັດກຽມ
໓. ພິກຂຸສັນບິນທະບາດທີ່ສາມະເນຣີແນະນຳໃຫ້ຈັດກຽມ
໔. ພິກຂຸສັນອາຫານທຸກຊະນິດ ຍົກເວັ້ນໂພຊະນະ ໕
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ປະຣິປາຈິຕະສິກຂາບົດທີ ໙ ຈົບ**

# ໓. ໂອວາທະວັກ

## ໑໐. ຣະໂຫນິສັດຊະສິກຂາບົດ

## ວ່າດ້ວຍການນັ່ງໃນທີ່ລັບ

## ເລື້ອງພຣະອຸທາຍີ

[໑໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອະດີດພັນລະຍາຂອງທ່ານພຣະອຸທາຍີ ບວດໃນສຳນັກພິກຂຸນີທັງຫຼາຍ ພິກຂຸນີນັ້ນມາທີ່ສຳນັກທ່ານພຣະອຸທາຍີເປັນປະຈຳ

ທ່ານພຣະອຸທາຍີກໍໄປສຳນັກຂອງພິກຂຸນີນັ້ນເປັນປະຈຳ ສະໄໝນັ້ນ ທ່ານພຣະອຸທາຍີນັ່ງໃນທີ່ລັບ ກັບພິກຂຸນີນັ້ນສອງຕໍ່ສອງ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີ ຈຶ່ງນັ່ງໃນທີ່ລັບກັບພິກຂຸນີສອງຕໍ່ສອງນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸທາຍີ ໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານນັ່ງໃນທີ່ລັບກັບພິກຂຸນີສອງຕໍ່ສອງແມ່ນບໍ?" ທ່ານພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງນັ່ງຢູ່ໃນທີ່ລັບກັບພິກຂຸນີສອງຕໍ່ສອງນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໙໙] **ກໍ ພິກຂຸໃດ ນັ່ງໃນທີ່ລັບກັບພິກຂຸນີສອງຕໍ່ສອງ ຕ້ອງອາບັດປາຈິດຕີ**

**ເລື້ອງພຣະອຸທາຍີ ຈົບ**

## ສິກຂາບົດວິພັງ

[໒໐໐] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ໄດ້ແກ່ ພິກຂຸກັບພິກຂຸນີ

ທີ່ຊື່ວ່າ ທີ່ລັບ ໄດ້ແກ່ ທີ່ລັບຕາ ທີ່ລັບຫູ

ທີ່ຊື່ວ່າ ທີ່ລັບຕາ ໝາຍເຖິງ ທີ່ເຊິ່ງເມື່ອບຸກຄົນກະພິບຕາ ຍັກຄິ້ວ ຫຼື ຍືດຄໍຂຶ້ນ ຜູ້ໃດກໍບໍ່ສາມາດແນມເຫັນໄດ້

ທີ່ຊື່ວ່າ ທີ່ລັບຫູ ໝາຍເຖິງ ທີ່ເຊິ່ງບໍ່ມີໃຜສາມາດຈະໄດ້ຍິນຄຳເວົ້າທີ່ເວົ້າກັນຕາມປົກກະຕິ

ຄຳວ່າ ນັ່ງ ໝາຍຄວາມວ່າ ເມື່ອພິກຂຸນີນັ່ງ ພິກຂຸນັ່ງໃກ້ ຫຼື ນອນໃກ້ກັນ ຕ້ອງອາບັດປາຈິດຕີ

[໔໐໑] ເມື່ອພິກຂຸນັ່ງ ພິກຂຸນີນັ່ງໃກ້ ຫຼື ນອນໃກ້ ພິກຂຸຕ້ອງອາບັດປາຈິດຕີ
ພິກຂຸ ແລະ ພິກຂຸນີທັງສອງນັ່ງໃກ້ ຫຼື ນອນໃກ້ກັນ ພິກຂຸຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

ທີ່ລັບ ພິກຂຸສຳຄັນວ່າເປັນທີ່ລັບ ນັ່ງສອງຕໍ່ສອງ ຕ້ອງອາບັດປາຈິດຕີ
ທີ່ລັບ ພິກຂຸບໍ່ແນ່ໃຈ ນັ່ງສອງຕໍ່ສອງ ຕ້ອງອາບັດປາຈິດຕີ
ທີ່ລັບ ພິກຂຸສຳຄັນວ່າບໍ່ແມ່ນທີ່ລັບ ນັ່ງສອງຕໍ່ສອງ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ບໍ່ແມ່ນທີ່ລັບ ພິກຂຸສຳຄັນວ່າເປັນທີ່ລັບ ນັ່ງສອງຕໍ່ສອງ ຕ້ອງອາບັດທຸກກົດ
ບໍ່ແມ່ນທີ່ລັບ ພິກຂຸບໍ່ແນ່ໃຈ ນັ່ງສອງຕໍ່ສອງ ຕ້ອງອາບັດທຸກກົດ
ບໍ່ແມ່ນທີ່ລັບ ພິກຂຸສຳຄັນວ່າບໍ່ແມ່ນທີ່ລັບ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໔] ໑. ພິກຂຸມີບຸຣຸດຜູ້ໃຫຍ່ຢູ່ນຳເປັນເພື່ອນ
໒. ພິກຂຸຢືນ ບໍ່ໄດ້ນັ່ງ
໓. ພິກຂຸບໍ່ໄດ້ມຸ່ງວ່າເປັນທີ່ລັບ
໔. ພິກຂຸນັ່ງຄິດເລື້ອງອື່ນ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ຣະໂຫນິສັດຊະສິກຂາບົດທີ ໑໐ ຈົບ**

**ໂອວາທະວັກທີ ໓ ຈົບ**

# ລວມສິກຂາບົດທີ່ມີໃນໂອວາທະວັກ

ໂອວາທະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ໂອວາທະສິກຂາບົດ | ວ່າດ້ວຍການສັ່ງສອນພິກຂຸນີ |
| ໒. ອັດຖັງຄະຕະສິກຂາບົດ ອັດສະດົງແລ້ວ | ວ່າດ້ວຍການສັ່ງສອນພິກຂຸນີໃນເວລາທີ່ດວງອາທິດ |
| ໓. ພິກຂຸນູປັດສະຍະສິກຂາບົດ | ວ່າດ້ວຍການໄປສັ່ງສອນພິກຂຸນີເຖິງທີ່ສຳນັກ |
| ໔. ອາມິສະສິກຂາບົດ | ວ່າດ້ວຍການສັ່ງສອນພິກຂຸນີຍ້ອນເຫັນແກ່ອາມິດ |
| ໕. ຈີວະຣະທານະສິກຂາບົດ | ວ່າດ້ວຍການຖວາຍຈີວອນ |
| ໖. ຈີວະຣະສິບພະນະສິກຂາບົດ | ວ່າດ້ວຍການຫຍິບຈີວອນໃຫ້ພິກຂຸນີ |
| ໗. ສັງວິທານະສິກຂາບົດ | ວ່າດ້ວຍການຊັກຊວນເດີນທາງຮ່ວມກັນ |
| ໘. ນາວາພິຣູຫະນະສິກຂາບົດ | ວ່າດ້ວຍການໂດຍສານເຮືອລຳດຽວກັນ |
| ໙. ປະຣິປາຈິຕະສິກຂາບົດ | ວ່າດ້ວຍການສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດ |
| ໑໐. ຣະໂຫນິສັດຊະສິກຂາບົດ | ວ່າດ້ວຍການນັ່ງໃນທີ່ລັບ |

# ໔. ໂພຊະນະວັກ

## ໝວດວ່າດ້ວຍໂພຊະນະ

## ໑. ອາວະສະຖະປິນດະສິກຂາບົດ

### ວ່າດ້ວຍການສັນພັດຕາຫານໃນທີ່ພັກແຮມ

### ເລື້ອງພຣະສັບພັກຄີ

[໔໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ໃນທີ່ບໍ່ໄກນະຄອນສາວັດຖີ ມີສະມາຄົມໜຶ່ງຈັດຕັ້ງພັດຕາຫານໄວ້ເປັນໂຮງທານໃນທີ່ພັກແຮມ ໃນເວລາເຊົ້າ ພວກພິກຂຸສັບພັກຄີຄອງອັນຕະຣະວາສົກ ແລ້ວຖືບາດແລະຈີວອນເຂົ້າໄປບິນທະບາດໃນນະຄອນສາວັດຖີ ເມື່ອບໍ່ໄດ້ພັດຕາຫານຈຶ່ງໄດ້ໄປສູ່ທີ່ພັກແຮມ ພວກຊາວບ້ານຖວາຍພັດຕາຫານດ້ວຍຄວາມດີໃຈວ່າ ດົນໆ ຈຶ່ງມີຄູບາຜ່ານມາ

ຄັ້ງນັ້ນ ແມ່ນໃນວັນທີ ໒ ພວກພິກຂຸສັບພັກຄີ ຯລຯ ແມ່ນໃນວັນທີ ໓ ພວກພິກຂຸສັບພັກຄີຄອງອັນຕະຣະວາສົກ ແລ້ວຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນນະຄອນສາວັດຖີ ເມື່ອບໍ່ໄດ້ພັດຕາຫານຈຶ່ງໄດ້ໄປສູ່ທີ່ພັກແຮມອີກ ແລ້ວສັນພັດຕາຫານ ຄັ້ງນັ້ນ ພວກພິກຂຸສັບພັກຄີໄດ້ປຶກສາກັນດັ່ງນີ້ວ່າ "ພວກເຮົາຈະກັບໄປອາຮາມເຮັດຫຍັງຍ້ອນມື້ອື່ນກໍຕ້ອງມາບ່ອນນີ້ອີກ" ຈຶ່ງຢູ່ສັນພັດຕາຫານໃນທີ່ພັກແຮມກາງທາງນັ້ນເປັນປະຈຳ ພວກເດຍຣະຖີຈຶ່ງພາກັນຈາກໄປ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງຢູ່ສັນພັດຕາຫານໃນທີ່ພັກແຮມເປັນປະຈຳແນວນັ້ນນໍ? ພັດຕາຫານໃນທີ່ພັກແຮມເຂົາບໍ່ໄດ້ຈັດໄວ້ເພື່ອທ່ານເຫຼົ່ານີ້ເທົ່ານັ້ນ ແຕ່ພັດຕາຫານໃນທີ່ພັກແຮມເຂົາຈັດໄວ້ເພື່ອສາທາລະນະຊົນທົ່ວໄປ"

ພວກພິກຂຸໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຢູ່ສັນພັດຕາຫານໃນທີ່ພັກແຮມເປັນປະຈຳນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ

ສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຢູ່ສັນພັດຕາຫານໃນທີ່ພັກແຮມເປັນປະຈຳ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຢູ່ສັນພັດຕາຫານໃນທີ່ພັກແຮມເປັນປະຈຳນໍ ໂມຄະບຸຣຸດທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ພິກຂຸສັນພັດຕາຫານໃນໂຮງທານທີ່ເປັນທີ່ພັກແຮມ ໄດ້ມື້ດຽວ ຖ້າສັນເກີນກວ່ານັ້ນ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພຣະສາຣີບຸດ

[໘໐໘] ສະໄໝນັ້ນ ທ່ານພຣະສາຣີບຸດເດີນທາງໄປສູ່ນະຄອນສາວັດຖີ ແຄວ້ນໂກສົນ ໄດ້ເຂົ້າໄປສູ່ໂຮງທານທີ່ເປັນທີ່ພັກແຮມແຫ່ງໜຶ່ງ ພວກຊາວບ້ານຖວາຍພັດຕາຫານດ້ວຍຄວາມດີໃຈວ່າ ດົນ ໆ ຈຶ່ງມີຄູບາຜ່ານມາ

ເມື່ອພຣະສາຣີບຸດສັນພັດຕາຫານແລ້ວ ເກີດເປັນໄຂ້ຢ່າງໜັກຈົນບໍ່ສາມາດຈະອອກໄປຈາກທີ່ພັກແຮມນັ້ນໄດ້ ເມື່ອໃນວັນທີ ໘ ພວກຊາວບ້ານໄດ້ຂາບຮຽນທ່ານພຣະສາຣີບຸດດັ່ງນີ້ວ່າ "ນິມົນສັນເທີ້ນຄູບາ"

ຄັ້ງນັ້ນ ທ່ານພຣະສາຣີບຸດມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມການຢູ່ສັນພັດຕາຫານໃນທີ່ພັກແຮມເປັນປະຈຳ" ຈຶ່ງບໍ່ຮັບນິມົນ ຍອມອົດອາຫານ ເມື່ອທ່ານພຣະສາຣີບຸດເດີນທາງເຖິງນະຄອນສາວັດຖີ ໄດ້ເລົ່າເລື່ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດພິກຂຸເຈັບໄຂ້ໃຫ້ສັນອາຫານໃນທີ່ພັກແຮມໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ພັກເຊົາຢູ່ໃນໂຮງທານໃນທີ່ພັກແຮມເປັນປະຈຳໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໔໐໕] ພິກຂຸບໍ່ເປັນໄຂ້ ເພິ່ງຢູ່ສັນພັດຕາຫານໃນໂຮງທານທີ່ເປັນທີ່ພັກແຮມໄດ້ມື້ດຽວ ຖ້າສັນເກີນກວ່ານັ້ນ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສາຣີບຸດ ຈົບ

## ສິກຂາບົດວິພັງ

[໔໐໖] ທີ່ຊື່ວ່າ ພິກຂຸບໍ່ເປັນໄຂ້ ຄື ພິກຂຸທີ່ສາມາດຈະຫຼີກອອກໄປຈາກທີ່ພັກແຮມນັ້ນໄດ້

ທີ່ຊື່ວ່າ ເປັນໄຂ້ ຄື ພິກຂຸທີ່ບໍ່ສາມາດຈະຫຼີກອອກໄປຈາກທີ່ພັກແຮມນັ້ນໄດ້

ທີ່ຊື່ວ່າ ພັດຕາຫານໃນໂຮງທານທີ່ພັກແຮມ ໄດ້ແກ່ ໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງທີ່ເຂົາຈັດໄວ້ທີ່ສາລາ ທີ່ມົນດົບ ທີ່ເຫງົ້າໄມ້ ຫຼື ທີ່ກາງແຈ້ງ ຢ່າງພຽງພໍ ບໍ່ໄດ້ເຈາະຈົງຜູ້ໃດ

ພິກຂຸບໍ່ເປັນໄຂ້ເພິ່ງສັນໄດ້ມື້ດຽວ ຫາກຮັບປະເຄນເກີນກວ່ານັ້ນດ້ວຍຄິດວ່າຈະສັນ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໔໐໗] ບໍ່ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸບໍ່ແນ່ໃຈສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸບໍ່ແນ່ໃຈ ສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ສັນພັດຕາຫານໃນທີ່ພັກແຮມເກີນກວ່ານັ້ນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໘] ໑. ພິກຂຸເປັນໄຂ້
໒. ພິກຂຸບໍ່ເປັນໄຂ້ສັນມື້ດຽວ
໓. ພິກຂຸເດີນທາງໄປຫຼືມາແລ້ວແວ່ສັນ
໔. ພິກຂຸທີ່ເຈົ້າຂອງທານນິມົນໃຫ້ສັນ
໕. ພິກຂຸສັນພັດຕາຫານທີ່ເຂົາຈັດໄວ້ເພາະ
໖. ພິກຂຸສັນພັດຕາຫານທີ່ເຂົາບໍ່ໄດ້ຈັດໄວ້ຢ່າງພຽງພໍ
໗. ພິກຂຸສັນພັດຕາຫານທຸກຂະນິດຍົກເວັ້ນໂພຊະນະ ໕
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ອາວະສະຖະປິນດະສິກຂາບົດທີ ໑ ຈົບ**

# ໔. ໂພຊະນະວັກ

## ໒. ຄະນະໂພຊະນະສິກຂາບົດ

### ວ່າດ້ວຍການສັນຄະນະໂພຊະນະ

### ເລື້ອງພຣະເທວະທັດ

[໔໐໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພຣະເທວະທັດພ້ອມກັບບໍລິສັດເສື່ອມລາບ ສັກກາຣະ ຈຶ່ງພາກັນອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນແນວນັ້ນນໍ? ພັດຕາຫານ ທີ່ດີ ໆ ໃຜຈະບໍ່ພໍໃຈ ພັດຕາຫານແຊບ ໆ ໃຜຈະບໍ່ມັກນໍ"

ພວກພິກຂຸໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະເທວະທັດພ້ອມກັບບໍລິສັດ ຈຶ່ງທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນນໍ" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພຣະເທວະທັດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ

ສອບຖາມພຣະເທວະທັດວ່າ "ເທວະທັດ ໄດ້ຂ່າວວ່າ ທ່ານພ້ອມກັບບໍລິສັດທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນ ແມ່ນບໍ?" ພຣະເທວະທັດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງ ທ່ານພ້ອມກັບບໍລິສັດ ຈຶ່ງທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນນໍ ໂມຄະບຸຣຸດ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ພິກຂຸຕ້ອງອາບັດປາຈິດຕີ ຍ້ອນສັນຄະນະໂພຊະນະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະເທວະທັດ ຈົບ**

## ເລື້ອງພິກຂຸເປັນໄຂ້

[໔໑໐] ສະໄໝນັ້ນ ພວກຊາວບ້ານນິມົນພວກພິກຂຸເປັນໄຂ້ສັນພັດຕາຫານ ພິກຂຸເຫຼົ່ານັ້ນມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ" ຈຶ່ງບໍ່ຮັບນິມົນ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເປັນໄຂ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຈັບໄຂ້ສັນຄະນະໂພຊະນະໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸ ຕ້ອງອາບັດປາຈິດຕີ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄືສະໄໝທີ່ເປັນໄຂ້ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພິກຂຸເປັນໄຂ້ ຈົບ**

## ຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ຖວາຍຈີວອນ

[໔໑໑] ສະໄໝນັ້ນ ພວກຊາວບ້ານກະກຽມພັດຕາຫານພ້ອມກັບຈີວອນໃນສະໄໝທີ່ຈະຖວາຍຈີວອນ ແລ້ວນິມົນພິກຂຸທັງຫຼາຍດ້ວຍຕັ້ງໃຈວ່າ "ພວກເຮົານິມົນພິກຂຸທັງຫຼາຍສັນແລ້ວຈະໃຫ້ຄອງຈີວອນ"

ພິກຂຸທັງຫຼາຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ" ບໍ່ຮັບນິມົນ ຈຶ່ງໄດ້ຈີວອນພຽງເລັກໜ້ອຍ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ຖວາຍຈີວອນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸຕ້ອງອາບັດປາຈິດຕິ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄືສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເຮັດຈີວອນ

[໔໑໘] ສະໄໝນັ້ນ ພວກຊາວບ້ານນິມົນພວກພິກຂຸຜູ້ເຮັດຈີວອນສັນພັດຕາຫານ ພິກຂຸທັງ ຫຼາຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ" ຈຶ່ງບໍ່ຮັບນິມົນ ພິກຂຸທັງຫຼາຍ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເຮັດຈີວອນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸຕ້ອງອາບັດປາຈິດຕິ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄືສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເດີນທາງໄກ

[໔໑໓] ສະໄໝນັ້ນ ພິກຂຸທັງຫຼາຍເດີນທາງໄກໄປກັບພວກຊາວບ້ານ ຄັ້ງນັ້ນ ພິກຂຸເຫຼົ່ານັ້ນໄດ້ກ່າວກັບພວກຊາວບ້ານເຫຼົ່ານັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານໂຜດຖ້າຈັກໜ່ອຍກ່ອນ ພວກອາດຕະມາຈະໄປບິນທະບາດ"

ພວກຊາວບ້ານໄດ້ກ່າວກັບພິກຂຸເຫຼົ່ານັ້ນຢ່າງນີ້ວ່າ "ຄູບາທັງຫຼາຍ ນິມົນພວກທ່ານສັນບ່ອນນີ້ແຫຼະ"

ພິກຂຸທັງຫຼາຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ" ຈຶ່ງບໍ່ຮັບແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເດີນທາງໄກ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸຕ້ອງອາບັດປາຈິດຕິ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄືສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ສະໄໝທີ່ເດີນທາງໄກ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ໂດຍສານເຮືອ

[໔໑໔] ສະໄໝນັ້ນ ພິກຂຸທັງຫຼາຍໂດຍສານເຮືອໄປກັບພວກຊາວບ້ານ ຄັ້ງນັ້ນ ພິກຂຸເຫຼົ່ານັ້ນໄດ້ກ່າວກັບພວກຊາວບ້ານເຫຼົ່ານັ້ນຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານໂຜດນຳເຮືອເຂົ້າທຽບທີ່ຝັ່ງພວກອາດຕະມາຈະໄປບິນທະບາດ"

ພວກຊາວບ້ານເຫຼົ່ານັ້ນຈຶ່ງກ່າວຢ່າງນີ້ວ່າ "ຄູບາທັງຫຼາຍນິມົນພວກທ່ານສັນບ່ອນນີ້ແຫຼະ"

ພິກຂຸທັງຫຼາຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມການສັນຄະນະໂພຊະນະ" ຈຶ່ງບໍ່ຮັບ ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ໂດຍສານເຮືອ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸຕ້ອງອາບັດປາຈິດຕິ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ສະໄໝທີ່ເດີນທາງໄກ ສະໄໝທີ່ໂດຍສານເຮືອ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນມະຫາສະໄໝ

[໔໑໕] ສະໄໝນັ້ນ ພິກຂຸທັງຫຼາຍໃນຖິ່ນຕ່າງ ໆ ອອກພັນສາແລ້ວ ໄດ້ເດີນທາງມາເຝົ້າພຣະຜູ້ມີພຣະພາກເຈົ້າທີ່ນະຄອນຣາຊະຄຶ ພວກຊາວບ້ານເຫັນພິກຂຸທັງຫຼາຍຜູ້ມາຈາກຕ່າງຖິ່ນຈຶ່ງນິມົນສັນພັດຕາຫານ

ພິກຂຸທັງຫຼາຍມີຄວາມຢໍາເກງຢູ່ວ່າ “ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ” ຈຶ່ງບໍ່ຮັບນິມົນ ແລ້ວໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທໍາມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນມະຫາສະໄໝ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸ ຕ້ອງອາບັດປາຈິດຕິ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນຄື ສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ສະໄໝທີ່ເດີນທາງໄກ ສະໄໝທີ່ໂດຍສານເຮືອ ແລະ ມະຫາສະໄໝ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເປັນພັດຕາຫານຂອງສະມະນະ

[໔໑໖] ສະໄໝນັ້ນ ພຣະຍາດຮ່ວມສາຍໂລຫິດຂອງພຣະເຈົ້າພິມພິສານຈອມທັບມະຄົດຮັດຊົງບວດໃນສໍານັກຂອງອາຊີວົກທັງຫຼາຍ ຄັ້ງນັ້ນ ອາຊີວົກນັ້ນໄດ້ເຂົ້າໄປເຝົ້າພຣະເຈົ້າພິມພິສານເຖິງພຣະຣາດຊະສໍານັກ ເມື່ອເຖິງແລ້ວໄດ້ຖວາຍພຣະພອນພຣະເຈົ້າພິມພິສານຈອມທັບມະຄົດຮັດດັ່ງນີ້ວ່າ “ມະຫາບໍພິດ ອາດຕະມາປາຖະໜາຈະຈັດພັດຕາຫານຖວາຍນັກບວດຜູ້ເປັນເຈົ້າລັດທິທັງໝົດ

ພຣະເຈົ້າພິມພິສານຈອມທັບມະຄິດຕັດວ່າ “ຖ້າທ່ານນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກໃຫ້ມາສັນກ່ອນ ທ່ານຈຶ່ງຈະຈັດຖວາຍໄດ້”

ຄັ້ງນັ້ນ ອາຊີວົກນັ້ນສົ່ງທູດໄປຫາພິກຂຸທັງຫຼາຍໃຫ້ອາຣາດທະນາວ່າ “ຂໍນິມົນພິກຂຸທັງຫຼາຍຮັບພັດຕາຫານຂອງຂ້າພະເຈົ້າເພື່ອສັນໃນມື້ອື່ນນີ້

ພິກຂຸທັງຫຼາຍມີຄວາມຢຳເກງຢູ່ວ່າ “ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນຄະນະໂພຊະນະ” ຈຶ່ງບໍ່ຮັບນິມົນ

ຄັ້ງນັ້ນ ອາຊີວົກນັ້ນ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກພໍເປັນທີ່ບັນເທິງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວໄດ້ຢືນຢູ່ໃນທີ່ສົມຄວນ ອາຊີວົກຜູ້ຢືນຢູ່ ໃນທີ່ສົມຄວນນັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ “ທ່ານພຣະໂຄດົມກໍເປັນບັນພະຊິດ ຂ້າພະເຈົ້າກໍເປັນບັນພະຊິດ ບັນພະຊິດຄວນຈະຮັບພັດຕາຫານຂອງບັນ ພະຊິດນຳກັນ ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງໂຜດຮັບພັດຕາຫານຂອງຂ້າພະເຈົ້າເພື່ອສັນໃນມື້ອື່ນນີ້ເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ ເມື່ອອາຊີວົກຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງຖວາຍອະພິວາດແລ້ວຈາກໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນຄະນະໂພຊະນະໄດ້ໃນສະໄໝທີ່ເປັນພັດຕາຫານຂອງສະມະນະ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໔໑໗] ພິກຂຸ ຕ້ອງອາບັດປາຈິດຕີ ຍ້ອນສັນຄະນະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ສະໄໝທີ່ເດີນທາງໄກ ສະໄໝທີ່ໂດຍສານເຮືອ ມະຫາສະໄໝ ແລະ ສະໄໝທີ່ເປັນພັດຕາຫານຂອງສະມະນະ ນີ້ເປັນສະໄໝໃນຂໍ້ນັ້ນ

## ສິກຂາບົດວິພັງ

[໔໑໘] ທີ່ຊື່ວ່າ ສັນຄະນະໂພຊະນະ ຄື ພິກຂຸ ໔ ອົງທີ່ເຂົານິມົນດ້ວຍໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງແລ້ວໄປສັນ ນີ້ຊື່ວ່າ ສັນຄະນະໂພຊະນະ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ສະໄໝທີ່ເປັນໄຂ້ ຄື ທີ່ສຸດແມ່ນວ່າຕີນແຕກ ພິກຂຸຄິດວ່າ ເປັນສະໄໝທີ່ເປັນໄຂ້ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ຖວາຍຈີວອນ ຄື ເມື່ອຍັງບໍ່ໄດ້ການກະຖິນ ກຳນົດເອົາເດືອນສຸດທ້າຍແຫ່ງລະດູຝົນ ເມື່ອການກະຖິນແລ້ວມີກຳນົດເວລາ ໕ ເດືອນ ພິກຂຸຄິດວ່າ ເປັນສະໄໝທີ່ຖວາຍຈີວອນ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ເຮັດຈີວອນ ຄື ເມື່ອພິກຂຸກຳລັງເຮັດຈີວອນ ພິກຂຸຄິດວ່າ ເປັນສະໄໝທີ່ເຮັດ ຈີວອນ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ເດີນທາງໄກ ຄື ພິກຂຸຄິດວ່າ ເຮົາຈະເດີນທາງເຄິ່ງໂຍດ ເພິ່ງສັນໄດ້ ເມື່ອພິກຂຸນັ້ນໄປ ເພິ່ງສັນໄດ້ ກັບມາເຖິງແລ້ວ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ໂດຍສານເຮືອ ຄື ພິກຂຸຄິດວ່າ ເຮົາຈະໂດຍສານເຮືອ ເພິ່ງສັນໄດ້ ເມື່ອພິກຂຸນັ້ນໂດຍສານໄປ ເພິ່ງສັນໄດ້ ຂາກັບ ເພິ່ງສັນໄດ້

ທີ່ຊື່ວ່າ ມະຫາສະໄໝ ຄື ເວລາມີພິກຂຸ ໒-໓ ອົງທ່ຽວບິນທະບາດພໍລ້ຽງກັນໄດ້ ເມື່ອມີພິກຂຸອົງທີ ໔ ມາຢູ່ນຳ ບໍ່ພໍລ້ຽງກັນ ພິກຂຸຄິດວ່າ ເປັນມະຫາສະໄໝ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ເປັນພັດຕາຫານຂອງສະມະນະ ຄື ໃນເວລາມີປະຣິພາຊົກຈັດພັດຕາຫານ ຖວາຍ ພິກຂຸຄິດວ່າ ເປັນສະໄໝທີ່ເປັນພັດຕາຫານຂອງສະມະນະ ເພິ່ງສັນໄດ້

ພິກຂຸຮັບດ້ວຍຄິດວ່າ “ຈະສັນ” ນອກສະໄໝ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໔໑໗] ຄະນະໂພຊະນະ ພິກຂຸສຳຄັນວ່າຄະນະໂພຊະນະ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

ຄະນະໂພຊະນະ ພິກຂຸບໍ່ແນ່ໃຈ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

ຄະນະໂພຊະນະ ພິກຂຸສຳຄັນວ່າບໍ່ແມ່ນຄະນະໂພຊະນະ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ບໍ່ແມ່ນຄະນະໂພຊະນະ ພິກຂຸສຳຄັນວ່າຄະນະໂພຊະນະ ສັນນອກສະໄໝ ຕ້ອງອາບັດທຸກກົດ

ບໍ່ແມ່ນຄະນະໂພຊະນະ ພິກຂຸບໍ່ແນ່ໃຈ ສັນນອກສະໄໝ ຕ້ອງອາບັດທຸກກົດ

ບໍ່ແມ່ນຄະນະໂພຊະນະ ພິກຂຸສຳຄັນວ່າບໍ່ແມ່ນຄະນະໂພຊະນະ ສັນນອກສະໄໝບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໔໐] ໑. ພິກຂຸສັນໃນສະໄໝ
໒. ພິກຂຸ ໒-໓ ອົງສັນຮ່ວມກັນ
໓. ພິກຂຸຫຼາຍອົງທ່ຽວບິນທະບາດແລ້ວປະຊຸມສັນຮ່ວມກັນ
໔. ພິກຂຸສັນພັດຕາຫານທີ່ເຂົາຖວາຍເປັນນິດ
໕. ພິກຂຸສັນພັດຕາຫານທີ່ເຂົາຖວາຍຕາມສະລາກ
໖. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນປັກ
໗. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນວັນອຸໂປສົດ
໘. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນວັນປາຕິບົດ
໙. ພິກຂຸສັນພັດຕາຫານທຸກຂະນິດ ຍົກເວັ້ນໂພຊະນະ ໕
໑໐. ພິກຂຸວິກົນຈະລິດ
໑໑. ພິກຂຸຕົ້ນບັນຍັດ

**ຄະນະໂພຊະນະສິກຂາບົດທີ ໒ ຈົບ**

# ໔. ໂພຊະນະວັກ

## ໓. ປະຣໍາປະຣະໂພຊະນະສິກຂາບົດ

### ວ່າດ້ວຍການສັນປະຣໍາປະຣະໂພຊະນະ

### ເລື້ອງຊາຍກຳມະກອນຜູ້ຍາກຈົນ

[໔໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພວກຊາວບ້ານຈັດລຳດັບວາຣະຖວາຍພັດຕາຫານຢ່າງປະນີດໄວ້ໃນ ນະຄອນເວສາລີ ຄັ້ງນັ້ນ ຊາຍກຳມະກອນຍາກຈົນຄົນໜຶ່ງໄດ້ມີຄວາມຄິດດັ່ງນີ້ວ່າ ຫານນີ້ບໍ່ແມ່ນເປັນຂອງຕ່ຳຕ້ອຍ ຍ້ອນພວກຊາວບ້ານເຫຼົ່ານີ້ໄດ້ຊ່ອຍກັນຈັດພັດຕາຫານໂດຍເຄົາລົບ ຖ້າຈັ່ງຊັ້ນ ແມ່ນຕົວເຮົາກໍເພິ່ງຈັດພັດຕາຫານຄືກັນ

ຄັ້ງນັ້ນ ຊາຍກຳມະກອນຜູ້ຍາກຈົນຄົນນັ້ນໄດ້ເຂົ້າໄປຫານາຍຈ້າງຊື່ກິຣະປະຕິກະເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບນາຍກິຣະປະຕິກະດັ່ງນີ້ວ່າ "ນາຍທ່ານ ຂ້າພະເຈົ້າຕ້ອງການຈັດພັດຕາ

ທານ ຖວາຍພິກຂຸສົງເຊິ່ງມີພຣະພຸດທະເຈົ້າເປັນປະມຸກ ທ່ານກະລຸນາໃຫ້ຄ່າຈ້າງແກ່ຂ້າພະເຈົ້າດ້ວຍ

ນາຍກີຣະປະຕິກະມີສັດທາເຫຼື້ອມໃສຢູ່ແລ້ວ ຈຶ່ງໄດ້ໃຫ້ຄ່າຈ້າງແກ່ເຂົາຫຼາຍກວ່າປົກກະຕິ

ຄັ້ງນັ້ນ ຊາຍກຳມະກອນຜູ້ຍາກຈົນຄົນນັ້ນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ຊາຍກຳມະກອນຜູ້ ຍາກຈົນຄົນນັ້ນຜູ້ນັ່ງໃນທີ່ສົມຄວນແລ້ວ ໄດ້ຂາບອາຣາດທະນາພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂໍ ພຣະຜູ້ມີພຣະພາກເຈົ້າ ພ້ອມກັບພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງເພື່ອສັນໃນມື້ອື່ນນີ້ດ້ວຍເທີ້ນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອຸປາສົກ ພິກຂຸສົງມີຈຳນວນຫຼາຍ” ຊາຍກຳມະກອນຜູ້ຍາກຈົນຂາບທູນວ່າ “ພຣະອົງຜູ້ຈະເລີນ ເຖິງພິກຂຸສົງມີຈຳນວນຫຼາຍກໍບໍ່ເປັນຫຍັງ ຂ້າພຣະອົງໄດ້ຈັດກຽມຜົນໝາກກະທັນໄວ້ໃຫ້ຫຼາຍ ນ້ຳໝາກກະທັນມີພຽງພໍ”

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ເມື່ອຊາຍກຳມະກອນຜູ້ຍາກຈົນຮູ້ວ່າພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວຈຶ່ງລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ພິກຂຸທັງຫຼາຍ ໄດ້ຮັບຮູ້ຂ່າວວ່າ ຊາຍກຳມະກອນຜູ້ຍາກຈົນນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກເພື່ອສັນພັດຕາຫານໃນມື້ອື່ນນີ້ ນ້ຳໝາກກະທັນມີພຽງພໍ ພິກຂຸເຫຼົ່ານັ້ນ ໄດ້ຫ່ວງບິນທະບາດແລ້ວສັນແຕ່ເຊົ້າມືດກ່ອນ

ພວກຊາວບ້ານໄດ້ຮູ້ຂ່າວວ່າ ຊາຍກຳມະກອນຜູ້ຍາກຈົນນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ພວກຊາວບ້ານເຫຼົ່ານັ້ນ ຈຶ່ງໄດ້ນຳຂາທະນີຍະໂພຊະນີຍາຫານຈຳນວນຫຼາຍໄປໃຫ້ຊາຍກຳມະກອນຜູ້ຍາກຈົນ

ຄັ້ງນັ້ນແລ ຕະຫຼອດຣາຕີນັ້ນ ຊາຍກຳມະກອນຜູ້ຍາກຈົນໄດ້ຈັດກຽມຂາທະນີຍະ ໂພຊະນີຍາຫານຢ່າງປະນີດ ໃຫ້ຄົນໄປຂາບທູນພັດຕະການວ່າ “ໄດ້ເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ”

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນສະເດັດໄປເຖິງທີ່ຢູ່ຂອງຊາຍກຳມະກອນຜູ້ຍາກຈົນ ເມື່ອເຖິງແລ້ວໄດ້ປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍພ້ອມພິກຂຸສົງ ເມື່ອນັ້ນ ຊາຍກຳມະກອນຜູ້ຍາກຈົນຖວາຍພັດຕາຫານພິກຂຸທັງຫຼາຍຢູ່ທຳສັນ ພິກຂຸທັງຫຼາຍໄດ້ກ່າວຢ່າງນີ້ວ່າ “ອຸປາສົກ ຈົ່ງຖວາຍແຕ່ໜ້ອຍເທີ້ນ ອຸປາສົກຈົ່ງຖວາຍ ແຕ່ໜ້ອຍເທີ້ນ”

ຊາຍກຳມະກອນຜູ້ຍາກຈົນກ່າວວ່າ "ຄູບາທັງຫຼາຍ ຂໍຄູບາຢ່າເຂົ້າໃຈວ່າຜູ້ນີ້ເປັນກຳມະກອນຍາກຈົນ ແລ້ວຮັບແຕ່ໜ້ອຍ ໆ ເລີຍ ຂ້ານ້ອຍໄດ້ຈັດກຽມຂາທະນີຍະ ໂພຊະນີຍາຫານໄວ້ພຽງພໍ ສຳລັບຄູບາທັງຫຼາຍໂຜດຮັບໃຫ້ພໍແກ່ຄວາມຕ້ອງການດ້ວຍເທີ້ນ"

ພິກຂຸທັງຫຼາຍກ່າວວ່າ "ພວກອາດຕະມາຮັບແຕ່ໜ້ອຍ ບໍ່ແມ່ນຍ້ອນເຫດນັ້ນ ແຕ່ຍ້ອນພວກອາດຕະມາໄດ້ທ່ຽວບິນທະບາດສັນມາແລ້ວແຕ່ເຊົ້າ ດັ່ງນັ້ນ ພວກອາດຕະມາຈຶ່ງຂໍຮັບແຕ່ໜ້ອຍ"

ລຳດັບນັ້ນ ຊາຍກຳມະກອນຜູ້ຍາກຈົນຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງຄູບາທັງ ຫຼາຍທີ່ເຮົານິມົນໄວ້ແລ້ວ ຈຶ່ງໄດ້ໄປສັນໃນທີ່ອີກແຫ່ງໜຶ່ງແນວນັ້ນນໍ? ເຮົາບໍ່ສາມາດຈະຖວາຍໃຫ້ພໍແກ່ຄວາມຕ້ອງການໄດ້ແມ່ນບໍ?"

ພິກຂຸທັງຫຼາຍ ໄດ້ຍິນຊາຍກຳມະກອນຜູ້ຍາກຈົນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຮັບນິມົນໄວ້ທີ່ໜຶ່ງແລ້ວຈຶ່ງໄປສັນອີກທີ່ໜຶ່ງນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຮັບນິມົນໄວ້ທີ່ໜຶ່ງແລ້ວໄປສັນອີກໃນທີ່ໜຶ່ງ ແມ່ນບໍ?" ພິກຂຸເຫຼົ່ານັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນຈຶ່ງຮັບນິມົນໄວ້ທີ່ໜຶ່ງແລ້ວໄປສັນໃນອີກທີ່ໜຶ່ງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ພິກຂຸຕ້ອງອາບັດປາຈິດຕິ ຍ້ອນສັນປະຣຳປະຣະໂພຊະນະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງຊາຍກຳມະກອນຜູ້ຍາກຈົນ ຈົບ**

## ເລື່ອງພິກຂຸເປັນໄຂ້

[໔໔໔] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ພິກຂຸອີກອົງໜຶ່ງນຳບິນທະບາດໄປເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ກ່າວກັບພິກຂຸອົງທີ່ເປັນໄຂ້ນັ້ນດັ່ງນີ້ວ່າ "ນິມົນທ່ານສັນເທີ້ນ ຂ້ານ້ອຍ"

ພິກຂຸເປັນໄຂ້ຕອບວ່າ "ບໍ່ດອກ ຂ້ານ້ອຍມີພັດຕາຫານທີ່ຫວັງວ່າຈະໄດ້ຢູ່"

ທາຍົກນຳບິນທະບາດມາຖວາຍພິກຂຸເຈັບໄຂ້ອົງນັ້ນ ໃນເວລາສາຍ ພິກຂຸເປັນໄຂ້ອົງນັ້ນ ສັນບໍ່ໄດ້ຕາມທີ່ຄິດໄວ້ ພິກຂຸທັງຫຼາຍ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງ ຮັບຊາບ

## ຊົງອະນຸຍາດໃຫ້ສັນປະຣຳປະຣະໂພຊະນະໄດ້ໃນສະໄໝທີ່ເປັນໄຂ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຈັບໄຂ້ສັນປະຣຳປະຣະໂພ ຊະນະໄດ້" ແລ້ວຈິ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸ ຕ້ອງອາບັດປາຈິດຕີ ຍ້ອນສັນປະຣຳປະຣະໂພຊະນະນອກສະໄໝ ສະໄໝໃນຂໍ້ ນັ້ນ ຄື ສະໄໝທີ່ເປັນໄຂ້ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸເປັນໄຂ້ ຈົບ

## ຊົງອະນຸຍາດໃຫ້ສັນປະຣຳປະຣະໂພຊະນະໄດ້ໃນສະໄໝທີ່ຖວາຍຈີວອນ

[໔໔໓] ສະໄໝນັ້ນ ພວກຊາວບ້ານກະກຽມພັດຕາຫານພ້ອມຈີວອນໃນສະໄໝທີ່ຈະຖວາຍ ຈີວອນ ແລ້ວນິມົນພິກຂຸທັງຫຼາຍດ້ວຍຕັ້ງໃຈວ່າ ພວກເຮົານິມົນພິກຂຸທັງຫຼາຍສັນແລ້ວ ຈະໃຫ້ ຄອງຈີວອນ

ພິກຂຸທັງຫຼາຍ ມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການສັນປະຣຳປະ ຣະໂພຊະນະ" ບໍ່ຮັບນິມົນ ຈຶ່ງໄດ້ຈີວອນພຽງເລັກໜ້ອຍ ພິກຂຸທັງຫຼາຍ ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາ ຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນປະຣຳປະຣະໂພຊະນະໄດ້ໃນ ສະໄໝ ທີ່ຖວາຍຈີວອນ" ແລ້ວຈິ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ພິກຂຸຕ້ອງອາບັດປາຈິດຕີ ຍ້ອນສັນປະຣຳປະຣະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງຊົງອະນຸຍາດໃຫ້ສັນປະຣຳປະຣະໂພຊະນະໄດ້ໃນສະໄໝທີ່ເຮັດຈີວອນ

[໘໘໔] ສະໄໝນັ້ນ ພວກຊາວບ້ານນິມົນພວກພິກຂຸຜູ້ເຮັດຈີວອນສັນພັດຕາຫານ ພິກຂຸທັງຫຼາຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມການສັນປະຣຳປະຣະໂພຊະນະ" ຈຶ່ງບໍ່ຮັບນິມົນ ພິກຂຸທັງຫຼາຍ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນປະຣຳປະຣະໂພຊະນະໄດ້ໃນສະໄໝທີ່ເຮັດຈີວອນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໘໘໕] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນສັນປະຣຳປະຣະໂພຊະນະນອກສະໄໝ ສະໄໝໃນຂໍ້ນັ້ນຄືສະໄໝທີ່ເປັນໄຂ້ ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງວິກັບອາຫານທີ່ຫວັງວ່າຈະໄດ້

[໘໘໖] ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະຈີວອນ ມີທ່ານພຣະອານົນເປັນປັດສາສະມະນະສະເດັດເຂົ້າໄປຕະກູນໜຶ່ງ ເມື່ອເຖິງແລ້ວ ໄດ້ປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ພວກຊາວບ້ານໄດ້ຖວາຍໂພຊະນາຫານແດ່ພຣະຜູ້ມີພຣະພາກເຈົ້າ ແລະທ່ານພຣະອານົນ ທ່ານພຣະອານົນມີຄວາມຢຳເກງຢູ່ຈຶ່ງບໍ່ຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ຮັບເທີ້ນ ອານົນ"

ທ່ານພຣະອານົນຂາບທູນວ່າ "ຢ່າເລີຍ ຂ້ານ້ອຍ ຂ້າພຣະອົງມີພັດຕາຫານທີ່ຫວັງວ່າຈະໄດ້ແລ້ວ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງວິກັບໄວ້ແລ້ວຮັບ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ວິກັບພັດຕາຫານທີ່ຫວັງວ່າຈະໄດ້ແລ້ວສັນປະຣຳປະຣະໂພຊະນະ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍວິກັບພັດຕາຫານທີ່ຫວັງວ່າຈະໄດ້ ຢ່າງນີ້

## ຄຳວິກັບອາຫານ

ຂ້າພະເຈົ້າຖວາຍພັດຕາຫານທີ່ຂ້າພະເຈົ້າຫວັງວ່າຈະໄດ້ແກ່ພິກຂຸຊື່ນີ້

### ເລື້ອງວິກັບອາຫານທີ່ຫວັງວ່າຈະໄດ້ ຈົບ

## ສິກຂາບົດວິພັງ

[໔໔໗] ທີ່ຊື່ວ່າ ປະຣຳປະຣະໂພຊະນະ ຄື ພິກຂຸທີ່ທາຍົກນິມົນດ້ວຍໂພຊະນະ ໕ ຢ່າງຢ່າງໃດຢ່າງໜຶ່ງໄວ້ ງົດເວັ້ນໂພຊະນະນັ້ນ ໄປສັນໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງ ອື່ນຈາກທີ່ຕົນຮັບນິມົນໄວ້ ຢ່າງນີ້ຊື່ວ່າປະຣຳປະຣະໂພຊະນະ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ສະໄໝທີ່ເປັນໄຂ້ ຄື ນັ່ງຢູ່ອາສະນະແຫ່ງດຽວ ບໍ່ອາດຈະສັນໃຫ້ພໍແກ່ຄວາມຕ້ອງການໄດ້ ພິກຂຸຄິດວ່າ ເປັນສະໄໝທີ່ເປັນໄຂ້ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ຖວາຍຈີວອນ ຄື ເມື່ອຍັງບໍ່ໄດ້ການກະຖິນ ກຳນົດເອົາເດືອນສຸດທ້າຍແຫ່ງລະດູຝົນ ເມື່ອການກະຖິນແລ້ວ ມີກຳນົດເວລາ ໕ ເດືອນ ພິກຂຸຄິດວ່າ ເປັນສະໄໝທີ່ຖວາຍຈີວອນ ເພິ່ງສັນໄດ້

ທີ່ຊື່ວ່າ ສະໄໝທີ່ເຮັດຈີວອນ ຄື ເມື່ອພິກຂຸກຳລັງເຮັດຈີວອນ ພິກຂຸຄິດວ່າ ເປັນສະໄໝທີ່ເຮັດ ຈີວອນ ເພິ່ງສັນໄດ້

ພິກຂຸຮັບດ້ວຍຄິດວ່າ "ຈະສັນ" ນອກສະໄໝ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໔໔໘] ປະຣຳປະຣະໂພຊະນະ ພິກຂຸສຳຄັນວ່າປະຣຳປະຣະໂພຊະນະ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

ປະຣຳປະຣະໂພຊະນະ ພິກຂຸບໍ່ແນ່ໃຈ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

ປະຣຳປະຣະໂພຊະນະ ພິກຂຸສຳຄັນວ່າບໍ່ແມ່ນປະຣຳປະຣະໂພຊະນະ ສັນນອກສະໄໝ ຕ້ອງອາບັດປາຈິດຕີ

**ທຸກະທຸກກົດ**

ບໍ່ແມ່ນປະຣຳປະຣະໂພຊະນະພິກຂຸສຳຄັນວ່າປະຣຳປະຣະໂພຊະນະ ຕ້ອງອາບັດທຸກກົດ

ບໍ່ແມ່ນປະຣຳປະຣະໂພຊະນະ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນປະຣຳປະຣະໂພຊະນະ ພິກຂຸສຳຄັນວ່າບໍ່ແມ່ນປະຣຳປະຣະໂພຊະນະ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໒໔໙] ໑. ພິກຂຸສັນໃນສະໄໝ

໒. ພິກຂຸວິກັບແລ້ວສັນ

໓. ພິກຂຸສັນບິນທະບາດທີ່ຮັບນິມົນໄວ້ ໒-໓ ແຫ່ງລວມກັນ

໔. ພິກຂຸສັນຕາມລຳດັບທີ່ຮັບນິມົນ

໕. ພິກຂຸທີ່ຊາວເຂດທັງໝົດນິມົນແລ້ວສັນໃນທີ່ແຫ່ງໜຶ່ງໃນເຂດນັ້ນ

໖. ພິກຂຸທີ່ສະມາຄົມທັງໝົດນິມົນແລ້ວສັນໃນທີ່ແຫ່ງໜຶ່ງໃນສະມາຄົມນັ້ນ

໗. ພິກຂຸຮັບນິມົນແຕ່ບອກວ່າຈະຮັບພິກສາ

໘. ພິກຂຸສັນພັດຕາຫານທີ່ເຂົາຖວາຍເປັນນິດ

໙. ພິກຂຸສັນພັດຕາຫານທີ່ເຂົາຖວາຍຕາມສະລາກ

໑໐. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນປັກ

໑໑. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນວັນອຸໂປສົດ

໑໒. ພິກຂຸສັນພັດຕາຫານທີ່ເຂົາຖວາຍໃນວັນປາຕິບົດ

໑໓. ພິກຂຸສັນອາຫານທຸກຊະນິດຍົກເວັ້ນໂພຊະນະ ໕

໑໔. ພິກຂຸວິກົນຈະລິດ

໑໕. ພິກຂຸຕົ້ນບັນຍັດ

**ປະຣຳປະຣະໂພຊະນະສິກຂາບົດທີ ໓ ຈົບ**

# ໔. ໂພຊະນະວັກ

## ໔. ກາມະມາຕຸສິກຂາບົດ

### ວ່າດ້ວຍມານດາຂອງນາງການາ

### ເລື່ອງອຸປາສິກາ ມານດາຂອງນາງການາ

[໔໓໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸປາສິກາມານດາຂອງນາງການາເປັນຜູ້ມີສັດທາເຫຼື້ອມໃສ ນາງໄດ້ຍົກທິດາຊື່ການາໃຫ້ຊາຍໜຸ່ມຜູ້ໜຶ່ງໃນໝູ່ບ້ານແຫ່ງໜຶ່ງ ຕໍ່ມານາງການາໄດ້ກັບມາບ້ານມານດາດ້ວຍວຽກງານບາງຢ່າງ ຝ່າຍສາມີຂອງນາງການາສົ່ງຂ່າວມາເຖິງນາງການາວ່າ "ຈົ່ງກັບມາເທີ້ນ ການາ ເຮົາຕ້ອງການໃຫ້ເຈົ້າກັບມາ"

ຄັ້ງນັ້ນ ມານດາຂອງນາງການາຄິດວ່າ "ການທີ່ການາກັບໄປມືເປົ່າ ເບິ່ງຈັ່ງໃດຢູ່" ຈຶ່ງຈີນເຂົ້າໜົມໃຫ້ ເມື່ອເຂົ້າໜົມສຸກ ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອົງໜຶ່ງເຂົ້າມາເຖິງບ້ານມານດາຂອງນາງການາ ມານດາຂອງນາງການາຈຶ່ງສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນຈົນວ່າເຂົ້າໜົມທີ່ກຽມໄວ້ໝົດສິ້ນໄປ

ແມ່ນຄັ້ງທີ ໒ ສາມີຂອງນາງການາກໍໄດ້ສົ່ງຂ່າວມາເຖິງນາງການາວ່າ "ຈົ່ງກັບມາເທີ້ນ ການາ ເຮົາຕ້ອງການໃຫ້ເຈົ້າກັບມາ"

ແມ່ນຄັ້ງທີ ໒ ມານດາຂອງນາງການາຄິດວ່າ "ການທີ່ການາກັບໄປມືເປົ່າ ເບິ່ງຈັງໃດຢູ່" ຈຶ່ງຈີນເຂົ້າໜົມໃຫ້ ເມື່ອເຂົ້າໜົມສຸກ ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອົງໜຶ່ງເຂົ້າມາເຖິງບ້ານມານດາຂອງນາງການາ ມານດາຂອງນາງການາຈຶ່ງສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນຈົນວ່າເຂົ້າໜົມທີ່ກຽມໄວ້ໝົດສິ້ນໄປ

ແມ່ນຄັ້ງທີ ໓ ສາມີຂອງນາງການາກໍໄດ້ສົ່ງຂ່າວມາເຖິງນາງການາວ່າ "ຈົ່ງກັບມາເທີ້ນ ການາ ເຮົາຕ້ອງການໃຫ້ເຈົ້າກັບມາ ຫາກເຈົ້າບໍ່ກັບ ເຮົາຈະພາຍິງອື່ນມາເປັນພັນລະຍາ"

ແມ່ນຄັ້ງທີ ๓ ມານດາຂອງນາງການາຄິດວ່າ "ການທີ່ການາກັບໄປມືເປົ່າ ເບິ່ງຈັ່ງໃດຢູ່" ຈຶ່ງຈີນເຂົ້າໜົມໃຫ້ ເມື່ອເຂົ້າໜົມສຸກ ພິກຂຸຜູ້ຖືທ່ຽວບິນທະບາດເປັນວັດອົງໜຶ່ງເຂົ້າມາເຖິງບ້ານມານດາຂອງນາງການາ ມານດາຂອງນາງການາຈຶ່ງສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ມານດາຂອງນາງການາກໍສັ່ງໃຫ້ຖວາຍເຂົ້າໜົມແກ່ພິກຂຸອົງນັ້ນຈົນວ່າເຂົ້າໜົມທີ່ກຽມໄວ້ໝົດສິ້ນໄປ

ຄັ້ງນັ້ນ ສາມີຂອງນາງການາໄດ້ພາຍິງອື່ນມາເປັນພັນລະຍາ ນາງການາໄດ້ຮູ້ຂ່າວວ່າສາມີຂອງຕົນໄດ້ພາຍິງອື່ນມາເປັນພັນລະຍາ ຈຶ່ງໄດ້ຢືນຮ້ອງໄຫ້

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດໄປເຖິງບ້ານຂອງອຸປາສິກາ ມານດາຂອງນາງການາ ເມື່ອເຖິງແລ້ວໄດ້ປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ມານດາຂອງນາງການາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງອາສະນະ ເມື່ອ ເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບມານດາຂອງນາງການາຜູ້ນັ່ງໃນທີ່ສົມຄວນດັ່ງນີ້ວ່າ "ນາງການາຮ້ອງໄຫ້ເຮັດຫຍັງ" ອຸປາສິກາ ມານດາຂອງນາງການາຈຶ່ງຂາບທູນເລື່ອງນັ້ນໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງ ຊີ້ແຈ່ງໃຫ້ມານດາຂອງນາງການາເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວຊົງລຸກຈາກອາສະນະສະເດັດໄປ

**ເລື້ອງອຸປາສິກາ ມານດາຂອງນາງການາ ຈົບ**

## ເລື້ອງພໍ່ຄ້າກວຽນ

[໔໓໑] ສະໄໝນັ້ນ ພໍ່ຄ້າກວຽນກຸ່ມໜຶ່ງຕ້ອງການຈະເດີນທາງຈາກນະຄອນຣາຊະຄຶ ໄປຖິ່ນຍ້ອນແສງ[9] ພິກຂຸຜູ້ຖືທ່ຽວບິນທະບາດອົງໜຶ່ງເຂົ້າໄປບິນທະບາດເຖິງໝູ່ກວຽນ ອຸປາສົກຄົນໜຶ່ງໄດ້ໃຫ້ຖວາຍເຂົ້າຕູແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ອຸປາສົກໄດ້ໃຫ້ຖວາຍເຂົ້າຕູແກ່ພິກຂຸອົງນັ້ນ ພິກຂຸອົງນັ້ນໄດ້ອອກໄປບອກພິກຂຸອົງອື່ນ ອຸປາສົກ ກໍໄດ້ໃຫ້ຖວາຍເຂົ້າຕູແມ່ນແກ່ພິກຂຸອົງນັ້ນຈົນວ່າສະບຽງທີ່ຈັດໄວ້ໝົດສິ້ນໄປ

ຄັ້ງນັ້ນ ອຸປາສົກນັ້ນໄດ້ກ່າວກັບພວກພໍ່ຄ້າດັ່ງນີ້ວ່າ "ວັນນີ້ ພວກທ່ານໂຜດຖ້າກ່ອນ ສະບຽງທີ່ຈັດກຽມໄວ້ຂ້າພະເຈົ້າຖວາຍຄູບາທັງຫຼາຍໄປໝົດແລ້ວ ຂ້າພະເຈົ້າຈະຈັດກຽມສະບຽງໃໝ່ໃຫ້

ພວກພໍ່ຄ້າກວຽນກ່າວວ່າ "ພວກເຮົາບໍ່ສາມາດຈະຖ້າໄດ້ ພໍ່ຄ້າກວຽນອອກເດີນທາງແລ້ວ" ໄດ້ໄປແລ້ວ

ເມື່ອອຸປາສິກາຈັດກຽມສະບຽງສຳເລັດແລ້ວເດີນທາງໄປພາຍຫຼັງ ຈຶ່ງຖືກພວກໂຈນປຸ້ນຈີ້

ພວກພໍ່ຄ້າພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງຮັບໂດຍບໍ່ຮູ້ປະມານ ອຸປາສິກຄົນນີ້ເຊິ່ງເມື່ອຖວາຍສະບຽງແກ່ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ແລ້ວເດີນທາງໄປພາຍຫຼັງໄດ້ຖືກໂຈນປຸ້ນຈີ້ແນວນີ້ບໍ?"

ພວກພິກຂຸໄດ້ຍິນພວກພໍ່ຄ້າຕຳໜິ ປະນາມ ໂພນທະນາ ເມື່ອແລ້ວພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
ฯລฯ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໓໔] ກໍ ທາຍົກນຳເຂົ້າໜົມ ຫຼື ເຂົ້າຕູ ມາປະວາຣະນາພິກຂຸຜູ້ເຂົ້າໄປເຖິງຕະກູນ ພິກຂຸຜູ້ຕ້ອງການເພິ່ງຮັບໄດ້ເຕັມ ໒-໓ ບາດ ຖ້າຮັບເກີນກວ່ານັ້ນ ຕ້ອງອາບັດປາຈິດຕີ ເມື່ອຮັບເຕັມ ໒-໓ ບາດແລ້ວ ເມື່ອນຳອອກຈາກທີ່ນັ້ນແລ້ວເພິ່ງແບ່ງປັນກັບພິກຂຸທັງຫຼາຍ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ

### ເລື້ອງພໍ່ຄ້າກວຽນ ຈົບ

## ສິກຂາບົດວິພັງ

[໔໓໓] ຄຳວ່າ ກໍฯລฯພິກຂຸ ຜູ້ເຂົ້າໄປເຖິງຕະກູນ ທີ່ຊື່ວ່າຕະກູນ ໄດ້ແກ່ ຕະກູນ ໔ ຄືຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ຄຳວ່າ ຜູ້ເຂົ້າໄປເຖິງ ຄື ຜູ້ເຂົ້າໄປໃນຕະກູນນັ້ນ

ທີ່ຊື່ວ່າ ເຂົ້າໜົມ ໄດ້ແກ່ ຂອງກິນຢ່າງໃດຢ່າງໜຶ່ງທີ່ເຂົາຈັດກຽມເພື່ອສົ່ງໄປເປັນຂອງກຳນັນ

ທີ່ຊື່ວ່າ ເຂົ້າຕູ ໄດ້ແກ່ ຂອງກິນຢ່າງໃດຢ່າງໜຶ່ງທີ່ເຂົາຈັດກຽມເປັນສະບຽງເດີນທາງ

ຄຳວ່າ ທາຍົກນຳມາປະວາຣະນາ ຄື ເຂົານຳມາປະວາຣະນາວ່າ "ທ່ານໂຜດຮັບຕາມຕ້ອງການ"

ຄຳວ່າ ຜູ້ຕ້ອງການ ຄື ຜູ້ປາຖະໜາໄດ້

ຄຳວ່າ ເພິ່ງຮັບໄດ້ເຕັມ ໒-໓ ບາດ ຄວາມວ່າ ພິກຂຸຮັບໄດ້ ໒-໓ ບາດ ແລ້ວໃຫ້ຢຸດຮັບ

ຄຳວ່າ ຖ້າຮັບເກີນກວ່ານັ້ນ ຄວາມວ່າ ຮັບເກີນກຳນົດນັ້ນໄປ ຕ້ອງອາບັດປາຈິດຕີ

ເມື່ອຮັບເຕັມ ໒-໓ ບາດ ແລ້ວເມື່ອອອກຈາກທີ່ນັ້ນໄປພົບພິກຂຸອົງອື່ນເພິ່ງບອກວ່າ "ຂ້ານ້ອຍຮັບເຕັມ ໒-໓ ບາດ ໃນທີ່ນັ້ນແລ້ວ ທ່ານຢ່າຮັບໃນທີ່ນັ້ນອີກ" ຖ້າພົບພິກຂຸອົງອື່ນແລ້ວບໍ່ບອກ ຕ້ອງອາບັດທຸກກົດ ເມື່ອບອກແລ້ວ ພິກຂຸອົງນັ້ນຍັງໄປຮັບອີກ ຕ້ອງອາບັດທຸກກົດ

ຄຳວ່າ ເມື່ອນຳອອກຈາກທີ່ນັ້ນແລ້ວເພິ່ງແບ່ງປັນກັບພິກຂຸທັງຫຼາຍ ຄື ພິກຂຸເພິ່ງນຳກັບໄປແບ່ງໃຫ້ພິກຂຸອົງອື່ນ

ຄຳວ່າ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ ຄື ນີ້ເປັນຄວາມຖືກຕ້ອງໃນເລື້ອງນັ້ນ

## ບົດພາຊະນີ

### ຕິກະປາຈິດຕີ

[໒໓໔] ຂອງເຕັມເກີນ ໒-໓ ບາດ ພິກຂຸສຳຄັນວ່າເກີນ ຮັບ ຕ້ອງອາບັດປາຈິດຕີ

ຂອງເຕັມເກີນ ໒-໓ ບາດ ພິກຂຸບໍ່ແນ່ໃຈ ຮັບ ຕ້ອງອາບັດປາຈິດຕີ

ຂອງເຕັມເກີນ ໒-໓ ບາດ ພິກຂຸສຳຄັນວ່າຍັງບໍ່ເຕັມ ຮັບ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ຂອງຍັງບໍ່ເຕັມ ໒-໓ ບາດ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກົດ

ຂອງຍັງບໍ່ເຕັມ ໒-໓ ບາດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຂອງຍັງບໍ່ເຕັມ ໒-໓ ບາດ ພິກຂຸສຳຄັນວ່າຍັງບໍ່ເຕັມ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໒໓໕] ໑. ພິກຂຸຮັບເຕັມ ໒-໓ ບາດ

໒. ພິກຂຸຮັບບໍ່ເຕັມ ໒-໓ ບາດ

໓. ພິກຂຸຜູ້ຮັບຂອງທີ່ເຂົາບໍ່ໄດ້ຈັດກຽມໄວ້ເພື່ອສົ່ງໄປເປັນຂອງກຳນັນ
໔. ພິກຂຸຜູ້ຮັບຂອງທີ່ເຂົາບໍ່ໄດ້ຈັດກຽມເປັນສະບຽງເດີນທາງ
໕. ພິກຂຸຜູ້ຮັບຂອງທີ່ເຫຼືອຈາກທີ່ເຂົາຈັດກຽມໄວ້ເພື່ອສົ່ງໄປເປັນຂອງກຳນັນຫຼືເພື່ອເປັນສະບຽງເດີນທາງ
໖. ພິກຂຸຜູ້ຮັບຂອງທີ່ທາຍົກຖວາຍເມື່ອເຂົາລະງັບການໄປແລ້ວ
໗. ພິກຂຸຮັບຂອງຍາດ
໘. ພິກຂຸຮັບຂອງຄົນປະວາຣະນາ
໙. ພິກຂຸຮັບເພື່ອພິກຂຸອື່ນ
໑໐. ພິກຂຸຮັບຂອງທີ່ຈ່າຍມາດ້ວຍຊັບຂອງຕົນ
໑໑. ພິກຂຸວິກົນຈະລິດ
໑໒. ພິກຂຸຕົ້ນບັນຍັດ

**ການະມາຕຸສິກຂາບົດທີ ໔ ຈົບ**

# ໔. ໂພຊະນະວັກ

## ໕. ປະຖົມປະວາຣະນາສິກຂາບົດ

### ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໑

### ເລື້ອງພິກຂຸຫຼາຍອົງ

[໔໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມຄົນໜຶ່ງນິມົນພິກຂຸທັງຫຼາຍໃຫ້ສັນພັດຕາຫານ ພິກຂຸສັນແລ້ວ ບອກຫ້າມພັດຕາຫານແລ້ວພາກັນໄປຕະກູນຍາດ ພິກຂຸບາງພວກຍັງສັນອີກ ບາງພວກກໍຍັງຮັບບິນທະບາດກັບໄປ

ຕໍ່ມາ ພາມໄດ້ກ່າວກັບເພື່ອນບ້ານຜູ້ຄຸ້ນເຄີຍດັ່ງນີ້ວ່າ "ທ່ານທັງຫຼາຍ ເຮົາລ້ຽງພິກຂຸທັງຫຼາຍໃຫ້ອີ່ມໜຳແລ້ວ ເຊີນມາເທີ້ນ ເຮົາຈະລ້ຽງພວກທ່ານໃຫ້ອີ່ມໜຳຄືກັນ"

ເພື່ອນບ້ານຜູ້ຄຸ້ນເຄີຍເຫຼົ່ານັ້ນກ່າວຢ່າງນີ້ວ່າ "ນາຍທ່ານຈະລ້ຽງພວກເຮົາໃຫ້ອີ່ມໜຳໄດ້ຢ່າງໃດ ແມ່ນພວກພິກຂຸທີ່ທ່ານນິມົນແລ້ວກໍຍັງຕ້ອງໄປຮອດເຮືອນພວກເຮົາສັນຕື່ມອີກ ບາງພວກກໍຍັງຮັບບິນທະບາດກັບໄປ

ຄັ້ງນັ້ນ ພາມນັ້ນໄດ້ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ຄູບາທັງຫຼາຍສັນຢູ່ເຮືອນເຮົາແລ້ວຍັງໄປສັນທີ່ອື່ນອີກແນວນັ້ນນໍ ເຮົາບໍ່ສາມາດຈະຖວາຍໃຫ້ພຽງພໍແກ່ຄວາມຕ້ອງການແມ່ນບໍ?"

ພິກຂຸທັງຫຼາຍໄດ້ຍິນພາມຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍສັນແລ້ວ ບອກຫ້າມພັດຕາຫານແລ້ວຍັງໄປສັນຕໍ່ທີ່ອື່ນອີກນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພິກຂຸທັງຫຼາຍໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັນແລ້ວ ບອກຫ້າມພັດຕາຫານແລ້ວໄປສັນຕໍ່ທີ່ອື່ນອີກ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນສັນແລ້ວ ບອກຫ້າມພັດຕາຫານແລ້ວໄປສັນຕໍ່ທີ່ອື່ນອີກນໍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ສັນແລ້ວ ບອກຫ້າມພັດຕາຫານແລ້ວ ຫຍ້ຳຂອງຫຍ້ຳ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸຫຼາຍອົງ ຈົບ

## ເລື້ອງພັດຕາຫານທີ່ເປັນເງື່ອນ

[໔໓໗] ສະໄໝນັ້ນ ພິກຂຸທັງຫຼາຍນຳບິນທະບາດຢ່າງປະນີດໄປຖວາຍພວກພິກຂຸຜູ້ເປັນໄຂ້ ພວກພິກຂຸເຈັບໄຂ້ສັນພັດຕາຫານບໍ່ໄດ້ສົມໃຈ ພິກຂຸທັງຫຼາຍຈຶ່ງຖິ້ມບິນທະບາດເຫຼົ່ານັ້ນ

ພຣະຜູ້ມີພຣະພາກເຈົ້າຊົງໄດ້ສະດັບນົກກາສົ່ງສຽງຮ້ອງດັງພຶດພື້ນ ເມື່ອໄດ້ຊົງສະດັບແລ້ວຈຶ່ງໄດ້ຕັດກັບທ່ານພຣະອານົນວ່າ "ອານົນ ເປັນຫຍັງນົກກາຈຶ່ງສົ່ງສຽງຮ້ອງດັງພຶດພື້ນແນວນັ້ນນໍ?"

ລຳດັບນັ້ນ ທ່ານພຣະອານົນໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອານົນ ພິກຂຸທັງຫຼາຍ ໄດ້ສັນພັດຕາຫານທີ່ເປັນເດືອນພິກຂຸຜູ້ເປັນໄຂ້ແມ່ນບໍ?"

ທ່ານພຣະອານົນຂາບທູນວ່າ "ບໍ່ໄດ້ສັນ ຂ້ານ້ອຍ"

## ຊົງອະນຸຍາດໃຫ້ສັນພັດຕາຫານທີ່ເປັນເດືອນພິກຂຸເຈັບໄຂ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນພັດຕາຫານທີ່ເປັນເດືອນພິກຂຸຜູ້ເປັນໄຂ້ແລະພິກຂຸຜູ້ບໍ່ເຈັບໄຂ້ ພິກຂຸທັງຫຼາຍ ເພິ່ງເຮັດພັດຕາຫານໃຫ້ເປັນເດືອນດ້ວຍການກ່າວຢ່າງນີ້ວ່າ "ທັງໝົດນັ້ນພໍແລ້ວ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໒໓໗] ອັນໜຶ່ງ ພິກຂຸໃດສັນແລ້ວ ບອກຫ້າມພັດຕາຫານແລ້ວ ຫຍ້ຳຂອງຫຍ້ຳ ຫຼື ສັນຂອງສັນທີ່ບໍ່ເປັນເດືອນ ຕ້ອງອາບັດປາຈິດຕີ

### ເລື້ອງພັດຕາຫານທີ່ເປັນເດືອນ ຈົບ

## ສິກຂາບົດວິພັງ

[໒໓໘] ຄຳວ່າ ອັນໜຶ່ງ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ໗ລ໗ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ສັນແລ້ວ ຄື ພິກຂຸສັນໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງ ໂດຍທີ່ສຸດແມ່ນສັນດ້ວຍປາຍຫຍ້າຄາແຕະ

### ລັກສະນະການບອກຫ້າມພັດຕາຫານ

ທີ່ຊື່ວ່າ ບອກຫ້າມພັດຕາຫານ ຄື (໑) ພິກຂຸກຳລັງສັນ (໒) ທາຍົກນຳໂພຊະນະມາຖວາຍ (໓) ທາຍົກຢູ່ໃນຫັດຖະບາດນ້ອມຖວາຍ (໔) ພິກຂຸບອກຫ້າມ

### ຂອງທີ່ບໍ່ເປັນເດືອນ

ທີ່ຊື່ວ່າ ທີ່ບໍ່ເປັນເດືອນ ຄື (໑) ຂອງທີ່ພິກຂຸຍັງບໍ່ໄດ້ເຮັດໃຫ້ເປັນກັບປີຍະ (໒) ຂອງທີ່ພິກຂຸຍັງບໍ່ໄດ້ຮັບປະເຄນ (໓) ຂອງທີ່ພິກຂຸຍັງບໍ່ໄດ້ຍົກຂຶ້ນສົ່ງໃຫ້ (໔) ຂອງທີ່ຢູ່ນອກຫັດຖະບາດ

(໕) ຂອງທີ່ພິກຂຸຍັງບໍ່ໄດ້ສັນ (໖) ຂອງທີ່ພິກຂຸສັນແລ້ວບອກຫ້າມ ລຸກຈາກອາສະນະແລ້ວ (໗) ຂອງທີ່ພິກຂຸຍັງບໍ່ໄດ້ກ່າວວ່າ "ທັງໝົດນັ້ນພໍແລ້ວ" (໘) ຂອງບໍ່ເປັນເງື່ອນພິກຂຸເຈັບໄຂ້ ນີ້ຊື່ວ່າທີ່ບໍ່ເປັນເງື່ອນ

## ຂອງທີ່ເປັນເງື່ອນ

ທີ່ຊື່ວ່າ ທີ່ເປັນເງື່ອນ ຄື (໑) ຂອງທີ່ພິກຂຸເຮັດໃຫ້ເປັນກັບປິຍະແລ້ວ (໒) ຂອງທີ່ພິກຂຸຮັບປະເຄນແລ້ວ (໓) ຂອງທີ່ພິກຂຸຍົກຂຶ້ນສົ່ງໃຫ້ແລ້ວ (໔) ຂອງທີ່ຢູ່ໃນຫັດຖະບາດ (໕) ຂອງທີ່ພິກຂຸສັນແລ້ວ (໖) ຂອງທີ່ພິກຂຸສັນແລ້ວບອກຫ້າມ ແຕ່ຍັງບໍ່ລຸກຈາກອາສະນະ (໗) ຂອງທີ່ພິກຂຸກ່າວວ່າ "ທັງໝົດນັ້ນພໍແລ້ວ" (໘) ຂອງເປັນເງື່ອນພິກຂຸເຈັບໄຂ້ ນີ້ຊື່ວ່າທີ່ເປັນເງື່ອນຂອງຫຍໍ້າ

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕[໑] ຍາມະກາລິກ ສັດຕາຫະກາລິກ ແລະຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍໍ້າ

### ຂອງສັນ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມສົດ ເຂົ້າຕູ ປາ ຊີ້ນ

ພິກຂຸຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄໍາກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໘໔໐] ຂອງທີ່ບໍ່ເປັນເງື່ອນ ພິກຂຸສໍາຄັນວ່າເປັນຂອງທີ່ບໍ່ເປັນເງື່ອນ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ຂອງທີ່ບໍ່ເປັນເງື່ອນ ພິກຂຸບໍ່ແນ່ໃຈ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ຂອງທີ່ບໍ່ເປັນເງື່ອນ ພິກຂຸສໍາຄັນວ່າເປັນຂອງທີ່ເປັນເງື່ອນ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸຮັບປະເຄນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ເພື່ອເປັນອາຫານ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄໍາກືນ

ຂອງທີ່ເປັນເງື່ອນ ພິກຂຸສໍາຄັນວ່າເປັນຂອງທີ່ບໍ່ເປັນເງື່ອນ ຕ້ອງອາບັດທຸກກົດ

ຂອງທີ່ເປັນເງື່ອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຂອງທີ່ເປັນເງື່ອນ ພິກຂຸສໍາຄັນວ່າເປັນຂອງທີ່ເປັນເງື່ອນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໑໑] ໑. ພິກຂຸໃຫ້ເຮັດເປັນຂອງທີ່ເປັນເງື່ອນແລ້ວສັນ
໒. ພິກຂຸຮັບປະເຄນດ້ວຍຕັ້ງໃຈວ່າຈະໃຫ້ເຮັດເປັນຂອງທີ່ເປັນເງື່ອນກ່ອນຈຶ່ງສັນ
໓. ພິກຂຸຮັບໄປເພື່ອພິກຂຸອື່ນ
໔. ພິກຂຸສັນພັດຕາຫານທີ່ເຫຼືອຂອງພິກຂຸຜູ້ເປັນໄຂ້
໕. ພິກຂຸສັນຂອງທີ່ເປັນຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ເມື່ອມີເຫດຜົນທີ່ສົມຄວນ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ປະຖົມປະວາຣະນາສິກຂາບົດທີ ໕ ຈົບ**

# ໔. ໂພຊະນະວັກ

## ໖. ທຸຕິຍະປະວາຣະນາສິກຂາບົດ

### ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໒

### ເລື່ອງພິກຂຸ ໒ ອົງ

[໔໑໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸ ໒ ອົງເດີນທາງໄກໄປນະຄອນສາວັດຖີ ແຄວ້ນໂກສົນ ພິກຂຸອົງໜຶ່ງປະພຶດອະນາຈານ ພິກຂຸຜູ້ເປັນເພື່ອນໄດ້ກ່າວກັບພິກຂຸອົງນັ້ນດັ່ງນີ້ວ່າ "ທ່ານຢ່າໄດ້ກະທຳຢ່າງນີ້ ການກະທຳແນວນີ້ບໍ່ສົມຄວນ"

ພິກຂຸອົງນັ້ນແຄ້ນເຄືອງພິກຂຸຜູ້ເປັນເພື່ອນນັ້ນ ເມື່ອພິກຂຸເຫຼົ່ານັ້ນເຖິງນະຄອນສາວັດຖີຄັ້ງນັ້ນ ມີສັງຄະພັດຂອງສະມາຄົມໜຶ່ງ ພິກຂຸຜູ້ເປັນເພື່ອນສັນແລ້ວ ບອກຫ້າມພັດຕາຫານແລ້ວ ພິກຂຸອົງທີ່ແຄ້ນເຄືອງເຂົ້າໄປໃນຕະກູນຂອງຍາດນຳບິນທະບາດມາ ແລ້ວເຂົ້າໄປຫາພິກຂຸຜູ້ເປັນເພື່ອນເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ເຊີນທ່ານສັນເທີ້ນ ຂ້ານ້ອຍ"

ພິກຂຸຜູ້ເປັນເພື່ອນປະຕິເສດວ່າ "ບໍ່ດອກ ຂ້ານ້ອຍ ສັນອີ່ມແລ້ວ"

ພິກຂຸຜູ້ແຄ້ນເຄືອງນັ້ນຂູ່ຊີວ່າ "ບິນທະບາດແຊບຫຼາຍ ຈົ່ງສັນເທີ້ນ ທ່ານ"
ເມື່ອພິກຂຸຜູ້ເປັນເພື່ອນຖືກຂູ່ຊີຈຶ່ງສັນບິນທະບາດນັ້ນ

ພິກຂຸຜູ້ແຄ້ນເຄືອງໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ທ່ານເຂົ້າໃຈວ່າຂ້າພະເຈົ້າເປັນຜູ້ທີ່ຄວນວ່າກ່າວ ທ່ານເອງສັນແລ້ວບອກຫ້າມພັດຕາຫານແລ້ວ ກໍຍັງສັນໂພຊະນະທີ່ບໍ່ເປັນເງື່ອນຕື່ມອີກ"

ພິກຂຸຜູ້ເປັນເພື່ອນກ່າວວ່າ "ທ່ານຄວນບອກເລື້ອງນີ້ກ່ອນບໍ່ແມ່ນບໍ?"

ພິກຂຸຜູ້ແຄ້ນເຄືອງກ່າວວ່າ "ທ່ານຄວນຖາມກ່ອນບໍ່ແມ່ນບໍ?"

ຕໍ່ມາ ພິກຂຸນັ້ນໄດ້ແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍຮັບຮູ້ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງນຳໂພຊະນະທີ່ບໍ່ເປັນເງື່ອນໄປບອກໃຫ້ພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ ສັນແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານນຳໂພຊະນະທີ່ບໍ່ເປັນເງື່ອນໄປບອກໃຫ້ພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ ສັນ ແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງນຳໂພຊະນະທີ່ບໍ່ເປັນເງື່ອນໄປບອກໃຫ້ພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ ສັນ ນໍ? ໂມຄະບຸຣຸດ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໔໓] ກໍ ພິກຂຸໃດຮູ້ຢູ່ ແຕ່ຕ້ອງການຈະຫາເລື້ອງຈັບຜິດ ນຳຂອງຫຍ້ຳ ຫຼື ຂອງສັນທີ່ບໍ່ເປັນເງື່ອນໄປບອກໃຫ້ພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ ໂດຍກ່າວຂູ່ຊີວ່າ "ນິມົນເທີ້ນ ທ່ານຈົ່ງຫຍ້ຳຈົ່ງສັນກໍໄດ້" ເມື່ອທ່ານສັນແລ້ວ ພິກຂຸ ນັ້ນຕ້ອງອາບັດປາຈິດຕີ

## ເລື້ອງພິກຂຸ ໔ ອົງ ຈົບ

## ສິກຂາບົດວິພັງ

[໔໔໔] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໝາຍເຖິງ ພິກຂຸອົງອື່ນ

ທີ່ຊື່ວ່າ ສັນແລ້ວ ຄື ພິກຂຸສັນໂພຊະນະ ໕ ຢ່າງ ຢ່າງໃດຢ່າງໜຶ່ງໂດຍທີ່ສຸດແມ່ນສັນ ດ້ວຍປາຍຫຍ້າຄາແຕະ

**ລັກສະນະຫ້າມພັດ**

ທີ່ຊື່ວ່າ ບອກຫ້າມພັດຕາຫານ ຄື (໑) ພິກຂຸກຳລັງສັນ (໒) ທາຍົກນຳໂພຊະນະມາ ຖວາຍ (໓) ທາຍົກຢູ່ໃນຫັດຖະບາດນ້ອມຖວາຍ (໔) ພິກຂຸບອກຫ້າມ

**ຂອງທີ່ບໍ່ເປັນເດົ່ອນ**

ທີ່ຊື່ວ່າ ທີ່ບໍ່ເປັນເດົ່ອນ ຄື (໑) ຂອງທີ່ຍັງບໍ່ໄດ້ເຮັດໃຫ້ເປັນກັບປິຍະ (໒) ຂອງທີ່ພິກຂຸ ຍັງບໍ່ໄດ້ຮັບປະເຄນ (໓) ຂອງທີ່ພິກຂຸຍັງບໍ່ໄດ້ຍົກຂຶ້ນສົ່ງໃຫ້ (໔) ຂອງທີ່ຢູ່ນອກຫັດຖະບາດ (໕) ຂອງທີ່ພິກຂຸຍັງບໍ່ໄດ້ລົງມືສັນ (໖) ຂອງທີ່ພິກຂຸລົງມືສັນແລ້ວບອກຫ້າມ ລຸກຈາກອາສະນະແລ້ວ (໗) ຂອງທີ່ພິກຂຸຍັງບໍ່ໄດ້ກ່າວວ່າ “ທັງໝົດນັ້ນພໍແລ້ວ” (໘) ຂອງບໍ່ເປັນເດົ່ອນພິກຂຸເຈັບໄຂ້ ນີ້ຊື່ ວ່າທີ່ບໍ່ເປັນເດົ່ອນ

**ຂອງຫຍໍ້າ**

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍໍ້າຂອງສັນ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມສົດ ເຂົ້າຕູ ປາ ຊີ້ນ

ຄຳວ່າ ນຳມາປະວາຣະນາ ຄື ນຳມາປະວາຣະນາວ່າ “ທ່ານໂຜດຮັບຕາມຕ້ອງການ”

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກທ່ານ ຫຼື ຄົນນັ້ນບອກ

ທີ່ຊື່ວ່າ ຕ້ອງການຈະຈັບຜິດ ຄື ພິກຂຸເພ່ງເລັງວ່າ ເຮົາຈະທ້ວງ ເຮົາຈະເຕືອນ ເຮົາຈະ ທັກທ້ວງ ເຮົາຈະຕັກເຕືອນ ເຮົາຈະເຮັດພິກຂຸນີ້ໃຫ້ເກີ້ເຂີນດ້ວຍວິທີນີ້ ຕ້ອງອາບັດທຸກກົດ

ພິກຂຸຮັບໄວ້ຕາມຄຳຂອງພິກຂຸນັ້ນດ້ວຍຕັ້ງໃຈວ່າ ຈະສັນພິກຂຸຜູ້ນຳໄປຕ້ອງອາບັດທຸກກົດ

ພິກຂຸຜູ້ຮັບສັນ ພິກຂຸຜູ້ນຳໄປ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ເມື່ອພິກຂຸຜູ້ຮັບນັ້ນສັນສຳເລັດ ພິກຂຸຜູ້ນຳໄປ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໔໔໕] ບອກຫ້າມພັດຕາຫານແລ້ວ ພິກຂຸສຳຄັນວ່າບອກຫ້າມພັດຕາຫານແລ້ວ ນຳຂອງຫຍ້ຳຫຼືຂອງສັນທີ່ບໍ່ເປັນເງື່ອນໄປປະວາຣະນາ ຕ້ອງອາບັດປາຈິດຕີ

ບອກຫ້າມພັດຕາຫານແລ້ວ ພິກຂຸບໍ່ແນ່ໃຈ ນຳຂອງຫຍ້ຳ ຫຼື ຂອງສັນທີ່ບໍ່ເປັນເງື່ອນໄປປະວາຣະນາ ຕ້ອງອາບັດທຸກກົດ

ບອກຫ້າມພັດຕາຫານແລ້ວ ພິກຂຸສຳຄັນວ່າຍັງບໍ່ໄດ້ບອກຫ້າມພັດຕາຫານ ນຳຂອງຫຍ້ຳຫຼືຂອງສັນທີ່ບໍ່ເປັນເງື່ອນໄປປະວາຣະນາ ບໍ່ຕ້ອງອາບັດ

ພິກຂຸນຳຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກໄປເປັນອາຫານ ຕ້ອງອາບັດທຸກກົດ

ພິກຂຸຮັບໄວ້ຕາມຄຳຂອງພິກຂຸຜູ້ນຳໄປນັ້ນດ້ວຍຕັ້ງໃຈວ່າ ຈະສັນ ພິກຂຸຜູ້ນຳໄປ ຕ້ອງອາບັດທຸກກົດ

ພິກຂຸຜູ້ຮັບສັນ ພິກຂຸຜູ້ນຳໄປ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ຍັງບໍ່ໄດ້ບອກຫ້າມພັດຕາຫານ ພິກຂຸສຳຄັນວ່າບອກຫ້າມພັດຕາຫານແລ້ວ ຕ້ອງອາບັດທຸກກົດ

ຍັງບໍ່ໄດ້ບອກຫ້າມພັດຕາຫານ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຍັງບໍ່ໄດ້ບອກຫ້າມພັດຕາຫານ ພິກຂຸສຳຄັນວ່າຍັງບໍ່ໄດ້ບອກຫ້າມພັດຕາຫານ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໔໖] ໑. ພິກຂຸໃຫ້ເຮັດເປັນຂອງທີ່ເປັນເງື່ອນແລ້ວໃຫ້

໒. ພິກຂຸໃຫ້ດ້ວຍກ່າວວ່າ ທ່ານຈົ່ງໃຫ້ເຮັດເປັນຂອງທີ່ເປັນເງື່ອນກ່ອນຈຶ່ງສັນ

໓. ພິກຂຸໃຫ້ດ້ວຍກ່າວວ່າ ທ່ານຈົ່ງນຳໄປເພື່ອພິກຂຸອື່ນ

໔. ພິກຂຸໃຫ້ພັດຕາຫານທີ່ເຫຼືອຂອງພິກຂຸເປັນໄຂ້

໕. ພິກຂຸໃຫ້ຂອງທີ່ເປັນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ດ້ວຍກ່າວວ່າ ທ່ານຈົ່ງສັນເມື່ອມີເຫດສົມຄວນ

໖. ພິກຂຸວິກົນຈະລິດ

໗. ພິກຂຸຕົ້ນບັນຍັດ

**ທຸຕິຍະປະວາຣະນາສິກຂາບົດທີ ໖ ຈົບ**

# ๔. โพชะนะวัภ

## ๗. วิภาละโพชะนะสิภขาบົດ

### ວ່າດ້ວຍການສັນໂພຊະນະໃນເວລາວິການ

### ເລື້ອງພຣະສັດຕະຣະສະວັກຄີ

[໔໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ໃນນະຄອນຣາຊະຄຶ ມີມະໂຫລະສົບເທິງຍອດເຂົາ ພວກພິກຂຸສັດຕະຣະສະວັກຄີໄດ້ໄປຊົມມະໂຫລະສົບ ພວກຊາວບ້ານເຫັນພວກພິກຂຸສັດຕະຣະສະວັກຄີແລ້ວຈຶ່ງນິມົນໃຫ້ອາບນ້ຳ ໃຫ້ລູບໄລ້ທາຂອງຫອມ ໃຫ້ສັນພັດຕາຫານແລ້ວຖວາຍຂອງຫຍ້ຳ ພວກພິກຂຸສັດຕະຣະສະວັກຄີນຳຂອງຫຍ້ຳໄປອາຣາມ ແລ້ວໄດ້ກ່າວກັບພວກພິກຂຸສັບພັກຄີດັ່ງນີ້ວ່າ "ທ່ານທັງຫຼາຍ ນິມົນພວກທ່ານຮັບແລ້ວຈົ່ງສັນຂອງຫຍ້ຳນີ້ເທີ້ນ ຂ້ານ້ອຍ"

ພວກພິກຂຸສັບພັກຄີຖາມວ່າ "ພວກທ່ານໄດ້ຂອງສັນມາຈາກໃສ?"
ພວກພິກຂຸສັດຕະຣະສະວັກຄີ ຈຶ່ງແຈ້ງເລື້ອງນັ້ນໃຫ້ພວກພິກຂຸສັບພັກຄີຮັບຮູ້
ພວກພິກຂຸສັບພັກຄີຖາມວ່າ "ພວກທ່ານສັນອາຫານໃນເວລາວິການແມ່ນບໍ?"
ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ແມ່ນແລ້ວ"

ພວກພິກຂຸສັບພັກຄີພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸ ສັດຕະຣະສະວັກຄີຈຶ່ງສັນພັດຕາຫານໃນເວລາວິການແນວນັ້ນນໍ" ແລ້ວພວກພິກຂຸສັບພັກຄີຈຶ່ງແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍຮັບຮູ້ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັດຕະຣະສະວັກຄີ ຈຶ່ງສັນພັດຕາຫານໃນເວລາວິການແນວນັ້ນນໍ?" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັດຕະຣະສະວັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັດຕະຣະສະວັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສັນພັດຕາຫານໃນເວລາວິການ ແມ່ນບໍ?" ພວກພິກຂຸສັດຕະຣະສະວັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງສັນພັດຕາຫານໃນເວລາວິການນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່

ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໔๗] ກໍ ພິກຂຸໃດ ຫຍໍ້າຂອງຫຍໍ້າຫຼືສັນຂອງສັນໃນເວລາວິການ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັດຕະຣະສະວັກຄີ ຈົບ**

## ສິກຂາບົດວິພັງ

[໔໔๘] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ເວລາວິການ ໝາຍເອົາເວລາເມື່ອທ່ຽງວັນລ່ວງໄປຈົນເຖິງອະຣຸນຂຶ້ນ

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ນອກນັ້ນຊື່ວ່າ ຂອງຫຍໍ້າ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຕູ ປາ ຊີ້ນ

ພິກຂຸຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໔໕໐] ເວລາວິການ ພິກຂຸສຳຄັນວ່າເປັນວິການ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ເວລາວິການ ພິກຂຸບໍ່ແນ່ໃຈ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ເວລາວິການ ພິກຂຸສຳຄັນວ່າເປັນການຫຍໍ້າຂອງຫຍໍ້າຫຼືສັນຂອງສັນ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸຮັບປະເຄນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກະໄວ້ເປັນອາຫານ ຕ້ອງອາບັດ ທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ການ ພິກຂຸສຳຄັນວ່າເປັນວິການ ຕ້ອງອາບັດທຸກກົດ

ການ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ການ ພິກຂຸສຳຄັນວ່າເປັນການ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໕໑] ໑. ພິກຂຸສັນຂອງທີ່ເປັນຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ເມື່ອມີເຫດຜົນທີ່ສົມຄວນ

໔. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

### ວິກາລະໂພຊະນະສິກຂາບົດທີ ໗ ຈົບ

# ໔. ໂພຊະນະວັກ

## ໘. ສັນນິທິກາຣະກະສິກຂາບົດ

## ວ່າດ້ວຍການສະສົມໂພຊະນະ

## ເລື້ອງພຣະເວລັດຖະສີສະ

[໔໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະເວລັດຖະສີສະ ພຣະອຸປັດຊາຂອງທ່ານພຣະອານົນຢູ່ໃນປ່າ ທ່ານທ່ຽວບິນທະບາດໄດ້ຫຼວງຫຼາຍ ເອົາເຂົ້າສຸກເປົ່າໄປຕາກແຫ້ງເກັບໄວ້ທີ່ອາຣາມ ເວລາທີ່ຕ້ອງການພັດຕາຫານກໍນຳມາແຊ່ນ້ຳແລ້ວສັນ ດົນ ໆ ຈຶ່ງຈະເຂົ້າໄປບິນທະບາດໃນໝູ່ບ້ານ

ພິກຂຸທັງຫຼາຍ ໄດ້ກ່າວກັບທ່ານພຣະເວລັດຖະສີສະດັ່ງນີ້ວ່າ "ທ່ານ ເປັນຫຍັງນໍ? ດົນ ໆ ຈຶ່ງເຫັນທ່ານເຂົ້າໄປບິນທະບາດໃນໝູ່ບ້ານ" ລຳດັບນັ້ນ ທ່ານພຣະເວລັດຖະສີສະຈຶ່ງແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້

ພິກຂຸທັງຫຼາຍຖາມວ່າ "ຊາບມາວ່າ ທ່ານສັນອາຫານທີ່ເກັບສະສົມໄວ້ແມ່ນບໍ?"

ທ່ານຕອບວ່າ "ແມ່ນແລ້ວ ຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະເວລັດຖະສີສະ ຈຶ່ງສັນໂພຊະນະທີ່ເກັບສະສົມໄວ້ແນ້ວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິ

ທ່ານພຣະເວລັດຖະສີສະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມທ່ານພຣະເວລັດຖະສີສະວ່າ "ເວລັດຖະສີສະ ໄດ້ຂ່າວວ່າ ທ່ານສັນໂພຊະນະທີ່ເກັບສະສົມໄວ້ ແມ່ນບໍ?" ພຣະເຖຣະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ເວລັດຖະສີສະ ເປັນຫຍັງ ທ່ານຈຶ່ງສັນໂພຊະນະທີ່ເກັບສະສົມໄວ້ນໍ ເວລັດຖະສີສະ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໕໓] ກໍ ພິກຂຸໃດ ຫຍໍ້າຂອງຫຍໍ້າຫຼືສັນຂອງສັນທີ່ເກັບສະສົມໄວ້ ຕ້ອງອາບັດປາຈິດຕີ

### ເລື້ອງພຣະເວລັດຖະສີສະ ຈົບ

## ສິກຂາບົດວິພັງ

[໔໕໔] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຂອງທີ່ເກັບສະສົມໄວ້ ຄື ຂອງທີ່ພິກຂຸຮັບປະເຄນໃນວັນນີ້ແລ້ວສັນໃນວັນອື່ນ

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍໍ້າ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຕູ ປາ ຊີ້ນ

ພິກຂຸຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໔໕໕] ຂອງເກັບສະສົມໄວ້ ພິກຂຸສຳຄັນວ່າເປັນຂອງເກັບສະສົມໄວ້ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ຂອງເກັບສະສົມໄວ້ ພິກຂຸບໍ່ແນ່ໃຈ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ຂອງເກັບສະສົມໄວ້ ພິກຂຸສຳຄັນວ່າບໍ່ແມ່ນຂອງເກັບສະສົມໄວ້ ຫຍ້ຳຂອງຫຍ້ຳ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸຮັບປະເຄນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກໄວ້ເປັນອາຫານ ຕ້ອງອາບັດທຸກກົດ ພິກຂຸສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ບໍ່ແມ່ນຂອງເກັບສະສົມໄວ້ ພິກຂຸສຳຄັນວ່າເປັນຂອງເກັບສະສົມໄວ້ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງເກັບສະສົມໄວ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງເກັບສະສົມໄວ້ ພິກຂຸສຳຄັນວ່າບໍ່ແມ່ນເປັນຂອງເກັບສະສົມໄວ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໒໕໖] ໑. ພິກຂຸເກັບຂອງທີ່ເປັນຍາວະກາລິກໄວ້ສັນພຽງແຕ່ການ

໒. ພິກຂຸເກັບຂອງທີ່ເປັນຍາມະກາລິກໄວ້ສັນພຽງແຕ່ຍາມ

໓. ພິກຂຸເກັບຂອງທີ່ເປັນສັດຕາຫະກາລິກໄວ້ສັນພຽງແຕ່ອາທິດໜຶ່ງ

໔. ພິກຂຸສັນຂອງທີ່ເປັນຍາວະຊີວິກເມື່ອມີເຫດຜົນສົມຄວນ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ສັນນິທິກາຣະກະສິກຂາບົດທີ ໗ ຈົບ**

# ໔. ໂພຊະນະວັກ

## ໑. ປະນີຕະໂພຊະນະສິກຂາບົດ

## ວ່າດ້ວຍການອອກປາກຂໍໂພຊະນະອັນປະນີດ

## ເລື້ອງພຣະສັບພັກຄີ

[໒໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ

"ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງອອກປາກຂໍໂພຊະນະອັນປະນີດມາເພື່ອກິນແລ້ວສັນນໍ ພັດຕາຫານທີ່ດີໃຜຈະບໍ່ພໍໃຈ ພັດຕາຫານແຊບໃຜຈະບໍ່ມັກນໍ

ພິກຂຸທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງອອກປາກຂໍໂພຊະນະອັນປະນີດມາເພື່ອກິນແລ້ວສັນນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານອອກປາກຂໍ ໂພຊະນະອັນປະນີດມາເພື່ອກິນແລ້ວສັນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງອອກປາກຂໍໂພຊະນະອັນ ປະນີດມາເພື່ອກິນແລ້ວສັນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ອອກປາກຂໍໂພຊະນະອັນປະນີດເຊັ່ນນີ້ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ປາ ຊີ້ນ ນົມສົດ ນົມສົ້ມ ມາເພື່ອກິນແລ້ວສັນ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະສັບພັກຄີ ຈົບ**

## ເລື້ອງພິກຂຸເປັນໄຂ້

[໔໕໗] ສະໄໝນັ້ນ ພິກຂຸທັງຫຼາຍເປັນໄຂ້ ພວກພິກຂຸຜູ້ມີໜ້າທີ່ສອບຖາມອາການໄຂ້ໄດ້ກ່າວກັບພວກພິກຂຸຜູ້ເປັນໄຂ້ດັ່ງນີ້ວ່າ "ທ່ານທັງຫຼາຍສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?"

ພວກພິກຂຸເຈັບໄຂ້ຕອບວ່າ "ເມື່ອກ່ອນພວກຂ້ານ້ອຍອອກປາກຂໍໂພຊະນະອັນປະນີດມາເພື່ອກິນແລ້ວສັນໄດ້ ຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂ້ານ້ອຍມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ແລ້ວ" ຈຶ່ງບໍ່ກ້າອອກປາກຂໍ ຈຶ່ງບໍ່ມີຄວາມຜາສຸກເລີຍ ຂ້ານ້ອຍ"

ພິກຂຸທັງຫຼາຍ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ຊົງອະນຸຍາດໃຫ້ພິກຂຸເປັນໄຂ້ອອກປາກຂໍໂພຊະນະອັນປະນີດໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຈັບໄຂ້ອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໘໕໙] ອັນໜຶ່ງ ພິກຂຸໃດບໍ່ເປັນໄຂ້ ອອກປາກຂໍໂພຊະນະອັນປະນີດເຊັ່ນນີ້ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ປາ ຊີ້ນ ນົມສົດ ນົມສົ້ມ ມາເພື່ອຕົນແລ້ວສັນ ຕ້ອງອາບັດປາຈິດຕີ

## ເລື່ອງພິກຂຸເປັນໄຂ້ ຈົບ
## ສິກຂາບົດວິພັງ

[໘໖໐] ຄຳວ່າ ໂພຊະນະອັນປະນີດ ຄວາມວ່າ ທີ່ຊື່ວ່າ ເນີຍໃສ ໄດ້ແກ່ ເນີຍໃສທີ່ເຮັດຈາກນ້ຳນົມງົວ ເນີຍໃສທີ່ເຮັດຈາກນ້ຳນົມແບ້ ເນີຍໃສທີ່ເຮັດຈາກນ້ຳນົມຄວາຍ ຫຼື ເນີຍໃສທີ່ເຮັດຈາກນ້ຳນົມສັດທີ່ມີຊີ້ນເປັນກັບປິຍະ

ທີ່ຊື່ວ່າ ເນີຍຂຸ້ນ ໄດ້ແກ່ ເນີຍຂຸ້ນທີ່ເຮັດຈາກນ້ຳນົມສັດເຫຼົ່ານັ້ນ

ທີ່ຊື່ວ່າ ນ້ຳມັນ ໄດ້ແກ່ ນ້ຳມັນທີ່ສະກັດຈາກເມັດງາ ນ້ຳມັນທີ່ສະກັດຈາກເມັດພັນ ຜັກກາດ ນ້ຳມັນທີ່ສະກັດຈາກເມັດໝາກຊາງ ນ້ຳມັນທີ່ສະກັດຈາກເມັດທຸ່ງສາ ນ້ຳມັນທີ່ເຮັດຈາກສັດ

ທີ່ຊື່ວ່າ ນ້ຳເຜິ້ງ ໄດ່ແກ່ ນ້ຳຫວານຂອງໂຕເຜິ້ງ

ທີ່ຊື່ວ່າ ນ້ຳອ້ອຍ ໄດ້ແກ່ ນ້ຳຫວານທີ່ເກີດຈາກອ້ອຍ

ທີ່ຊື່ວ່າ ປາ ທ່ານກ່າວເຖິງສັດທີ່ຢູ່ໄປໃນນ້ຳ

ທີ່ຊື່ວ່າ ຊີ້ນ ໄດ້ແກ່ ຊີ້ນຂອງສັດບົກທີ່ມີຊີ້ນເປັນກັບປິຍະ

ທີ່ຊື່ວ່າ ນົມສົດ ໄດ້ແກ່ ນ້ຳນົມງົວ ນ້ຳນົມແບ້ ນ້ຳນົມຄວາຍ ຫຼື ນ້ຳນົມຂອງສັດ ທີ່ມີຊີ້ນເປັນກັບປິຍະ

ທີ່ຊື່ວ່າ ນົມສົ້ມ ໄດ້ແກ່ ນົມສົ້ມທີ່ເຮັດຈາກນ້ຳນົມຂອງສັດເຫຼົ່ານັ້ນ

ຄຳວ່າ ອັນໜຶ່ງ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ฯລฯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ໂພຊະນະອັນປະນີດເຊັ່ນນີ້ ໄດ້ແກ່ ໂພຊະນະອັນປະນີດດັ່ງກ່າວ

ທີ່ຊື່ວ່າ ບໍ່ເປັນໄຂ້ ຄື ຜູ້ທີ່ເວັ້ນໂພຊະນະອັນປະນີດ ກໍເປັນຢູ່ຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ທີ່ເວັ້ນໂພຊະນະອັນປະນີດ ຈະບໍ່ມີຄວາມຜາສຸກ
ພິກຂຸບໍ່ເປັນໄຂ້ອອກປາກຂໍມາເພື່ອຕົນ ຕ້ອງອາບັດທຸກກົດທຸກ ໆ ຄັ້ງທີ່ພະຍາຍາມ
ພິກຂຸຮັບໄວ້ດ້ວຍຕັ້ງໃຈວ່າ ຈະສັນຂອງທີ່ໄດ້ ຕ້ອງອາບັດທຸກກົດ
ພິກຂຸສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

## ຕິກະປາຈິດຕີ

[໔໖໑] ບໍ່ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ອອກປາກຂໍໂພຊະນະອັນປະນີດ ມາເພື່ອຕົນແລ້ວສັນ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸບໍ່ແນ່ໃຈ ອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໖໔] ໑. ພິກຂຸເປັນໄຂ້
໔. ພິກຂຸເປັນໄຂ້ອອກປາກຂໍມາແລ້ວຫາຍເປັນໄຂ້ຈຶ່ງສັນ
໓. ພິກຂຸສັນໂພຊະນະທີ່ເຫຼືອຂອງພິກຂຸເຈັບໄຂ້
໔. ພິກຂຸອອກປາກຂໍຈາກຍາດ
໕. ພິກຂຸອອກປາກຂໍຈາກຄົນປະວາຣະນາ
໖. ພິກຂຸອອກປາກຂໍເພື່ອພິກຂຸອື່ນ
໗. ພິກຂຸຈ່າຍມາດ້ວຍຊັບຂອງຕົນ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ປະນີຕະໂພຊະນະສິກຂາບົດທີ ໙ ຈົບ**

# ໔. ໂພຊະນະວັກ

## ໑໐. ທັນຕະໂປນະສິກຂາບົດ

## ວ່າດ້ວຍການຮັບປະເຄນອາຫານນອກຈາກນ້ຳແລະໄມ້ຖູແຂ້ວ

### ເລື່ອງພິກຂຸອົງໜຶ່ງ

[໔໙໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພິກຂຸອົງໜຶ່ງຜູ້ຖືວ່າທຸກຢ່າງເປັນຂອງບັງສຸກຸນ ພັກຢູ່ໃນປ່າຊ້າ ທ່ານບໍ່ປາຖະໜາຮັບພັດຕາຫານທີ່ພວກຊາວບ້ານຖວາຍ ທ່ຽວຖືເອົາເຄື່ອງບູຊາຕາມປ່າຊ້າ ເຫງົ້າໄມ້ ຫຼື ທໍຣະນີປະຕູມາສັນ

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ້ຈຶ່ງຖືເອົາເຄື່ອງບູຊາຂອງພວກເຮົາໄປສັນເອງແນວນັ້ນນໍ?"

ພວກພິກຂຸໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງກືນກິນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍແນວນັ້ນນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງ ຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານສັນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍລົງໄປແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງກືນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍລົງໄປນໍ? ໂມຄະບຸຣຸດ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໄສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍ ພິກຂຸໃດ ກືນກິນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍລົງໄປ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື່ອງພິກຂຸອົງໜຶ່ງ ຈົບ**

## ຊົງອະນຸຍາດນ້ຳແລະໄມ້ຖູແຂ້ວ

[໔໙໔] ສະໄໝນັ້ນ ພິກຂຸທັງຫຼາຍມີຄວາມຢຳເກງ ບໍ່ຍອມຈັບນ້ຳ ແລະ ໄມ້ຊຳຣະແຂ້ວໃຊ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖືເອົານ້ຳ ແລະ ໄມ້ຖູແຂ້ວມາໃຊ້ເອງໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໔໙໕] ອັນໜຶ່ງ ພິກຂຸໃດ ກືນກິນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍລົງໄປ ນອກຈາກນ້ຳແລະໄມ້ຖູແຂ້ວ ຕ້ອງອາບັດປາຈິດຕີ

## ສິກຂາບົດວິພັງ

[໔໙໖] ຄຳວ່າ ອັນໜຶ່ງ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ໗ລ໗ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ທີ່ຍັງບໍ່ມີຜູ້ຖວາຍ ທ່ານກ່າວເຖິງຂອງທີ່ຍັງບໍ່ໄດ້ຮັບປະເຄນ

## ລັກສະນະການຮັບປະເຄນ

ທີ່ຊື່ວ່າ ມີຜູ້ຖວາຍ ຄື (໑) ເຂົາຖວາຍດ້ວຍກາຍ ດ້ວຍຂອງທີ່ເນື່ອງດ້ວຍກາຍ ຫຼື ດ້ວຍການໂຍນໃຫ້ (໒) ເຂົາຢູ່ໃນຫັດຖະບາດ (໓) ພິກຂຸຮັບປະເຄນດ້ວຍກາຍ ຫຼື ດ້ວຍຂອງເນື່ອງດ້ວຍກາຍ ນີ້ຊື່ວ່າ ມີຜູ້ຖວາຍ

ທີ່ຊື່ວ່າ ອາຫານ ໄດ້ແກ່ ຂອງທີ່ສັນໄດ້ ຍົກເວັ້ນນ້ຳ ແລະ ໄມ້ຖູແຂ້ວ ນີ້ຊື່ວ່າ ອາຫານ

ຄຳວ່າ ນອກຈາກນ້ຳ ແລະ ໄມ້ຖູແຂ້ວ ຄື ຍົກເວັ້ນນ້ຳແລະໄມ້ຖູແຂ້ວ

ພິກຂຸຖືເອົາດ້ວຍຕັ້ງໃຈວ່າ ຈະຫຍ້ຳ ຈະສັນ ຕ້ອງອາບັດທຸກກົດ

ພິກຂຸສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

## ຕິກະປາຈິດຕີ

[໔໙໗] ອາຫານທີ່ຍັງບໍ່ໄດ້ຮັບປະເຄນ ພິກຂຸສຳຄັນວ່າຍັງບໍ່ຮັບປະເຄນ ສັນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍ ນອກຈາກນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດປາຈິດຕີ

ອາຫານທີ່ຍັງບໍ່ໄດ້ຮັບປະເຄນ ພິກຂຸບໍ່ແນ່ໃຈ ສັນອາຫານທີ່ບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍ ນອກຈາກນ້ຳ ແລະ ໄມ້ຖູແຂ້ວ ຕ້ອງປາຈິດຕິ

ອາຫານທີ່ຍັງບໍ່ໄດ້ຮັບປະເຄນ ພິກຂຸສຳຄັນວ່າຮັບປະເຄນ ສັນອາຫານທີ່ບໍ່ມີຜູ້ຖວາຍ ນອກຈາກນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດປາຈິດຕິ

## ທຸກະທຸກກົດ

ອາຫານທີ່ຮັບປະເຄນ ພິກຂຸສຳຄັນວ່າຍັງບໍ່ໄດ້ຮັບປະເຄນ ຕ້ອງອາບັດທຸກກົດ

ອາຫານທີ່ຮັບປະເຄນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອາຫານທີ່ຮັບປະເຄນ ພິກຂຸສຳຄັນວ່າຮັບປະເຄນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໒໖໗] ໑. ພິກຂຸໃຊ້ນ້ຳ ແລະ ໄມ້ຖູແຂ້ວ

໒. ພິກຂຸຈັບຢາມະຫາວິກັດ ໔ ສັນເອງ ເມື່ອມີເຫດຜົນທີ່ສົມຄວນ ໃນເມື່ອບໍ່ມີກັບປິຍະການະກະຖວາຍ

໓. ພິກຂຸວິກົນຈະລິດ

໔. ພິກຂຸຕົ້ນບັນຍັດ

**ທັນຕະໂປນະສິກຂາບົດທີ ໑໐ ຈົບ**

**ໂພຊະນະວັກທີ ໔ ຈົບ**

## ລວມສິກຂາບົດທີ່ມີໃນໂພຊະນະວັກ

**ໂພຊະນະວັກມີ ໑໐ ສິກຂາບົດ ຄື**

| | |
|---|---|
| ໑. ອາວະສະຖະປິນດະສິກຂາບົດ | ວ່າດ້ວຍການສັນພັດຕາຫານໃນທີ່ພັກແຮມ |
| ໒. ຄະນະໂພຊະນະສິກຂາບົດ | ວ່າດ້ວຍການສັນຄະນະໂພຊະນະ |
| ໓. ປະຣຳປະຣະໂພຊະນະສິກຂາບົດ | ວ່າດ້ວຍການສັນປະຣຳປະຣະໂພຊະນະ |
| ໔. ການະມາຕຸສິກຂາບົດ | ວ່າດ້ວຍມານດາຂອງນາງການາ |
| ໕. ປະຖົມປະວາຣະນາສິກຂາບົດ | ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໑ |
| ໖. ທຸຕິຍະປະວາຣະນາສິກຂາບົດ | ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໒ |

໗. ວິກາລະໂພຊະນະສິກຂາບົດ ວ່າດ້ວຍການສັນໂພຊະນະໃນເວລາວິການ
໘. ສັນນິທິກາຣະກະສິກຂາບົດ ວ່າດ້ວຍການສະສົມໂພຊະນະ
໙. ປະນີຕະໂພຊະນະສິກຂາບົດ ວ່າດ້ວຍການອອກປາກຂໍໂພຊະນະອັນປະນີດ
໑໐. ທັນຕະໂປນະສິກຂາບົດ ວ່າດ້ວຍການຮັບປະເຄນອາຫານນອກຈາກນ້ຳແລະໄມ້ຖູແຂ້ວ

# ໕. ອະເຈລະກະວັກ

## ໝວດວ່າດ້ວຍນັກບວດເປືອຍ

### ໑. ອະເຈລະກະສິກຂາບົດ

### ວ່າດ້ວຍນັກບວດເປືອຍ

### ເລື້ອງພຣະອານົນ

[໔໙໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພຣະສົງມີຂອງຫຍໍ້າເຫຼືອເຟືອ ບັດນັ້ນ ທ່ານພຣະອານົນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງແຈກເຂົ້າໜົມເປັນທານແກ່ພວກຄົນກິນເດື່ອນ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວຈັດພວກຄົນກິນເດື່ອນໃຫ້ນັ່ງຕາມລຳດັບ ແຈກເຂົ້າໜົມໃຫ້ຄົນລະຕ່ອນ ແຈກເຂົ້າໜົມໃຫ້ປະຣິພາຊິກາຄົນໜຶ່ງ ໒ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ

ພວກປະຣິພາຊິກາທີ່ຢູ່ໃກ້ ໆ ໄດ້ກ່າວກັບປະຣິພາຊິການັ້ນດັ່ງນີ້ວ່າ "ສະມະນະອົງນັ້ນເປັນຄູ່ຮັກຂອງທ່ານແມ່ນບໍ?"

ປະຣິພາຊິການັ້ນຕອບວ່າ "ສະມະນະອົງນັ້ນບໍ່ແມ່ນຄູ່ຮັກຂອງເຮົາ ທ່ານແຈກໃຫ້ ໒ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ"

ແມ່ນຄັ້ງທີ ໒ ທ່ານພຣະອານົນກໍແຈກເຂົ້າໜົມໃຫ້ປະຣິພາຊິການັ້ນ ໒ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ ພວກປະຣິພາຊິກາທີ່ຢູ່ໃກ້ ໆ ໄດ້ກ່າວກັບປະຣິພາຊິການັ້ນ ດັ່ງນີ້ວ່າ "ສະມະນະອົງນັ້ນເປັນຄູ່ຮັກຂອງທ່ານແມ່ນບໍ?"

ປະຣິພາຊິການັ້ນຕອບວ່າ "ສະມະນະອົງນັ້ນບໍ່ແມ່ນຄູ່ຮັກຂອງເຮົາ ທ່ານແຈກໃຫ້ ໔ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ"

ແມ່ນຄັ້ງທີ ໓ ທ່ານພຣະອານົນກໍແຈກເຂົ້າໜົມໃຫ້ປະຣິພາຊິການັ້ນ ໔ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ ພວກປະຣິພາຊິກາທີ່ຢູ່ໃກ້ ໆ ໄດ້ກ່າວກັບປະຣິພາຊິການັ້ນດັ່ງນີ້ວ່າ "ສະມະນະອົງນັ້ນເປັນຄູ່ຮັກຂອງທ່ານແມ່ນບໍ?"

ປະຣິພາຊິການັ້ນຕອບວ່າ "ສະມະນະອົງນັ້ນ ບໍ່ແມ່ນຄູ່ຮັກຂອງເຮົາ ທ່ານແຈກໃຫ້ ໔ ຕ່ອນດ້ວຍສຳຄັນວ່າເປັນຕ່ອນດຽວ"

ພວກປະຣິພາຊິກາເຫຼົ່ານັ້ນໂຕ້ຖຽງກັນວ່າ "ເປັນຄູ່ຮັກ ຫຼື ບໍ່ແມ່ນຄູ່ຮັກ"

ອາຊີວົກອີກຄົນໜຶ່ງໄດ້ເຂົ້າໄປຮອດທີ່ລ້ຽງອາຫານ ພິກຂຸອົງໜຶ່ງເປື້ອນເຂົ້າກັບເນີຍໃສຈຳນວນຫຼາຍ ໄດ້ແຈກເຂົ້າກ້ອນໃຫຍ່ແກ່ອາຊີວົກນັ້ນ ເມື່ອແລ້ວ ອາຊີວົກນັ້ນໄດ້ຖືກ້ອນເຂົ້ານັ້ນໄປອາຊີວົກອີກຄົນໜຶ່ງໄດ້ກ່າວກັບອາຊີວົກນັ້ນດັ່ງນີ້ວ່າ "ທ່ານໄດ້ກ້ອນເຂົ້ານີ້ມາຈາກທີ່ໃດ?"

ອາຊີວົກນັ້ນຕອບວ່າ "ຂ້າພະເຈົ້າໄດ້ມາຈາກທີ່ລ້ຽງອາຫານຂອງສະມະນະໂລ້ນໂຄດົມ"

ພວກອຸປາສົກໄດ້ຍິນອາຊີວົກເຫຼົ່ານັ້ນສົນທະນາກັນ ລຳດັບນັ້ນ ອຸປາສົກເຫຼົ່ານັ້ນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ອຸປາສົກເຫຼົ່ານັ້ນຜູ້ນັ່ງໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພວກເດຍຣະຖີເຫຼົ່ານີ້ຕ້ອງການຕິຕຽນພຣະພຸດຕ້ອງການຕິຕຽນພຣະທຳ ຕ້ອງການຕິຕຽນພຣະສົງ ຂໍປະທານວະໂຣກາດດ້ວຍເທີ້ນ ຂ້ານ້ອຍ ຂໍໃຫ້ຄູບາທັງຫຼາຍໂຜດຢ່າໃຫ້ສິ່ງຂອງອັນໃດແກ່ພວກເດຍຣະຖີດ້ວຍມືຕົນເອງເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຊີ້ແຈ່ງໃຫ້ອຸປາສົກເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ຈາກນັ້ນ ອຸປາສົກເຫຼົ່ານັ້ນເຊິ່ງພຣະຜູ້ມີພຣະພາກເຈົ້າໄດ້ຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວໄດ້ລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ສົມຄວນໃຫ້ເໝາະສົມກັບເລື້ອງນັ້ນ ແລ້ວຮັບສັ່ງກັບພິກ

ຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍ ໂດຍອາໄສອໍານາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
ຯລຯ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໔໗໐] ກໍ ພິກຂຸໃດ ໃຫ້ຂອງຫຍ້ຳ ຫຼື ຂອງສັນແກ່ອະເຈລະກະ ປະຣິພາຊົກ ຫຼື ປະຣິພາຊິກາດ້ວຍມືຂອງຕົນ ຕ້ອງອາບັດປາຈິດຕິ

### ເລື້ອງພຣະອານົນ ຈົບ

## ສິກຂາບົດວິພັງ

[໔໗໑] ຄໍາວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄໍາວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ອະເຈລະກະ ໄດ້ແກ່ ຊີເປືອຍຄົນໃດຄົນໜຶ່ງຢູ່ໃນລັດທິປະຣິພາຊົກ

ທີ່ຊື່ວ່າ ປະຣິພາຊົກ ໄດ້ແກ່ ນັກບວດຄົນໃດຄົນໜຶ່ງຢູ່ໃນລັດທິປະຣິພາຊົກ ຍົກເວັ້ນພິກຂຸແລະສາມະເນນ

ທີ່ຊື່ວ່າ ປະຣິພາຊິກາ ໄດ້ແກ່ ນັກບວດຍິງຄົນໃດຄົນໜຶ່ງນັບເນື່ອງໃນລັດທິປະຣິພາຊົກ ຍົກເວັ້ນພິກຂຸນີ ສິກຂະມານາ ແລະ ສາມະເນຣີ

ທີ່ຊື່ວ່າ ຂອງຫຍ້ຳ ຄື ຍົກເວັ້ນໂພຊະນະ ໕ ຢ່າງ ນ້ຳແລະໄມ້ຖູແຂ້ວ ນອກນັ້ນຊື່ວ່າ ຂອງຫຍ້ຳ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຢ່າງຄື ເຂົ້າສຸກ ເຂົ້າໜົມສົດ ເຂົ້າຕູ ປາ ຊີ້ນ

ຄຳວ່າ ໃຫ້ ຄື ພິກຂຸໃຫ້ດ້ວຍກາຍ ດ້ວຍຂອງເນື່ອງດ້ວຍກາຍ ຫຼື ດ້ວຍໂຍນໃຫ້ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໔໗໒] ເດຍຣະຖີ ພິກຂຸສຳຄັນວ່າເປັນເດຍຣະຖີ ໃຫ້ຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນ ຕ້ອງອາບັດປາຈິດຕີ

ເດຍຣະຖີ ພິກຂຸບໍ່ແນ່ໃຈ ໃຫ້ຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນ ຕ້ອງອາບັດປາຈິດຕີ

ເດຍຣະຖີ ພິກຂຸສຳຄັນວ່າບໍ່ແມ່ນເດຍຣະຖີໃຫ້ຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ພິກຂຸໃຫ້ນ້ຳແລະໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

ບໍ່ແມ່ນເດຍຣະຖີ ພິກຂຸສຳຄັນວ່າເປັນເດຍຣະຖີ ຕ້ອງອາບັດທຸກກົດ

ບໍ່ແມ່ນເດຍຣະຖີ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນເດຍຣະຖີ ພິກຂຸສຳຄັນວ່າບໍ່ແມ່ນເດຍຣະຖີ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໓] ໑. ພິກຂຸໃຊ້ໃຫ້ຜູ້ອື່ນໃຫ້ ບໍ່ໄດ້ໃຫ້ເອງ

໒. ພິກຂຸວາງໃຫ້

໓. ພິກຂຸໃຫ້ຂອງທາພາຍນອກ

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ອະເຈລະກະສິກຂາບົດທີ ໑ ຈົບ**

# ៥. ອະເຈລະກະວັກ

## ៨. ອຸຍໂຍຊະນະສິກຂາບົດ
## ວ່າດ້ວຍການສົ່ງກັບ
## ເລື້ອງພຣະອຸປະນັນທະສາກະຍະບຸດ

[໘໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ກ່າວຊັກຊວນສັດທິວິຫາຣິກຂອງພຣະອ້າຍວ່າ "ທ່ານຈົ່ງມາເທີ້ນ ພວກເຮົາຈະໄປບິນທະບາດໃນໝູ່ບ້ານ" ແລ້ວບໍ່ໄດ້ໃຫ້ທາຍົກຖວາຍອັນໃດແກ່ທ່ານ ນິມົນກັບດ້ວຍກ່າວວ່າ "ທ່ານຈົ່ງກັບໄປເທີ້ນ ການເວົ້າ ຫຼື ນັ່ງກັບທ່ານ ບໍ່ເຮັດໃຫ້ເຮົາສະບາຍ ເຮົາເວົ້າ ຫຼື ນັ່ງຄົນດຽວສະບາຍກວ່າ"

ເມື່ອໃກ້ເວລາສັນແລ້ວ ພິກຂຸນັ້ນບໍ່ສາມາດຫາບິນທະບາດສັນໄດ້ທັນເວລາ ແມ່ນໄປຮັບພັດຕາຫານທີ່ເຂົາແຈກໃນໂຮງສັນກໍບໍ່ທັນ ຈຶ່ງບໍ່ໄດ້ສັນພັດຕາຫານ ເມື່ອພິກຂຸນັ້ນໄປເຖິງອາຣາມຈຶ່ງເລົ່າເລື່ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດກ່າວຊັກຊວນພິກຂຸວ່າ ທ່ານຈົ່ງມາເທີ້ນ ພວກເຮົາຈະໄປບິນທະບາດໃນໝູ່ບ້ານ ແລ້ວບໍ່ໄດ້ໃຫ້ທາຍົກຖວາຍອັນໃດແກ່ທ່ານ ແລ້ວນິມົນໄລ່ກັບແນວນັ້ນນໍ" ເມື່ອພິກຂຸ ທັງຫຼາຍຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານກ່າວຊັກຊວນພິກຂຸວ່າ ທ່ານຈົ່ງມາເທີ້ນ ພວກເຮົາຈະໄປບິນທະບາດໃນໝູ່ບ້ານ ແລ້ວບໍ່ໄດ້ໃຫ້ທາຍົກຖວາຍອັນໃດແກ່ທ່ານ ແລ້ວນິມົນໃຫ້ກັບ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງກ່າວຊັກຊວນພິກຂຸວ່າ ທ່ານຈົ່ງມາເທີ້ນ ພວກເຮົາຈະໄປບິນທະບາດໃນໝູ່ບ້ານແລ້ວບໍ່ໄດ້ໃຫ້ທາຍົກຖວາຍອັນໃດແກ່ທ່ານແລ້ວນິມົນໃຫ້ກັບນໍ? ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໕] ກໍ ພິກຂຸໃດ ກ່າວຊັກຊວນພິກຂຸວ່າ "ທ່ານຈົ່ງມາເທີ້ນ ພວກເຮົາຈະໄປບິນທະບາດໃນໝູ່ບ້ານ ຫຼື ໃນນິຄົມ" ແລ້ວໃຫ້ທາຍົກຖວາຍ ຫຼື ບໍ່ໃຫ້ທາຍົກຖວາຍແກ່ທ່ານແລ້ວນິມົນກັບດ້ວຍກ່າວວ່າ "ທ່ານຈົ່ງກັບໄປເທີ້ນ ການເວົ້າ ຫຼື ນັ່ງກັບທ່ານບໍ່ເຮັດໃຫ້ເຮົາສະບາຍ ເຮົາເວົ້າ ຫຼື ນັ່ງຄົນດຽວສະບາຍກວ່າ" ມີເຫດຜົນພຽງເທົ່ານີ້ ບໍ່ມີອັນໃດອື່ນ ຕ້ອງອາບັດປາຈິດຕີ

### ເລື່ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໔໗໖] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໝາຍເຖິງ ພິກຂຸອົງອື່ນ

ຄຳວ່າ ທ່ານຈົ່ງມາເທີ້ນໆລໆໃນໝູ່ບ້ານ ຫຼື ໃນນິຄົມ ຄື ໝູ່ບ້ານກໍດີ ນິຄົມກໍດີ ເມືອງກໍດີ ຊື່ວ່າໝູ່ບ້ານ ແລະ ນິຄົມ

ຄຳວ່າ ໃຫ້ທາຍົກຖວາຍແກ່ທ່ານ ຄື ໃຫ້ເຂົາຖວາຍເຂົ້າຕົ້ມ ເຂົ້າສຸກຂອງຫຍໍ້າຫຼືຂອງສັນ

ຄຳວ່າ ບໍ່ໃຫ້ທາຍົກຖວາຍ ຄື ບໍ່ໃຫ້ທາຍົກຖວາຍອັນໃດ ໆ

ຄຳວ່າ ນິມົນໃຫ້ກັບ ຄວາມວ່າ ພິກຂຸປາຖະໜາຈະເຮັດບໍ່ດີ ປາຖະໜາຈະຢອກຫຼິ້ນ ປາຖະໜາຈະນັ່ງໃນທີ່ລັບ ຫຼື ປາຖະໜາຈະປະພຶດອະນາຈານກັບມາຕຸຄາມ ກ່າວນິມົນກັບທ່ານຢ່າງນີ້ວ່າ "ທ່ານຈົ່ງກັບໄປເທີ້ນ ການເວົ້າ ຫຼື ນັ່ງກັບທ່ານບໍ່ເຮັດໃຫ້ເຮົາສະບາຍ ເຮົາເວົ້າ ຫຼື ນັ່ງຄົນດຽວສະບາຍກວ່າ" ຕ້ອງອາບັດທຸກກົດ ເມື່ອທ່ານໄປຈົນແນມບໍ່ເຫັນ ຫຼື ບໍ່ໄດ້ຍິນສຽງ ພິກຂຸອົງທີ່ນິມົນກັບຕ້ອງອາບັດທຸກກົດ ເມື່ອທ່ານໄປຈົນພົ້ນຈາກທີ່ນັ້ນ ຕ້ອງອາບັດປາຈິດຕີ

ຄຳວ່າ ມີເຫດຜົນພຽງເທົ່ານີ້ບໍ່ມີເຫດອື່ນ ຄວາມວ່າ ບໍ່ມີເຫດຜົນຢ່າງອື່ນເພື່ອສົ່ງໃຫ້ກັບ

## ບົດພາຊະນີ

## ຕິກະປາຈິດຕີ

[໔໗໗] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ນິມົນກັບ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ນິມົນກັບ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ນິມົນກັບ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸທຳທ່າຄຽດ ນິມົນກັບ ຕ້ອງອາບັດທຸກກົດ
ພິກຂຸນິມົນອະນຸປະສຳບັນກັບ ຕ້ອງອາບັດທຸກກົດ
ພິກຂຸທຳທ່າໂກດ ນິມົນກັບ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໙] ໑. ພິກຂຸນິມົນກັບດ້ວຍຄິດວ່າ ເຮົາສອງອົງສັນນຳກັນ ພັດຕາຫານຈະບໍ່ພໍ
໒. ພິກຂຸນິມົນກັບດ້ວຍຄິດວ່າ ອົງນັ້ນພົບຂອງມີຄ່າແລ້ວຈະເກີດຄວາມໂລບ
໓. ພິກຂຸນິມົນກັບດ້ວຍຄິດວ່າ ອົງນັ້ນເຫັນມາຕຸຄາມແລ້ວຈະເກີດຄວາມກຳໜັດ
໔. ພິກຂຸນິມົນກັບດ້ວຍສັ່ງວ່າ ທ່ານຈົ່ງນຳເຂົ້າຕົ້ມ ເຂົ້າສຸກ ຫຼື ຂອງຫຍໍ້າຂອງສັນໄປຖວາຍພິກຂຸເຈັບໄຂ້ ພິກຂຸຜູ້ຕົກຄ້າງຢູ່ ຫຼື ພິກຂຸຜູ້ເຝົ້າວິຫານ
໕. ພິກຂຸບໍ່ປະສົງຈະປະພຶດອະນາຈານແຕ່ມີທຸລະຈຳເປັນຈຶ່ງສົ່ງກັບ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ອຸຍໂຍຊະນະສິກຂາບົດທີ ໒ ຈົບ**

# ໕. ອະເຈລະກະວັກ

## ໓. ສະໂພຊະນະສິກຂາບົດ

## ວ່າດ້ວຍການເຂົ້າໄປແຊກແຊງໃນທີ່ທີ່ມີຄົນ ໒ ຄົນ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໔໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ໄປເຮືອນຂອງສະຫາຍແລ້ວໄດ້ນັ່ງໃນຫ້ອງນອນກັບພັນລະຍາຂອງສະຫາຍ ບັດນັ້ນ ສະ

ຫາຍນັ້ນໄດ້ເຂົ້າໄປຫາ ທ່ານພຣະອຸປະນັນທະສາກະຍະບຸດເຖິງອາສະນະ ເມື່ອເຖິງແລ້ວໄດ້ໄຫວ້ທ່ານພຣະອຸປະນັນທະສາກະຍະບຸດ ແລ້ວນັ່ງໃນທີ່ສົມຄວນ ສະຫາຍນັ້ນຜູ້ນັ່ງໃນທີ່ສົມຄວນແລ້ວໄດ້ກ່າວກັບພັນລະຍາດັ່ງນີ້ວ່າ "ທ່ານຈົ່ງຖວາຍພິກສາຫານໃຫ້ແດ່" ລຳດັບນັ້ນ ພັນລະຍາຂອງສະຫາຍນັ້ນໄດ້ຖວາຍພິກສາຫານແກ່ທ່ານອຸປະນັນທະສາກະຍະບຸດແລ້ວ

ຄັ້ງນັ້ນ ສະຫາຍນັ້ນໄດ້ກ່າວກັບທ່ານພຣະອຸປະນັນທະສາກະຍະບຸດດັ່ງນີ້ວ່າ "ນິມົນຄູບາກັບໄປເທີ້ນ ຂ້ານ້ອຍ ຍ້ອນໄດ້ຖວາຍພິກສາຫານໃຫ້ແລ້ວ"

ພັນລະຍາຂອງສະຫາຍນັ້ນກຳນົດຮູ້ວ່າສາມີຖືກຣາຄະກຸ້ມລຸມແລ້ວ ຈຶ່ງໄດ້ກ່າວກັບທ່ານພຣະອຸປະນັນທະສາກະຍະບຸດດັ່ງນີ້ວ່າ "ນິມົນຄູບານັ່ງຢູ່ກ່ອນ ຢ່າຟ້າວກັບ"

ແມ່ນຄັ້ງທີ ໒ ສະຫາຍນັ້ນ ຯລຯ

ແມ່ນຄັ້ງທີ ໓ ສະຫາຍນັ້ນໄດ້ກ່າວກັບທ່ານພຣະອຸປະນັນທະສາກະຍະບຸດດັ່ງນີ້ວ່າ "ນິມົນຄູບາກັບໄປເທີ້ນ ຂ້ານ້ອຍ ຍ້ອນໄດ້ຖວາຍພິກສາຫານໃຫ້ແລ້ວ"

ແມ່ນຄັ້ງທີ ໓ ພັນລະຍາຂອງສະຫາຍນັ້ນ ກໍໄດ້ກ່າວກັບທ່ານພຣະອຸປະນັນທະສາກະຍະບຸດ ດັ່ງນີ້ວ່າ "ນິມົນຄູບານັ່ງຢູ່ກ່ອນ ຢ່າຟ້າວກັບ"

ຄັ້ງນັ້ນ ສະຫາຍຂອງທ່ານພຣະອຸປະນັນທະສາກະຍະບຸດ ໄດ້ອອກໄປທ່ຽວຟ້ອງພິກຂຸທັງຫຼາຍວ່າ "ພຣະອຸປະນັນທະສາກະຍະບຸດອົງນີ້ ເປັນຫຍັງຈຶ່ງນັ່ງໃນຫ້ອງນອນກັບພັນລະຍາຂອງຂ້າພະເຈົ້າ ຂ້າພະເຈົ້ານິມົນໃຫ້ທ່ານກັບກໍບໍ່ຍອມກັບ ພວກຂ້າພະເຈົ້າມີກິດຫຼາຍ ມີວຽກທີ່ຕ້ອງເຮັດຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດ ຈຶ່ງເຂົ້ານັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນຢູ່ນໍ?" ເມື່ອພິກຂຸທັງຫຼາຍ ຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໘໐] ກໍ ພິກຂຸໃດ ເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນ ຕ້ອງອາບັດປາຈິດຕິ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໔໘໑] ຄຳວ່າ ກໍຫລໍໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຫລໍໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ສະກຸນທີ່ຊື່ວ່າ ມີຄົນ ໒ ຄົນ ຄື ສະຕີກັບບຸຣຸດຢູ່ນຳກັນ ສະຕີແລະບຸຣຸດຍັງບໍ່ແຍກອອກຈາກກັນ ທັງ ໒ ຄົນຍັງບໍ່ປາສະຈາກຣາຄະ

ຄຳວ່າ ເຂົ້າໄປແຊກແຊງ ຄື ເຂົ້າໄປໃນເວລາທີ່ເຂົາເຈົ້າກຳລັງຢູ່ນຳກັນຕັ້ງແຕ່ ໒ ຄົນຂຶ້ນໄປ

ຄຳວ່າ ນັ່ງ ຄວາມວ່າ ໃນເຮືອນໃຫຍ່ ພິກຂຸນັ່ງລະຫັດຖະບາດບານປະຕູ ຕ້ອງອາບັດປາຈິດຕິ

ໃນເຮືອນນ້ອຍ ພິກຂຸນັ່ງຢູ່ກາງຫ້ອງນອນ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

## ຕິກະປາຈິດຕິ

[໔໘໒] ຫ້ອງນອນ ພິກຂຸສຳຄັນວ່າເປັນຫ້ອງນອນ ເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນ ຕ້ອງອາບັດປາຈິດຕິ

ຫ້ອງນອນ ພິກຂຸບໍ່ແນ່ໃຈ ເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນ ຕ້ອງອາບັດປາຈິດຕິ

ຫ້ອງນອນ ພິກຂຸສຳຄັນວ່າບໍ່ແມ່ນຫ້ອງນອນ ເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີ ຄົນ ໒ ຄົນ ຕ້ອງອາບັດປາຈິດຕິ

## ທຸກະທຸກກົດ

ບໍ່ແມ່ນຫ້ອງນອນ ພິກຂຸສຳຄັນວ່າເປັນຫ້ອງນອນ ຕ້ອງອາບັດທຸກກົດ

ບໍ່ແມ່ນຫ້ອງນອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຫ້ອງນອນ ພິກຂຸສຳຄັນວ່າບໍ່ແມ່ນຫ້ອງນອນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໘໓] ໑. ພິກຂຸນັ່ງໃນເຮືອນໃຫຍ່ຫ່າງຈາກບານປະຕູບໍ່ເກີນຫັດຖະບາດ
໒. ພິກຂຸນັ່ງໃນເຮືອນນ້ອຍບໍ່ລ້ຳສູນກາງຫ້ອງນອນ
໓. ພິກຂຸມີເພື່ອນຢູ່ດ້ວຍ
໔. ພິກຂຸນັ່ງໃນເຮືອນທີ່ຄົນທັງສອງອອກໄປແລ້ວ
໕. ພິກຂຸນັ່ງໃນເຮືອນທີ່ຄົນທັງສອງສວ່າງຈາກຣາຄະ
໖. ພິກຂຸນັ່ງໃນທີ່ບໍ່ແມ່ນຫ້ອງນອນ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສະໂພຊະນະສິກຂາບົດທີ ໓ ຈົບ**

# ໕. ອະເຈລະກະວັກ

## ໔. ຣະໂຫປະຕິດສັນນະສິກຂາບົດ

### ວ່າດ້ວຍການນັ່ງໃນທີ່ລັບມີສິ່ງກຳບັງ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໔໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ໄປເຮືອນຂອງສະຫາຍແລ້ວ ໄດ້ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບພັນລະຍາຂອງສະຫາຍ

ຄັ້ງນັ້ນ ສະຫາຍນັ້ນໄດ້ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸປະນັນທະສາກະຍະບຸດ ຈຶ່ງນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບພັນລະຍາຂອງຂ້າພະເຈົ້າແນວນີ້ນໍ?"

ພິກຂຸທັງຫຼາຍ ໄດ້ຍິນສະຫາຍຂອງທ່ານພຣະອຸປະນັນທະສາກະຍະບຸດນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດ ຈຶ່ງນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບມາຕຸຄາມນໍ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບມາຕຸຄາມ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບມາຕຸຄາມນໍ? ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໕] ກໍ ພິກຂຸໃດ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບມາຕຸຄາມ ຕ້ອງອາບັດປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໔໗໖] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ຍິງມະນຸດນັ້ນໂດຍທີ່ສຸດແມ່ນນັບຮອດເດັກຍິງເຊິ່ງເກີດໃນວັນນັ້ນ ແມ່ຍິງຜູ້ໃຫຍ່ກວ່ານີ້ບໍ່ຕ້ອງເວົ້າຮອດ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ທີ່ຊື່ວ່າ ທີ່ລັບ ໄດ້ແກ່ ທີ່ລັບຕາ ແລະ ທີ່ລັບຫູ

ທີ່ຊື່ວ່າ ທີ່ລັບຕາ ໝາຍເຖິງ ສະຖານທີ່ເຊິ່ງເມື່ອບຸກຄົນກະພິບຕາ ຍັກຄິ້ວ ຫຼື ຍືດຄໍຂຶ້ນຜູ້ໃດກໍບໍ່ສາມາດແນມເຫັນໄດ້

ທີ່ຊື່ວ່າ ທີ່ລັບຫູ ໝາຍເຖິງ ທີ່ເຊິ່ງບໍ່ມີໃຜສາມາດຈະໄດ້ຍິນຄຳເວົ້າທີ່ໂອ້ລົມກັນຕາມປົກກະຕິໄດ້

ອາສະນະທີ່ຊື່ວ່າ ທີ່ກຳບັງ ຄື ອາສະນະທີ່ກຳບັງດ້ວຍຝາ ບານປະຕູ ສາດລຳແພນ ມ່ານ ຕົ້ນໄມ້ ເສົາ ຢ່າງໃດຢ່າງໜຶ່ງ

ຄຳວ່າ ນັ່ງ ໝາຍຄວາມວ່າ ເມື່ອມາຕຸຄາມນັ່ງ ພິກຂຸນັ່ງໃກ້ ຫຼື ນອນໃກ້ ຕ້ອງອາບັດປາຈິດຕີ

ເມື່ອພິກຂຸນັ່ງ ມາຕຸຄາມນັ່ງໃກ້ ຫຼື ນອນໃກ້ ພິກຂຸຕ້ອງອາບັດປາຈິດຕີ

ທັງພິກຂຸ ແລະ ມາຕຸຄາມນັ່ງ ຫຼື ນອນ ພິກຂຸຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໔໗໗] ມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸບໍ່ແນ່ໃຈ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ນັ່ງເທິງອາສະນະທີ່ກຳບັງໃນທີ່ລັບ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ພິກຂຸນັ່ງເທິງອາສະນະທີ່ກຳບັງໃນທີ່ລັບກັບນາງຍັກ ນາງເຜດ ບັນເດາະ ຫຼື ສັດເດຍຣັດສານມີກາຍເປັນມະນຸດຜູ້ຍິງ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໘] ໑. ພິກຂຸນັ່ງໃນທີ່ທີ່ມີບຸຣຸດຜູ້ຮູ້ຄວາມຢູ່ເປັນເພື່ອນ

໒. ພິກຂຸຢືນບໍ່ໄດ້ນັ່ງ

໓. ພິກຂຸບໍ່ໄດ້ເຈຕະນາໃຫ້ເປັນທີ່ລັບ

໔. ພິກຂຸນັ່ງຄິດເລື້ອງອື່ນ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ຣະໂຫປະຕິດສັນນະສິກຂາບົດທີ ໔ ຈົບ**

# ໕. ອະເຈລະກະວັກ

## ໕. ຣະໂຫນິສັດຊະສິກຂາບົດ

### ວ່າດ້ວຍການນັ່ງໃນທີ່ລັບ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໔໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ໄປເຮືອນຂອງສະຫາຍແລ້ວໄດ້ນັ່ງໃນທີ່ລັບກັບພັນລະຍາຂອງສະຫາຍນັ້ນສອງຕໍ່ສອງ

ຄັ້ງນັ້ນ ສະຫາຍນັ້ນໄດ້ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸປະນັນທະສາກະຍະບຸດຈຶ່ງນັ່ງໃນທີ່ລັບກັບພັນລະຍາຂອງຂ້າພະເຈົ້າສອງຕໍ່ສອງແນວນີ້ນໍ?"

ພິກຂຸທັງຫຼາຍ ໄດ້ຍິນສະຫາຍຂອງທ່ານພຣະອຸປະນັນທະສາກະຍະບຸດນັ້ນຕຳໜິປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດ ຈຶ່ງນັ່ງໃນທີ່ລັບກັບມາຕຸຄາມສອງຕໍ່ສອງນໍ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານນັ່ງໃນທີ່ລັບກັບ ມາຕຸຄາມສອງຕໍ່ສອງ ແມ່ນບໍ?" ທ່ານພຣະອຸປະນັນທະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງນັ່ງໃນທີ່ລັບກັບມາຕຸຄາມສອງຕໍ່ສອງນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔໘໐] ກໍ ພິກຂຸໃດ ນັ່ງໃນທີ່ລັບກັບມາຕຸຄາມສອງຕໍ່ສອງ ຕ້ອງອາບັດປາຈິດຕີ

**ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ**

## ສິກຂາບົດວິພັງ

[໔໙໑] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນຍິງທີ່ຮູ້ດຽງສາ ສາມາດເຂົ້າໃຈຄຳເວົ້າທີ່ເປັນສຸພາສິດ ທຸບພາສິດ ຄຳຫຍາບແລະຄຳສຸພາບ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ໄດ້ແກ່ ພິກຂຸກັບມາຕຸຄາມ

ທີ່ຊື່ວ່າ ທີ່ລັບ ໄດ້ແກ່ ທີ່ລັບຕາ ແລະ ທີ່ລັບຫູ

ທີ່ຊື່ວ່າ ທີ່ລັບຕາ ໝາຍເຖິງ ສະຖານທີ່ເຊິ່ງເມື່ອບຸກຄົນກະພິບຕາ ຍັກຄິ້ວ ຫຼື ຍືດຄໍຂຶ້ນຜູ້ໃດກໍບໍ່ສາມາດເຫັນໄດ້

ທີ່ຊື່ວ່າ ທີ່ລັບຫູ ໝາຍເຖິງ ທີ່ເຊິ່ງບໍ່ມີໃຜສາມາດຈະໄດ້ຍິນຄຳເວົ້າທີ່ໂອ້ລົມກັນຕາມປົກກະຕິໄດ້

ຄຳວ່າ ນັ່ງ ໝາຍຄວາມວ່າ ເມື່ອມາຕຸຄາມນັ່ງ ພິກຂຸນັ່ງໃກ້ ຫຼື ນອນໃກ້ ຕ້ອງອາບັດປາຈິດຕີ

ເມື່ອພິກຂຸນັ່ງ ມາຕຸຄາມນັ່ງໃກ້ຫຼືນອນໃກ້ ພິກຂຸຕ້ອງອາບັດປາຈິດຕີ

ທັງພິກຂຸ ແລະ ມາຕຸຄາມນັ່ງ ຫຼື ນອນ ພິກຂຸຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໔໙໔] ມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ນັ່ງໃນທີ່ລັບສອງຕໍ່ສອງ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸບໍ່ແນ່ໃຈ ນັ່ງໃນທີ່ລັບສອງຕໍ່ສອງ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ນັ່ງໃນທີ່ລັບສອງຕໍ່ສອງ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸນັ່ງໃນທີ່ລັບກັບນາງຍັກ ນາງເຜດ ບັນເດາະ ຫຼື ສັດເດຍຣັດສານມີກາຍ

ເປັນມະນຸດຜູ້ຍິງສອງຕໍ່ສອງ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຕ້ອງອາບັດທຸກກົດ
ບໍ່ແມ່ນມາຕຸຄາມ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໓] ໑. ພິກຂຸນັ່ງໃນທີ່ທີ່ມີບຸຣຸດຜູ້ຮູ້ຄວາມຄົນໜຶ່ງຢູ່ເປັນເພື່ອນ
໒. ພິກຂຸຢືນບໍ່ໄດ້ນັ່ງ
໓. ພິກຂຸບໍ່ໄດ້ເຈາະຈົງໃຫ້ເປັນທີ່ລັບ
໔. ພິກຂຸນັ່ງຄິດເລື້ອງອື່ນ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ຣະໂຫນິສັດຊະສິກຂາບົດທີ ໔ ຈົບ**

# ໕. ອະເຈລະກະວັກ

## ໖. ຈາຣິດຕະສິກຂາບົດ

## ວ່າດ້ວຍການທ່ຽວສັນຈອນໄປ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໔໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ຕະກູນອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະ ບຸດນິມົນທ່ານສັນພັດຕາຫານ ແມ່ນພິກຂຸເຫຼົ່າອື່ນຕະກູນອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະບຸດກໍໄດ້ນິມົນສັນພັດຕາຫານ ຄັ້ງນັ້ນ ກ່ອນເຖິງເວລາສັນພັດຕາຫານ ທ່ານພຣະອຸປະນັນທະສາກະຍະບຸດເຂົ້າໄປຢ້ຽມຢາມຕະກູນທັງຫຼາຍ

ລຳດັບນັ້ນ ພິກຂຸທັງຫຼາຍໄດ້ກ່າວກັບທາຍົກເຫຼົ່ານັ້ນດັ່ງນີ້ວ່າ "ອຸປາສິກທັງຫຼາຍ ພວກທ່ານຈົ່ງຖວາຍພັດຕາຫານເທີ້ນ"

ພວກທາຍົກກ່າວວ່າ "ນິມົນຄູບາທັງຫຼາຍ ໂຜດຖ້າຈົນກວ່າພຣະອຸປະນັນທະສາກະຍະບຸດຈະມາຮອດກ່ອນ"

ແມ່ນຄັ້ງທີ ໔ ພິກຂຸທັງຫຼາຍໄດ້ກ່າວກັບທາຍົກເຫຼົ່ານັ້ນດັ່ງນີ້ວ່າ "ອຸປາສົກທັງຫຼາຍ ພວກທ່ານຈົ່ງຖວາຍພັດຕາຫານເທີ້ນ"

ພວກທາຍົກກ່າວວ່າ "ນິມົນຄູບາທັງຫຼາຍ ໂຜດຖ້າຈົນກວ່າພຣະອຸປະນັນທະສາກະຍະບຸດຈະມາຮອດກ່ອນ"

ພໍຄັ້ງທີ ໓ ພິກຂຸທັງຫຼາຍໄດ້ກ່າວກັບທາຍົກເຫຼົ່ານັ້ນດັ່ງນີ້ວ່າ "ອຸປາສົກທັງຫຼາຍ ພວກທ່ານຈົ່ງຟ້າວຖວາຍພັດຕາຫານເທີ້ນ ກ່ອນທີ່ເວລາຈະລ່ວງເລີຍຜ່ານໝົດໄປ"

ພວກທາຍົກຕອບວ່າ "ຄູບາທັງຫຼາຍ ພວກຂ້ານ້ອຍຈັດພັດຕາຫານຍ້ອນເຫດແຫ່ງພຣະອຸປະນັນທະສາກະຍະບຸດ ນິມົນຄູບາທັງຫຼາຍໂຜດຖ້າຈົນກວ່າພຣະອຸປະນັນທະສາກະຍະບຸດຈະມາຮອດເທີ້ນ

ເມື່ອທ່ານພຣະອຸປະນັນທະສາກະຍະບຸດເຂົ້າໄປຢ້ຽມຢາມຕະກູນທັງຫຼາຍກ່ອນເຖິງເວລາສັນພັດຕາຫານແລ້ວກັບມາຮອດໃກ້ເວລາສັນ ພິກຂຸທັງຫຼາຍຈຶ່ງສັນພັດຕາຫານບໍ່ໄດ້ສົມໃຈ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດຮັບນິມົນໄວ້ແລ້ວ ມີພັດຕາຫານແລ້ວ ຈຶ່ງຍັງທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເຖິງເວລາສັນພັດຕາຫານແນວນັ້ນນໍ?" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານຮັບນິມົນໄວ້ແລ້ວ ມີພັດຕາຫານແລ້ວ ຍັງທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເຖິງເວລາສັນພັດຕາຫານແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຮັບນິມົນໄວ້ແລ້ວ ມີພັດຕາຫານແລ້ວ ຍັງທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເຖິງເວລາສັນພັດຕາຫານນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຕ້ອງອາບັດປາຈິດຕິ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

[໔໗໕] ສະໄໝນັ້ນ ຕະກູນອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະບຸດສົ່ງຂອງຫຍໍ້າໄປຖວາຍສົງດ້ວຍສັ່ງວ່າ "ຂໍມອບໃຫ້ພຣະອຸປະນັນທະສາກະຍະບຸດເປັນຜູ້ຖວາຍສົງ"

ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດກຳລັງໄປບິນທະບາດໃນໝູ່ບ້ານ ພໍດີພວກຊາວບ້ານໄປເຖິງອາຣາມຖາມພິກຂຸທັງຫຼາຍວ່າ "ຄູບາທັງຫຼາຍ ພຣະອຸປະນັນທະສາກະຍະບຸດໄປໃສ?"

ພິກຂຸທັງຫຼາຍຕອບວ່າ "ອຸປາສົກທັງຫຼາຍ ທ່ານພຣະອຸປະນັນທະໄປບິນທະບາດໃນໝູ່ບ້ານ"

ພວກຊາວບ້ານຮຽນວ່າ "ຄູບາທັງຫຼາຍ ຂອງຫຍໍ້າຂອງສັນນີ້ມອບໃຫ້ພຣະອຸປະນັນທະເປັນຜູ້ຖວາຍສົງ"

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ພວກທ່ານຈົ່ງຮັບປະເຄນແລ້ວເກັບໄວ້ຈົນກວ່າອຸປະນັນທະຈະກັບມາ"

ຝ່າຍທ່ານພຣະອຸປະນັນທະສາກະຍະບຸດຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ" ຈຶ່ງເຂົ້າໄປຢ້ຽມຢາມຕະກູນທັງຫຼາຍພາຍຫຼັງເວລາສັນພັດຕາຫານ ກັບອອກມາເວລາບ່າຍ ຂອງສັນທີ່ຊາວບ້ານມອບໃຫ້ຖືກສົ່ງຄືນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດຈຶ່ງທ່ຽວສັນຈອນໄປໃນຕະກູນທັງຫຼາຍ ຫຼັງເວລາພັດຕາຫານແນວນັ້ນນໍ?" ເມື່ອພິກຂຸທັງຫຼາຍ ຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານທ່ຽວສັນຈອນໄປໃນຕະກູນທັງຫຼາຍຫຼັງເວລາສັນພັດຕາຫານ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດເປັນຫຍັງ ທ່ານຈຶ່ງທ່ຽວສັນຈອນໄປໃນຕະກູນທັງຫຼາຍພາຍຫຼັງເວລາສັນພັດຕາຫານນໍ? ໂມຄະ

ບຸຣຸດ ການກະທຳແບວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ຊົງອະນຸຍາດໃຫ້ເຂົ້າຕະກູນໄດ້ໃນສະໄໝທີ່ຖວາຍຈີວອນ

[๔๗๖] ສະໄໝນັ້ນ ພວກພິກຂຸມີຄວາມຢຳເກງຢູ່ຈຶ່ງບໍ່ເຂົ້າໄປສູ່ຕະກູນທັງຫຼາຍ ໃນສະໄໝທີ່ຖວາຍຈີວອນ ຈຶ່ງໄດ້ຈີວອນມາພຽງເລັກໜ້ອຍ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຂົ້າໄປຫາຕະກູນທັງຫຼາຍໄດ້ໃນສະໄໝທີ່ຖວາຍຈີວອນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານ ນອກສະໄໝ ຕ້ອງອາບັດປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ຖວາຍຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ເຂົ້າຕະກູນໄດ້ໃນສະໄໝທີ່ເຮັດຈີວອນ

[๔๗๗] ສະໄໝນັ້ນ ພິກຂຸທັງຫຼາຍ ຕັດຫຍິບຈີວອນຢູ່ຕ້ອງການເຂັມແດ່ ດ້າຍແດ່ ມີດແດ່ ແຕ່ມີຄວາມຢຳເກງຢູ່ ຈຶ່ງບໍ່ເຂົ້າໄປຫາຕະກູນທັງຫຼາຍ ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຂົ້າ

ໄປຫາຕະກູນທັງຫຼາຍໄດ້ໃນສະໄໝທີ່ເຮັດຈີວອນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານ ນອກສະໄໝ ຕ້ອງອາບັດປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ບອກລາກ່ອນເຂົ້າຕະກູນ

[໔໙໘] ສະໄໝນັ້ນ ພິກຂຸທັງຫຼາຍເປັນໄຂ້ຕ້ອງການເພສັດ ແຕ່ມີຄວາມຢຳເກງຢູ່ຈຶ່ງບໍ່ເຂົ້າໄປຫາຕະກູນທັງຫຼາຍ ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກລາ ພິກຂຸທີ່ມີຢູ່ແລ້ວເຂົ້າໄປໃນຕະກູນທັງຫຼາຍໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ບໍ່ບອກລາພິກຂຸທີ່ມີຢູ່ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນ ພັດຕາຫານ ນອກສະໄໝ ຕ້ອງອາບັດປາຈິດຕີ ສະໄໝໃນຂໍ້ນັ້ນ ຄື ສະໄໝທີ່ຖວາຍຈີວອນ ສະໄໝທີ່ເຮັດຈີວອນ ນີ້ເປັນສະໄໝໃນຂໍ້ນັ້ນ

## ສິກຂາບົດວິພັງ

[໓໐໐] ຄຳວ່າ ອັນໜຶ່ງໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮັບນິມົນໄວ້ແລ້ວ ຄື ພິກຂຸຮັບນິມົນສັນໂພຊະນະ ໕ ຢ່າງ ຢ່າງໃດ ຢ່າງໜຶ່ງ

ທີ່ຊື່ວ່າ ມີພັດຕາຫານຢູ່ແລ້ວ ຄື ພິກຂຸມີອາຫານທີ່ຮັບນິມົນໄວ້

ທີ່ຊື່ວ່າ ພິກຂຸມີຢູ່ ຄື ພິກຂຸທີ່ອາດຈະບອກລາກ່ອນເຂົ້າບ້ານໄດ້

ທີ່ຊື່ວ່າ ພິກຂຸບໍ່ມີຢູ່ ຄື ພິກຂຸທີ່ບໍ່ອາດຈະບອກລາກ່ອນເຂົ້າບ້ານໄດ້

ທີ່ຊື່ວ່າ ກ່ອນເວລາສັນພັດຕາຫານ ຄື ພິກຂຸຍັງບໍ່ໄດ້ສັນພັດຕາຫານທີ່ຮັບນິມົນໄວ້

ທີ່ຊື່ວ່າ ຫຼັງເວລາສັນພັດຕາຫານ ຄື ພິກຂຸສັນພັດຕາຫານທີ່ຮັບນິມົນໄວ້ ໂດຍທີ່ສຸດສັນດ້ວຍໃຊ້ປາຍຫຍ້າຄາແຕະ

ທີ່ຊື່ວ່າ ຕະກູນ ໝາຍເຖິງ ຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ແລະຕະກູນສູດ

ຄຳວ່າ ທ່ຽວສັນຈອນໄປໃນຕະກູນທັງຫຼາຍ ຄວາມວ່າ ພິກຂຸກ້າວເຂົ້າອຸປະຈານເຮືອນຂອງຜູ້ອື່ນ ຕ້ອງອາບັດທຸກກົດ ກ້າວຕີນທີ ໑ ລ່ວງທໍຣະນີປະຕູ ຕ້ອງອາບັດທຸກກົດ ກ້າວຕີນທີ ໒ ຕ້ອງອາບັດປາຈິດຕີ

ຄຳວ່າ ນອກສະໄໝ ຄື ຍົກເວັ້ນສະໄໝ

ທີ່ຊື່ວ່າ ສະໄໝທີ່ຖວາຍຈີວອນ ຄື ເມື່ອຍັງບໍ່ໄດ້ການກະຖິນ ກຳນົດເອົາເດືອນທ້າຍແຫ່ງລະດູຝົນ ເມື່ອການກະຖິນແລ້ວ ມີກຳນົດເວລາ ໕ ເດືອນ

ທີ່ຊື່ວ່າ ສະໄໝທີ່ເຮັດຈີວອນ ຄື ເມື່ອພິກຂຸກຳລັງເຮັດຈີວອນ

## ບົດພາຊະນີ

## ຕິກະປາຈິດຕີ

[໓໐໑] ຮັບນິມົນໄວ້ແລ້ວ ພິກຂຸສຳຄັນວ່າຮັບນິມົນໄວ້ແລ້ວ ບໍ່ບອກລາພິກຂຸທີ່ມີຢູ່ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານນອກສະ ໄໝ ຕ້ອງອາບັດປາຈິດຕີ

ຮັບນິມົນໄວ້ແລ້ວ ພິກຂຸບໍ່ແນ່ໃຈ ບໍ່ບອກລາພິກຂຸທີ່ມີຢູ່ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼືຫຼັງເວລາສັນພັດຕາຫານນອກສະໄໝ ຕ້ອງອາບັດປາຈິດຕີ

ຮັບນິມົນໄວ້ແລ້ວ ພິກຂຸສຳຄັນວ່າບໍ່ໄດ້ຮັບນິມົນໄວ້ ບໍ່ບອກລາພິກຂຸທີ່ມີຢູ່ ທ່ຽວສັນຈອນໄປໃນຕະກູນທັງຫຼາຍ ກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານ ນອກສະໄໝ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ບໍ່ໄດ້ຮັບນິມົນໄວ້ ພິກຂຸສຳຄັນວ່າຮັບນິມົນໄວ້ ຕ້ອງອາບັດທຸກກົດ

ບໍ່ໄດ້ຮັບນິມົນໄວ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ໄດ້ຮັບນິມົນໄວ້ ພິກຂຸສຳຄັນວ່າບໍ່ໄດ້ຮັບນິມົນໄວ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໐໔] ໑. ພິກຂຸສັນໃນສະໄໝ
໔. ພິກຂຸບອກລາພິກຂຸທີ່ມີຢູ່ແລ້ວຈຶ່ງເຂົ້າໄປ
໓. ພິກຂຸບໍ່ບອກລາພິກຂຸທີ່ບໍ່ມີຢູ່ເຂົ້າໄປ
໔. ພິກຂຸຍ່າງໄປຕາມທາງທີ່ຜ່ານເຮືອນຜູ້ອື່ນ
໕. ພິກຂຸຍ່າງໄປຕາມທາງທີ່ຜ່ານໃກ້ເຮືອນ
໖. ພິກຂຸໄປອາຣາມອື່ນ
໗. ພິກຂຸໄປສຳນັກພິກຂຸນີ
໘. ພິກຂຸໄປສຳນັກເດຍຣະຖີ
໙. ພິກຂຸໄປໂຮງສັນ
໑໐. ພິກຂຸໄປເຮືອນທີ່ເຂົານິມົນ
໑໑. ພິກຂຸໄປໃນເວລາມີເຫດຂັດຂ້ອງ
໑໔. ພິກຂຸວິກົນຈະລິດ
໑໓. ພິກຂຸຕົ້ນບັນຍັດ

**ຈາຣິດຕະສິກຂາບົດທີ ໖ ຈົບ**

# ໕. ອະເຈລະກະວັກ

## ໗. ມະຫານາມະສິກຂາບົດ

### ວ່າດ້ວຍພຣະເຈົ້າມະຫານາມະສາກະຍະ

### ເລື້ອງພຣະເຈົ້າມະຫານາມະສາກະຍະ

[໓໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ພຣະເຈົ້າມະຫານາມະສາກະຍະມີເພສັດເຫຼືອເຟືອ ລຳດັບນັ້ນ ພຣະເຈົ້າມະຫານາມະສາກະຍະ ຈຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນທີ່ສົມຄວນ ພຣະເຈົ້າມະຫານາມະສາກະຍະຜູ້ນັ່ງ ໃນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້ານ້ອຍປະສົງຈະປະວາຣະນາຕໍ່ສົງດ້ວຍເພສັດຕະຫຼອດ ໔ ເດືອນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາທຸ ສາທຸ ມະຫານາມະ ຖ້າເຊັ່ນນັ້ນ ທ່ານຈົ່ງປະວາຣະນາ ສິ່ງດ້ວຍເພສັດຕະຫຼອດ ໔ ເດືອນເທີ້ນ"

ພວກພິກຂຸມີຄວາມຢຳເກງຢູ່ຈຶ່ງບໍ່ຮັບປະວາຣະນາ ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍິນດີການປະວາຣະນາດ້ວຍປັດໄຈຕະຫຼອດ ໔ ເດືອນ"

[໓໐໔] ສະໄໝນັ້ນ ພິກຂຸທັງຫຼາຍອອກປາກຂໍເພສັດກັບພຣະເຈົ້າມະຫານາມະສາກະຍະພຽງເລັກໜ້ອຍ ເພສັດຂອງພຣະເຈົ້າມະຫານາມະສາກະຍະກໍຍັງມີເຫຼືອເຟືອຢູ່ເໝືອນເດີມ

ແມ່ນຄັ້ງທີ ໔ ພຣະເຈົ້າມະຫານາມະສາກະຍະກໍໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ພຣະເຈົ້າມະຫານາມະສາກະຍະຜູ້ນັ່ງ ໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້ານ້ອຍປະສົງຈະປະວາຣະນາສິ່ງດ້ວຍເພສັດຕໍ່ໄປອີກ ໔ ເດືອນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາທຸ ສາທຸ ມະຫານາມະ ຖ້າເຊັ່ນນັ້ນ ທ່ານຈົ່ງປະວາຣະນາ ສິ່ງດ້ວຍເພສັດຕໍ່ໄປອີກ ໔ ເດືອນເທີ້ນ"

ພວກພິກຂຸມີຄວາມຢຳເກງຢູ່ຈຶ່ງບໍ່ຮັບປະວາຣະນາ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍິນດີການປະວາຣະນາຕໍ່ໄປອີກ"

[໓໐໕] ສະໄໝນັ້ນ ພິກຂຸທັງຫຼາຍອອກປາກຂໍເພສັດກັບພຣະເຈົ້າມະຫານາມະສາກະຍະພຽງເລັກໜ້ອຍ ເພສັດຂອງພຣະເຈົ້າມະຫານາມະສາກະຍະກໍຍັງມີເຫຼືອເຟືອຢູ່ເໝືອນເດີມ

ແມ່ນຄັ້ງທີ ໓ ພຣະເຈົ້າມະຫານາມະສາກະຍະກໍໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ພຣະເຈົ້າມະຫານາມະສາກະຍະຜູ້ນັ່ງໃນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້ານ້ອຍປະສົງຈະປະວາຣະນາສິ່ງດ້ວຍເພສັດຕະຫຼອດຊີວິດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາທຸ ສາທຸ ມະຫານາມະ ຖ້າເຊັ່ນນັ້ນທ່ານຈົ່ງປະວາຣະນາສິ່ງດ້ວຍເພສັດຕະຫຼອດຊີວິດເທີ້ນ"

ພວກພິກຂຸມີຄວາມຢຳເກງຢູ່ຈຶ່ງບໍ່ຮັບປະວາຣະນາ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາ

ຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍິນດີການປະວາຣະນາເປັນນິດ"

ສະໄໝນັ້ນ ພວກພິກຂຸສັບພັກຄີນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ອາກັບກິຣິຍາບໍ່ຮຽບຮ້ອຍ ພຣະເຈົ້າມະຫານາມະສາກະຍະຈຶ່ງໄດ້ວ່າກ່າວວ່າ "ຄູບາທັງຫຼາຍ ເປັນຫຍັງພວກທ່ານຈຶ່ງນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ອາກັບກິຣິຍາບໍ່ຮຽບຮ້ອຍແນວນີ້ນໍ? ທຳນຽມບັນພະຊິດຕ້ອງນຸ່ງໃຫ້ຮຽບຮ້ອຍ ຫົ່ມໃຫ້ຮຽບຮ້ອຍ ແລະມີອາກັບກິຣິຍາທີ່ຮຽບຮ້ອຍ ບໍ່ແມ່ນບໍ?"

ພວກພິກຂຸສັບພັກຄີແຄ້ນເຄືອງພຣະເຈົ້າມະຫານາມະສາກະຍະ ໃນບັດນັ້ນ ພວກພິກຂຸສັບພັກຄີໄດ້ປຶກສາກັນວ່າ "ພວກເຮົາຈະເຮັດໃຫ້ພຣະເຈົ້າມະຫານາມະສາກະຍະໄດ້ຮັບຄວາມເກີ້ເຂີນດ້ວຍວິທີໃດ" ຈຶ່ງປຶກສາກັນວ່າ "ທ່ານທັງຫຼາຍ ພຣະເຈົ້າມະຫານາມະສາກະຍະ ປະວາຣະນາສິ່ງດ້ວຍເພສັດ ພວກເຮົາຈະໄປອອກປາກຂໍເນີຍໃສກັບພຣະເຈົ້າມະຫານາມະສາກະຍະ" ລຳດັບນັ້ນ ພວກພິກຂຸສັບພັກຄີໄດ້ເຂົ້າໄປຫາພຣະເຈົ້າມະຫານາມະສາກະຍະເຖິງພຣະຕຳໜັກເມື່ອເຖິງແລ້ວໄດ້ກ່າວກັບພຣະເຈົ້າມະຫານາມະສາກະຍະດັ່ງນີ້ວ່າ "ທ່ານ ພວກອາດຕະມາຕ້ອງການ ເນີຍໃສ ໑ ທະນານ"

ພຣະເຈົ້າມະຫານາມະສາກະຍະຮັບສັ່ງວ່າ " ຂໍໃຫ້ຄູບາທັງຫຼາຍ ວັນນີ້ໂຜດຖ້າກ່ອນ ພວກຄົນງານກຳລັງໄປຄອກເພື່ອຈະນຳເນີຍໃສມາ ພວກທ່ານບໍ່ຕ້ອງເປັນຫ່ວງ ພວກເຂົາຈະນຳມາໃຫ້ທັນເວລາ"

ແມ່ນໃນຄັ້ງທີ ໒ ຯລຯ

ແມ່ນໃນຄັ້ງທີ ໓ ພວກພິກຂຸສັບພັກຄີກໍໄດ້ກ່າວກັບພຣະເຈົ້າມະຫານາມະສາກະຍະດັ່ງນີ້ວ່າ "ທ່ານ ພວກອາດຕະມາຕ້ອງການເນີຍໃສ ໑ ທະນານ"

ພຣະເຈົ້າມະຫານາມະສາກະຍະຮັບສັ່ງວ່າ "ຂໍໃຫ້ຄູບາຫຼາຍ ວັນນີ້ໂຜດຖ້າກ່ອນ ພວກຄົນງານກຳລັງໄປຄອກເພື່ອຈະນຳເນີຍໃສມາ ພວກທ່ານບໍ່ຕ້ອງເປັນຫ່ວງ ພວກເຂົາຈະນຳມາໃຫ້ທັນເວລາ"

ພວກພິກຂຸສັບພັກຄີກ່າວວ່າ "ທ່ານ ຖ້າຫາກທ່ານບໍ່ຕ້ອງການຖວາຍແລ້ວ ການປະວາຣະນາຈະມີປະໂຫຍດອັນໃດ ປະວາຣະນາແລ້ວບໍ່ຖວາຍ"

ຄັ້ງນັ້ນ ພຣະເຈົ້າມະຫານາມະສາກະຍະໄດ້ຕຳໜິ ປະນາມ ໂພນທະນາວ່າ "ພວກຄູບາທັງ ຫຼາຍ ເປັນຫຍັງ ເມື່ອຂ້າພະເຈົ້າຂໍຮ້ອງວ່າ ຂໍໃຫ້ຄູບາທັງຫຼາຍ ວັນນີ້ໂຜດຖ້າກ່ອນ ຈຶ່ງຖ້າບໍ່ໄດ້ນໍ?"

ພວກພິກຂຸໄດ້ຍິນພຣະເຈົ້າມະຫານາມະສາກະຍະຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະເຈົ້າມະຫານາມະສາກະຍະຂໍຮ້ອງພວກພິກຂຸສັບພັກຄີວ່າ ຂໍໃຫ້ຄູບາທັງຫຼາຍ ວັນນີ້ໂຜດຖ້າກ່ອນ ເປັນຫຍັງຈຶ່ງຖ້າບໍ່ໄດ້

ນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພຣະເຈົ້າມະຫານາມະຂໍຮ້ອງພວກທ່ານວ່າ ຂໍໃຫ້ຄູບາທັງຫຼາຍ ວັນນີ້ໂຜດຖ້າກ່ອນ ແລ້ວຖ້າບໍ່ໄດ້ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານເມື່ອພຣະເຈົ້າມະຫານາມະສາກະຍະຂໍຮ້ອງວ່າ ຂໍໃຫ້ຄູບາທັງຫຼາຍວັນນີ້ໂຜດຖ້າກ່ອນ ຈຶ່ງຖ້າບໍ່ໄດ້ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດ ນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໐໖] ພິກຂຸບໍ່ເປັນໄຂ້ ເພິ່ງຍິນດີການປະວາຣະນາດ້ວຍປັດໄຈໄດ້ພຽງ ໔ ເດືອນ ເວັ້ນໄວ້ແຕ່ປະວາຣະນາອີກ ເວັ້ນໄວ້ແຕ່ປະວາຣະນາເປັນນິດ ຖ້າຍິນດີເກີນກວ່າກຳນົດນັ້ນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະເຈົ້າມະຫານາມະສາກະຍະ ຈົບ**

## ສິກຂາບົດວິພັງ

[໓໐໗] ຄຳວ່າ ພິກຂຸບໍ່ເປັນໄຂ້ເພິ່ງຍິນດີການປະວາຣະນາດ້ວຍປັດໄຈໄດ້ພຽງ ໔ ເດືອນ ຄວາມວ່າ ເພິ່ງຍິນດີການປະວາຣະນາພຽງຄິລານະປັດໄຈຕາມກຳນົດນັ້ນ

ແມ່ນເຂົາປະວາຣະນາອີກ ເພິ່ງຍິນດີວ່າ ເຮົາຈະອອກປາກຂໍໃນເວລາທີ່ເຮົາເຈັບໄຂ້

ແມ່ນເຂົາປະວາຣະນາໄວ້ເປັນນິດ ເພິ່ງຍິນດີວ່າ ເຮົາຈະອອກປາກຂໍໃນເວລາທີ່ເຮົາເຈັບໄຂ້

ຄຳວ່າ ຖ້າຍິນດີເກີນກວ່າກຳນົດນັ້ນ ຄວາມວ່າ ການປະວາຣະນາກຳນົດເພສັດບໍ່ກຳນົດຣາຕີກໍມີ ການປະວາຣະນາກຳນົດຣາຕີບໍ່ກຳນົດເພສັດກໍມີ ການປະວາຣະນາກຳນົດທັງເພສັດທັງຣາຕີກໍມີ ການປະວາຣະນາບໍ່ກຳນົດເພສັດບໍ່ກຳນົດຣາຕີກໍມີ

ທີ່ຊື່ວ່າ ກຳນົດເພສັດ ຄື ເຂົາກຳນົດເພສັດໄວ້ວ່າ ຂ້າພະເຈົ້າປະວາຣະນາດ້ວຍເພສັດພຽງເທົ່ານີ້

ທີ່ຊື່ວ່າ ກຳນົດຣາຕີ ຄື ເຂົາກຳນົດຣາຕີໄວ້ວ່າ ຂ້າພະເຈົ້າປະວາຣະນາໃນຣາຕີພຽງເທົ່ານີ້

ທີ່ຊື່ວ່າ ກຳນົດທັງເພສັດກຳນົດທັງຣາຕີ ຄື ເຂົາກຳນົດເພສັດ ແລະ ກຳນົດຣາຕີໄວ້ວ່າ ຂ້າພະເຈົ້າປະວາຣະນາດ້ວຍເພສັດເທົ່ານີ້ໃນຣາຕີພຽງເທົ່ານີ້

ທີ່ຊື່ວ່າ ບໍ່ກຳນົດເພສັດແລະບໍ່ກຳນົດຣາຕີ ຄື ເຂົາບໍ່ໄດ້ກຳນົດເພສັດ ແລະບໍ່ໄດ້ກຳນົດຣາຕີໄວ້

## ບົດພາຊະນີ

## ປາຈິດຕີ

[໓໐໗] ໃນການກຳນົດເພສັດ ພິກຂຸອອກປາກຂໍເພສັດອື່ນ ນອກຈາກເພສັດທີ່ເຂົາປະວາຣະນາໄວ້ ຕ້ອງອາບັດປາຈິດຕີ

ໃນການກຳນົດຣາຕີ ພິກຂຸອອກປາກຂໍໃນຣາຕີອື່ນນອກຈາກຣາຕີທີ່ເຂົາປະວາຣະນາໄວ້ ຕ້ອງອາບັດປາຈິດຕີ

ໃນການກຳນົດທັງເພສັດ ແລະກຳນົດຣາຕີ ພິກຂຸອອກປາກຂໍເພສັດອື່ນນອກຈາກເພສັດທີ່ເຂົາປະວາຣະນາໄວ້ໃນຣາຕີອື່ນນອກຈາກຣາຕີທີ່ເຂົາປະວາຣະນາໄວ້ ຕ້ອງອາບັດປາຈິດຕີ

ໃນການບໍ່ກຳນົດເພສັດບໍ່ກຳນົດຣາຕີ ບໍ່ຕ້ອງອາບັດ

[໓໐໘] ເມື່ອບໍ່ມີຄວາມຈຳເປັນດ້ວຍເພສັດ ພິກຂຸອອກປາກຂໍເພສັດ ຕ້ອງອາບັດປາຈິດຕີ

ເມື່ອມີຄວາມຈຳເປັນດ້ວຍເພສັດຢ່າງໜຶ່ງ ພິກຂຸອອກປາກຂໍເພສັດອີກຢ່າງໜຶ່ງ ຕ້ອງອາບັດປາຈິດຕີ

ເກີນກວ່າກຳນົດນັ້ນ ພິກຂຸສຳຄັນວ່າເກີນກວ່າກຳນົດນັ້ນ ອອກປາກຂໍເພສັດ ຕ້ອງອາບັດປາຈິດຕີ

ເກີນກວ່າກຳນົດນັ້ນ ພິກຂຸບໍ່ແນ່ໃຈ ອອກປາກຂໍເພສັດ ຕ້ອງອາບັດປາຈິດຕີ

ເກີນກວ່າກຳນົດນັ້ນ ພິກຂຸສຳຄັນວ່າບໍ່ເກີນກວ່າກຳນົດນັ້ນ ອອກປາກຂໍເພສັດ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ບໍ່ເກີນກວ່າກຳນົດນັ້ນ ພິກຂຸສຳຄັນວ່າເກີນກວ່າກຳນົດນັ້ນ ຕ້ອງອາບັດທຸກກົດ

ບໍ່ເກີນກວ່າກຳນົດນັ້ນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ເກີນກວ່າກຳນົດນັ້ນ ພິກຂຸສຳຄັນວ່າບໍ່ເກີນກວ່າກຳນົດນັ້ນ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໑໐] ໑. ພິກຂຸອອກປາກຂໍເພສັດຕາມທີ່ເຂົາປະວາຣະນາໄວ້

໒. ພິກຂຸອອກປາກຂໍເພສັດໃນຣາຕີຕາມທີ່ເຂົາປະວາຣະນາໄວ້

໓. ພິກຂຸອອກປາກຂໍເພສັດວ່າ ທ່ານປະວາຣະນາພວກອາດຕະມາດ້ວຍເພສັດເຫຼົ່ານີ້ແລະພວກອາດຕະມາກໍຕ້ອງການເພສັດນີ້ແລະນີ້

໔. ພິກຂຸອອກປາກຂໍເພສັດວ່າ ຣາຕີທີ່ທ່ານປະວາຣະນາຜ່ານໄປແລ້ວ ແຕ່ເຮົາຍັງຕ້ອງການເພສັດຢູ່

໕. ພິກຂຸອອກປາກຂໍເພສັດຈາກຍາດ

໖. ພິກຂຸອອກປາກຂໍເພສັດຈາກຄົນປະວາຣະນາ

໗. ພິກຂຸອອກປາກຂໍເພສັດເພື່ອພິກຂຸອື່ນ

໘. ພິກຂຸອອກປາກຂໍເພສັດທີ່ຈ່າຍມາດ້ວຍຊັບຂອງຕົນ

໙. ພິກຂຸວິກົນຈະລິດ

໑໐. ພິກຂຸຕົ້ນບັນຍັດ

**ມະຫານາມະສິກຂາບົດທີ ໗ ຈົບ**

## ໕. ອະເຈລະກະວັກ

## ໘. ອຸຍຍຸດຕະເສນາສິກຂາບົດ

### ວ່າດ້ວຍກອງທັບທີ່ເຄື່ອນຂະບວນອອກຮົບ

### ເລື້ອງພຣະສັບພັກຄີ

[໓໑໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຊົງຍົກກອງທັບອອກຮົບ ພວກພິກຂຸສັບພັກຄີກໍອອກໄປເພື່ອເບິ່ງກອງທັບທີ່ກຳລັງເຄື່ອນຂະບວນອອກຮົບ ພຣະເຈົ້າປະເສນທິໂກສົນໄດ້ທອດພຣະເນດເຫັນພວກພິກຂຸສັບພັກຄີກຳລັງຍ່າງມາແຕ່ໄກ ເມື່ອທອດພຣະເນດເຫັນແລ້ວຈຶ່ງຮັບສັ່ງໃຫ້ນິມົນມາ ແລ້ວຕັດຖາມດັ່ງນີ້ວ່າ “ຄູບາທັງຫຼາຍ ພວກທ່ານມາເຮັດຫຍັງກັນນໍ?”

ພວກພິກຂຸສັບພັກຄີຖວາຍພຣະພອນວ່າ "ພວກອາດຕະມາຕ້ອງການຈະມາຢ້ຽມຢາມມະຫາບໍພິດ"

ພຣະເຈົ້າປະເສນທິໂກສົນຮັບສັ່ງວ່າ "ຄູບາທັງຫຼາຍ ບໍ່ມີປະໂຫຍດໃດເລີຍທີ່ທ່ານມາຢ້ຽມຂ້າພະເຈົ້າຜູ້ໃຝ່ໃນການຮົບ ພວກທ່ານຄວນໄປເຝົ້າພຣະຜູ້ມີພຣະພາກເຈົ້າບໍ່ແມ່ນບໍ?"

ພວກພົນຮົບຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງມາເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບນໍ ບໍ່ແມ່ນເປັນລາບຂອງພວກເຮົາພວກເຮົາໄດ້ບໍ່ດີ ທີ່ພວກເຮົາມາຢູ່ໃນກອງທັບກໍຍ້ອນການຄອງຊີບ ຍ້ອນຕ້ອງລ້ຽງດູບຸດພັນລະຍາ

ພິກຂຸທັງຫຼາຍໄດ້ຍິນພວກພົນຮົບຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະສັບພັກຄີ ຈົບ**

## ເລື້ອງພິກຂຸອົງໜຶ່ງ

[໓໑໔] ສະໄໝນັ້ນ ລຸງຂອງພິກຂຸອົງໜຶ່ງປ່ວຍຢູ່ໃນກອງທັບ ເຂົາສົ່ງຂ່າວໄປເຖິງພິກຂຸນັ້ນວ່າ "ລຸງກຳລັງປ່ວຍຢູ່ໃນກອງທັບ ນິມົນທ່ານມາ ລຸງປາຖະໜາໃຫ້ທ່ານມາຢ້ຽມ" ພິກຂຸນັ້ນໄດ້

ມີຄວາມຄິດດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸບໍ່ເພິ່ງໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບ ແຕ່ວ່າເວລາລຸງຂອງເຮົາປ່ວຍຢູ່ໃນກອງທັບ ເຮົາຈະເພິ່ງປະຕິບັດຢ່າງໃດດີນໍ ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ໄປໃນກອງທັບໄດ້ເມື່ອມີເຫດຜົນທີ່ສົມຄວນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໄປໃນກອງທັບໄດ້ເມື່ອມີເຫດຜົນເຊັ່ນນັ້ນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໓໑໓] ອັນໜຶ່ງ ພິກຂຸໃດໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບ ນອກຈາກມີເຫດຜົນທີ່ສົມຄວນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໓໑໔] ຄຳວ່າ ອັນໜຶ່ງ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ໗ລ໗ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ເຄື່ອນຂະບວນອອກຮົບ ໄດ້ແກ່ ກອງທັບທີ່ເຄື່ອນອອກຈາກເມືອງແລ້ວ ຕັ້ງຄ້າຍພັກແຮມ ຫຼື ເຄື່ອນຂະບວນຕໍ່ໄປ

ທີ່ຊື່ວ່າ ກອງທັບ ໄດ້ແກ່ ກອງທັບຊ້າງ ກອງທັບມ້າ ກອງທັບລົດ ກອງທັບພົນຍ່າງ

ຊ້າງ ໑ ເຊືອກ ມີທະຫານປະຈຳຢູ່ ໑໒ ນາຍ ມ້າ ໑ ຕົວ ມີທະຫານປະຈຳຢູ່ ໓ ນາຍ ລົດ ໑ ຄັນ ມີທະຫານປະຈຳຢູ່ ໔ ນາຍ ພົນຍ່າງມີທະຫານແມ່ນທະນູ ໔ ນາຍ ພິກຂຸໄປເພື່ອຈະເບິ່ງກອງທັບນັ້ນ ຕ້ອງອາບັດທຸກກົດ ຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດປາຈິດຕີ ພົ້ນວິໄສທີ່ຈະເຫັນ ແຕ່ພະຍາຍາມເບິ່ງຈົນເຫັນ ຕ້ອງອາບັດປາຈິດຕີ

ຄຳວ່າ ນອກຈາກມີເຫດຜົນທີ່ສົມຄວນ ຄື ຍົກເວັ້ນເມື່ອມີເຫດຜົນທີ່ສົມຄວນຈຳເປັນຕໍ່ເຫດທີ່ຈະຕ້ອງໄປ

## ບົດພາຊະນີ

## ຕິກະປາຈິດຕີ

[໓໑໕] ກອງທັບເຄື່ອນຂະບວນອອກຮົບ ພິກຂຸສຳຄັນວ່າເຄື່ອນຂະບວນອອກຮົບໄປເພື່ອຈະເບິ່ງ ນອກຈາກມີເຫດຜົນທີ່ສົມຄວນ ຕ້ອງອາບັດປາຈິດຕີ

ກອງທັບເຄື່ອນຂະບວນອອກຮົບ ພິກຂຸບໍ່ແນ່ໃຈ ໄປເພື່ອຈະເບິ່ງ ນອກຈາກມີເຫດຜົນທີ່ສົມຄວນ ຕ້ອງອາບັດປາຈິດຕີ

ກອງທັບເຄື່ອນຂະບວນອອກຮົບ ພິກຂຸສຳຄັນວ່າຍັງບໍ່ໄດ້ເຄື່ອນຂະບວນອອກຮົບ ໄປເພື່ອຈະເບິ່ງ ນອກຈາກມີເຫດຜົນທີ່ສົມຄວນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸໄປເພື່ອຈະເບິ່ງກອງທັບແຕ່ລະກອງ ຕ້ອງອາບັດທຸກກົດ

ພິກຂຸຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດທຸກກົດ

ພິກຂຸຢູ່ພື້ນວິໄສທີ່ຈະເຫັນ ແຕ່ພະຍາຍາມເບິ່ງຈົນເຫັນ ຕ້ອງອາບັດທຸກກົດ

ກອງທັບຍັງບໍ່ໄດ້ເຄື່ອນຂະບວນອອກຮົບ ພິກຂຸສຳຄັນວ່າເຄື່ອນຂະບວນອອກຮົບ ຕ້ອງອາບັດທຸກກົດ

ກອງທັບຍັງບໍ່ໄດ້ເຄື່ອນຂະບວນອອກຮົບ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກອງທັບຍັງບໍ່ໄດ້ເຄື່ອນຂະບວນອອກຮົບ ພິກຂຸສຳຄັນວ່າຍັງບໍ່ໄດ້ເຄື່ອນຂະບວນອອກຮົບ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໑໖] ໑. ພິກຂຸຢືນເບິ່ງຢູ່ໃນອາຮາມ

໒. ພິກຂຸເບິ່ງກອງທັບທີ່ຍົກຜ່ານມາຍັງທີ່ທີ່ພິກຂຸຢືນ ທີ່ພິກຂຸນັ່ງ ຫຼື ທີ່ພິກຂຸນອນ

໓. ພິກຂຸຍ່າງສວນທາງໄປເຫັນ

໔. ພິກຂຸເບິ່ງເມື່ອມີເຫດຜົນທີ່ສົມຄວນ

໕. ພິກຂຸເບິ່ງເມື່ອເວລາມີເຫດຂັດຂ້ອງ

໖. ພິກຂຸວິກົນຈະລິດ

໗. ພິກຂຸຕົ້ນບັນຍັດ

**ອຸຍຍຸດຕະເສນາສິກຂາບົດທີ ໘ ຈົບ**

# ໕. ອະເຈລະກະວັກ

## ໗. ເສນາວາສະສິກຂາບົດ

## ວ່າດ້ວຍການພັກຢູ່ໃນກອງທັບ

## ເລື້ອງພຣະສັບພັກຄີ

[໓໑໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີມີທຸລະຕ້ອງຍ່າງຜ່ານກອງທັບ ໄດ້ພັກແຮມຢູ່ໃນກອງທັບເກີນ ໓ ຄືນ ພວກພົນຣົບຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກສະມະນະເຊື້ອສາຍສາກະຍະບຸດ ຈຶ່ງພັກແຮມຢູ່ໃນກອງທັບເກີນ ໓ ຄືນນໍ ບໍ່ແມ່ນເປັນລາບຂອງພວກເຮົາ ພວກເຮົາໄດ້ບໍ່ດີ ທີ່ພວກເຮົາມາພັກແຮມຢູ່ໃນກອງທັບກໍຍ້ອນການຄອງຊີບ ຍ້ອນຕ້ອງລ້ຽງດູບຸດພັນລະຍາ" ພິກຂຸທັງຫຼາຍ ໄດ້ຍິນພວກພົນຣົບເຫຼົ່ານັ້ນຕຳໜິປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງພັກແຮມຢູ່ໃນກອງທັບ ເກີນ ໓ ຣາຕີນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານພັກແຮມຢູ່ໃນກອງທັບເກີນ ໓ ຄືນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງພັກແຮມຢູ່ໃນກອງທັບເກີນ ໓ ຣາຕີນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໓໑໘] ກໍ ເມື່ອພິກຂຸມີເຫດຜົນຈຳເປັນຕ້ອງໄປໃນກອງທັບ ພິກຂຸນັ້ນ ເພິ່ງພັກແຮມຢູ່ໃນກອງທັບໄດ້ພຽງ ໒-໓ ຄືນ ຖ້າພັກແຮມຢູ່ເກີນກຳນົດນັ້ນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໓໑໙] ຄຳວ່າ ກໍ ເມື່ອພິກຂຸມີເຫດຜົນຈຳເປັນຕ້ອງໄປໃນກອງທັບ ຄື ມີເຫດຜົນຈຳເປັນ ມີທຸລະຈຳເປັນ

ຄຳວ່າ ພິກຂຸນັ້ນ ເພິ່ງພັກແຮມຢູ່ໃນກອງທັບໄດ້ພຽງ ໒-໓ ຄືນ ຄື ພິກຂຸຢູ່ໄດ້ ໒-໓ ຄືນ

ຄຳວ່າ ຖ້າພັກແຮມຢູ່ເກີນກຳນົດນັ້ນ ຄວາມວ່າ ເມື່ອດວງອາທິດອັດສະດົງໃນວັນທີ ໔ ພິກຂຸຍັງພັກແຮມຢູ່ໃນກອງທັບ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໓໒໐] ເກີນ ໓ ຄືນ ພິກຂຸສຳຄັນວ່າເກີນ ພັກຢູ່ໃນກອງທັບ ຕ້ອງອາບັດປາຈິດຕີ

ເກີນ ໓ ຄືນ ພິກຂຸບໍ່ແນ່ໃຈ ພັກຢູ່ໃນກອງທັບ ຕ້ອງອາບັດປາຈິດຕີ

ເກີນ ໓ ຄືນ ພິກຂຸສຳຄັນວ່າຢ່ອນກວ່າ ພັກຢູ່ໃນກອງທັບ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ຢ່ອນກວ່າ ໓ ຄືນ ພິກຂຸສຳຄັນວ່າເກີນ ຕ້ອງອາບັດທຸກກົດ

ຢ່ອນກວ່າ ໓ ຄືນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຢ່ອນກວ່າ ໓ ຄືນ ພິກຂຸສຳຄັນວ່າຍັງບໍ່ເກີນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໒໑] ໑. ພິກຂຸພັກຢູ່ ໒-໓ ຄືນ

໒. ພິກຂຸພັກຢູ່ຢ່ອນກວ່າ ໒-໓ ຄືນ

໓. ພິກຂຸພັກຢູ່ ໒ ຄືນ ແຕ່ອອກໄປກ່ອນອະຣຸນຂອງວັນທີ ໓ ແລ້ວກັບມາຢູ່ອີກ

໔. ພິກຂຸເຈັບໄຂ້ພັກຢູ່

໕. ພິກຂຸຢູ່ດ້ວຍທຸລະຂອງຜູ້ເປັນໄຂ້

໖. ພິກຂຸຢູ່ໃນກອງທັບທີ່ຖືກຂ້າເສິກລ້ອມ

໗. ພິກຂຸຖືກໃຜຄົນໃດຄົນໜຶ່ງລົບກວນ

໘. ພິກຂຸພັກຢູ່ໃນເວລາມີເຫດຂັດຂ້ອງ

໙. ພິກຂຸວິກົນຈະລິດ

໑໐. ພິກຂຸຕົ້ນບັນຍັດ

**ເສນາວາສະສິກຂາບົດທີ ໙ ຈົບ**

# ໕. ອະເຈລະກະວັກ

## ໑໐. ອຸຍໂຍທິກະສິກຂາບົດ

### ວ່າດ້ວຍການໄປເບິ່ງສະໜາມຮົບ

### ເລື້ອງພຣະສັບພັກຄີ

[໓໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີພັກແຮມຢູ່ໃນກອງທັບ ໒-໓ ຄືນ ໄປທີ່ສະໜາມຮົບແດ່ ທີ່ພັກພົນແດ່ ທີ່ຈັດຂະບວນທັບແດ່ ໄປເບິ່ງກອງທັບທີ່ຈັດເປັນຂະບວນແລ້ວແດ່ ພິກຂຸສັບພັກຄີອົງໜຶ່ງໄປທີ່ສະໜາມຮົບ ຖືກຍິງດ້ວຍລູກສອນ

ພວກຊາວບ້ານພາກັນເຍີ້ຍຫຍັນວ່າ "ເປັນຢ່າງໃດ? ຄູບາຮົບສະນຸກບໍ່ ທ່ານຊະນະໄດ້ຈັກແຕ້ມ" ພິກຂຸນັ້ນຖືກເຍີ້ຍຫຍັນຈົນເກີ້ເຂີນ

ພວກພົນຮົບຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງພາກັນທ່ຽວເບິ່ງສະໜາມຮົບແນວນີ້ນໍ? ບໍ່ແມ່ນເປັນລາບຂອງພວກເຮົາ ພວກເຮົາໄດ້ບໍ່ດີທີ່ພວກເຮົາຕ້ອງມາສູ່ສະໜາມຮົບກໍຍ້ອນການຄອງຊີບ ຍ້ອນຕ້ອງລ້ຽງດູບຸດພັນລະຍາ

ພິກຂຸທັງຫຼາຍ ໄດ້ຍິນພວກພົນຮົບຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໄປທ່ຽວເບິ່ງສະໜາມຮົບນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການ ຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໄປທ່ຽວເບິ່ງສະໜາມຮົບ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງທ່ຽວໄປເບິ່ງສະໜາມຮົບນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດ ຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໘໓] ຖ້າພິກຂຸພັກຢູ່ໃນກອງທັບ ໒-໓ ຄືນ ທ່ຽວໄປໃນສະໜາມຮົບກໍດີ ທີ່ພັກພົນກໍດີ ທີ່ຈັດຂະບວນທັບກໍດີ ໄປເບິ່ງກອງທັບທີ່ຈັດເປັນຂະບວນແລ້ວກໍດີ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໓໘໔] ຄຳວ່າ ຖ້າພິກຂຸພັກຢູ່ໃນກອງທັບ ໒-໓ ຄືນ ຄື ພິກຂຸພັກແຮມຢູ່ ໒-໓ ຄືນ

ທີ່ຊື່ວ່າ ສະໜາມຮົບ ໄດ້ແກ່ ສະຖານທີ່ຮົບເຊິ່ງຜາກົດຢູ່

ທີ່ຊື່ວ່າ ທີ່ພັກພົນ ໄດ້ແກ່ ກອງຊ້າງປະມານເທົ່ານີ້ ກອງມ້າປະມານເທົ່ານີ້ ກອງລົດປະມານເທົ່ານີ້ ກອງພົນຍ່າງປະມານເທົ່ານີ້

ທີ່ຊື່ວ່າ ທີ່ຈັດຂະບວນທັບ ໄດ້ແກ່ ກອງຊ້າງຈົ່ງຢູ່ທາງນີ້ ກອງມ້າຈົ່ງຢູ່ທາງນີ້ ກອງລົດຈົ່ງຢູ່ທາງນີ້ ກອງພົນຍ່າງຈົ່ງຢູ່ທາງນີ້

ທີ່ຊື່ວ່າ ກອງທັບ ໄດ້ແກ່ ກອງທັບຊ້າງ ກອງທັບມ້າ ກອງທັບລົດ ກອງທັບພົນຍ່າງ ກອງທັບຊ້າງມີຊ້າງ ໓ ເຊືອກເປັນຢ່າງໜ້ອຍ ກອງທັບມ້າມີມ້າ ໓ ຕົວເປັນຢ່າງໜ້ອຍ ກອງທັບລົດມີລົດ ໓ ຄັນເປັນຢ່າງໜ້ອຍ ກອງທັບພົນຍ່າງມີທະຫານຖືທະນູ ໔ ນາຍເປັນຢ່າງໜ້ອຍ

## ບົດພາຊະນີ

ພິກຂຸໄປເພື່ອຈະເບິ່ງ ຕ້ອງອາບັດທຸກກົດ
ພິກຂຸຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດປາຈິດຕີ
ພົ້ນວິໄສຈະເຫັນ ແຕ່ພິກຂຸຍັງແນມເບິ່ງອີກ ຕ້ອງອາບັດປາຈິດຕີ
ພິກຂຸໄປເພື່ອຈະເບິ່ງກອງທັບແຕ່ລະກອງ ຕ້ອງອາບັດທຸກກົດ
ພິກຂຸຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດທຸກກົດ
ພົ້ນວິໄສທີ່ຈະເຫັນ ແຕ່ພິກຂຸຍັງແນມເບິ່ງອີກ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໘໕] ໑. ພິກຂຸຢືນເບິ່ງຢູ່ໃນອາຮາມ

໒. ພິກຂຸເບິ່ງການຮົບພຸ່ງທີ່ຜ່ານມາຍັງທີ່ທີ່ພິກຂຸຢືນ ທີ່ພິກຂຸນັ່ງ ຫຼື ທີ່ພິກຂຸນອນ
໓. ພິກຂຸຍ່າງສວນທາງໄປພົບ
໔. ພິກຂຸມີທຸລະຍ່າງໄປພົບ
໕. ພິກຂຸເບິ່ງໃນເວລາມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ອຸຍໂຍທິກະສິກຂາບົດທີ ໑໐ ຈົບ**

**ອະເຈລະກະວັກທີ ໕ ຈົບ**

## ລວມສິກຂາບົດທີ່ມີໃນອະເຈລະກະວັກ

ອະເຈລະກະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ອະເຈລະກະສິກຂາບົດ | ວ່າດ້ວຍນັກບວດເປືອຍ |
| ໒. ອຸຍໂຍຊະນະສິກຂາບົດ | ວ່າດ້ວຍການສົ່ງກັບ |
| ໓. ສະໂພຊະນະສິກຂາບົດ | ວ່າດ້ວຍການເຂົ້າໄປແຊກແຊງໃນທີ່ທີ່ມີຄົນ ໒ ຄົນ |
| ໔. ຣະໂຫປະຕິດສັນນະສິກຂາບົດ | ວ່າດ້ວຍການນັ່ງໃນທີ່ລັບມີສິ່ງກຳບັງ |
| ໕. ຣະໂຫນິສັດຊະສິກຂາບົດ | ວ່າດ້ວຍການນັ່ງໃນທີ່ລັບ |
| ໖. ຈາຣິດຕະສິກຂາບົດ | ວ່າດ້ວຍການທ່ຽວສັນຈອນໄປ |
| ໗. ມະຫານາມະສິກຂາບົດ | ວ່າດ້ວຍພຣະເຈົ້າມະຫານາມະສາກະຍະ |
| ໘. ອຸຍຍຸດຕະເສນາສິກຂາບົດ | ວ່າດ້ວຍກອງທັບທີ່ເຄື່ອນຂະບວນອອກຮົບ |
| ໙. ເສນາວາສະສິກຂາບົດ | ວ່າດ້ວຍການພັກຢູ່ໃນກອງທັບ |
| ໑໐. ອຸຍໂຍທິກະສິກຂາບົດ | ວ່າດ້ວຍການໄປເບິ່ງສະໜາມຮົບ |

# ໕. ສຸຣາປານະວັກ

## ໝວດວ່າດ້ວຍການດື່ມສຸຣາ

### ໑. ສຸຣາປານະສິກຂາບົດ

### ວ່າດ້ວຍການດື່ມສຸຣາແລະເມໄຣ

### ເລື້ອງພຣະສາຄະຕະ

[໓໘໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າສະເດັດຈາຣິກຢູ່ໃນແຄວັນເຈຕີ ສະເດັດໄປທາງໝູ່ບ້ານພັນທະວະຕີ ພວກຄົນລ້ຽງງົວ ພວກຄົນລ້ຽງປະສຸສັດ ພວກຊາວນາ ພວກຄົນເດີນທາງໄດ້ເຫັນພຣະຜູ້ມີພຣະພາກເຈົ້າຊົງດຳເນີນມາແຕ່ໄກ ເມື່ອເຫັນແລ້ວ ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ພຣະອົງຜູ້ຈະເລີນ ພຣະອົງຢ່າສະເດັດໄປທ່າອຳພະຕິດຖະເລີຍ ນາກມີລິດ ມີພິດຢູ່ແຂ້ວ ມີພິດແຮງກ້າ ອາໄສຢູ່ທີ່ອາສົມຂອງຊະດິນຢູ່ທ່າອຳພະຕິດຖະ ຂໍນາກນັ້ນ ຢ່າທຳຮ້າຍພຣະຜູ້ມີພຣະພາກເຈົ້າເລີຍ ຂ້ານ້ອຍ

ເມື່ອພວກເຂົາຂາບທູນເຊັ່ນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງນິ່ງ ແມ່ນຄັ້ງທີ ໒ ຯລຯ ແມ່ນຄັ້ງທີ ໓ ພວກຄົນລ້ຽງງົວ ພວກຄົນລ້ຽງປະສຸສັດ ພວກຊາວນາ ພວກຄົນເດີນທາງກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ພຣະອົງຜູ້ຈະເລີນ ພຣະອົງຢ່າສະເດັດໄປທ່າອຳພະຕິດຖະເລີຍ ນາກມີລິດ ມີພິດຢູ່ແຂ້ວ ອາໄສຢູ່ທີ່ອາສົມຂອງຊະດິນຢູ່ທ່າອຳພະຕິດຖະ ຂໍນາກນັ້ນຢ່າທຳຮ້າຍພຣະຜູ້ມີພຣະ ພາກເຈົ້າເລີຍ”

ແມ່ນຄັ້ງທີ ໓ ພຣະຜູ້ມີພຣະພາກເຈົ້າກໍໄດ້ຊົງນິ່ງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບຈົນເຖິງໝູ່ບ້ານພັນທະວະຕີ ປະທັບຢູ່ໃນໝູ່ບ້ານພັນທະວະຕີນັ້ນ

ຄັ້ງນັ້ນ ທ່ານພຣະສາຄະຕະຍ່າງເຂົ້າໄປທີ່ທ່າອຳພະຕິດຖະຈົນເຖິງອາສົມຂອງຊະດິນ ເມື່ອເຖິງແລ້ວໄດ້ເຂົ້າໄປໃນໂຮງບູຊາໄຟ ປູເຄື່ອງປູດ້ວຍຫຍ້າແລ້ວຈຶ່ງນັ່ງຄູ້ບັນລັງ ຕັ້ງກາຍກົງດຳລົງສະຕິໄວ້ສະເພາະໜ້າ

ພໍນາກນັ້ນເຫັນທ່ານພຣະສາຄະຕະເຂົ້າມາແລ້ວ ກໍຮູ້ສຶກບໍ່ພໍໃຈ ຈຶ່ງໄດ້ເຮັດໃຫ້ຄວັນກະຈາຍຂຶ້ນ

ແມ່ນທ່ານພຣະສາຄະຕະກໍເຮັດໃຫ້ຄວັນກະຈາຍຂຶ້ນຄືກັນ ນາກນັ້ນທົນການລົບຫຼູ່ບໍ່ໄດ້ ຈຶ່ງພົ່ນໄຟສູ້ ແມ່ນທ່ານພຣະສາຄະຕະກໍເຂົ້າເຕໂຊກະສິນພົ່ນໄຟສູ້ຄືກັນ ໃນບັດນັ້ນ ທ່ານພຣະສາຄະຕະ ເມື່ອຜາບອຳນາດຂອງນາກນັ້ນໄດ້ແລ້ວ ຈຶ່ງຍ່າງໄປທາງໝູ່ບ້ານພັນທະວະຕີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນໝູ່ບ້ານພັນທະວະຄິຕາມພຣະອັດທະຍາໄສແລ້ວ ຈຶ່ງສະເດັດຈາຣິກໄປທາງນະຄອນໂກສຳພີ ພວກອຸປາສົກອຸປາສິກາ ຊາວນະຄອນໂກສຳພີຮັບຮູ້ຂ່າວວ່າ ພຣະສາຄະຕະຕໍ່ສູ້ກັບນາກທີ່ທ່າອຳພະຕິດຖະ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນໂກສຳພີບັດນັ້ນ ພວກອຸປາສົກ ແລະ ອຸປາສິກາ ຊາວນະຄອນໂກສຳພີພາກັນຮັບສະເດັດພຣະຜູ້ມີພຣະພາກເຈົ້າແລ້ວເຂົ້າໄປຫາທ່ານພຣະສາຄະຕະ ໄຫວ້ແລ້ວຢືນຢູ່ ໃນທີ່ສົມຄວນ ພວກອຸປາສົກອຸປາສິກາ ຊາວນະຄອນໂກສຳພີຜູ້ຢືນຢູ່ໃນທີ່ສົມຄວນ ໄດ້ກ່າວກັບທ່ານພຣະສາຄະຕະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ສິ່ງທີ່ຫາໄດ້ຍາກ ແລະ ເປັນທີ່ພໍໃຈຂອງຄູບາມີອັນໃດແດ່ ພວກຂ້າພະເຈົ້າຈະຈັດກຽມອັນໃດໄດ້ເພື່ອທ່ານ

ເມື່ອອຸປາສົກອຸປາສິກາ ກ່າວຢ່າງນີ້ ພວກພິກຂຸສັບພັກຄີໄດ້ກ່າວກັບພວກອຸປາສົກ ອຸປາສິກາຊາວນະຄອນໂກສຳພີດັ່ງນີ້ວ່າ "ມີຢູ່ທ່ານທັງຫຼາຍ ຫົວເຊື້ອສຸຣາຊື່ ກາໂປຕິກະຫາໄດ້ຍາກ ເປັນທີ່ພໍໃຈຂອງພິກຂຸທັງຫຼາຍ ພວກທ່ານຈົ່ງຈັດກຽມຫົວເຊື້ອສຸຣາຊື່ ກາໂປຕິກະ ນັ້ນໄວ້

ຄັ້ງນັ້ນ ພວກອຸປາສົກອຸປາສິກາ ຊາວນະຄອນໂກສຳພີຈັດກຽມຫົວເຊື້ອສຸຣາຊື່ ກາໂປຕິກະ ໄວ້ໃຫ້ທຸກຄົວເຮືອນ ພໍເຫັນທ່ານພຣະສາຄະຕະຍ່າງບິນທະບາດ ຈຶ່ງໄດ້ກ່າວກັບທ່ານພຣະສາຄະຕະດັ່ງນີ້ວ່າ "ຂໍນິມົນຄູບາສາຄະຕະດື່ມຫົວເຊື້ອສຸຣາຊື່ ກາໂປຕິກະ ນີ້ເທີ້ນ ຂໍນິມົນຄູບາສາຄະຕະດື່ມຫົວເຊື້ອສຸຣາຊື່ ກາໂປຕິກະ ນີ້ເທີ້ນ

ເມື່ອທ່ານພຣະສາຄະຕະດື່ມຫົວເຊື້ອສຸຣາຊື່ ກາໂປຕິກະ ຂອງທຸກ ໆ ຄົວເຮືອນແລ້ວອອກຈາກເມືອງ ໄດ້ລົ້ມກິ້ງຢູ່ປະຕູເມືອງ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກມາພ້ອມພິກຂຸຫຼາຍອົງ ໄດ້ທອດພຣະເນດເຫັນທ່ານພຣະສາຄະຕະນອນກິ້ງຢູ່ທີ່ປະຕູເມືອງ ເມື່ອເຫັນແລ້ວຈຶ່ງຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງພາສາຄະຕະໄປ"

ພິກຂຸທັງຫຼາຍ ຮັບສະໜອງພຣະພຸດທະດຳຣັດແລ້ວ ຊ່ອຍກັນນຳທ່ານພຣະສາຄະຕະກັບໄປສູ່ອາຣາມ ໃຫ້ນອນອວ່າຍຫົວໄປທາງພຣະຜູ້ມີພຣະພາກເຈົ້າ ແຕ່ທ່ານພຣະສາຄະຕະກັບນອນອວ່າຍຕີນໄປທາງພຣະຜູ້ມີພຣະພາກເຈົ້າ

ໃນບັດນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ແຕ່ກ່ອນນີ້ສາຄະຕະເຄີຍມີຄວາມເຄົາລົບຢຳເກງຕະຖາຄົດບໍ່ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຢ່າງນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ບັດນີ້ສາຄະຕະຍັງມີຄວາມເຄົາລົບຢຳເກງໃນຕະຖາຄົດຢູ່ອີກບໍ?

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ມີເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ສາຄະຕະມີລິດສາມາດຕໍ່ສູ້ກັບນາກທີ່ທ່າອຳພະຕິດຖະ ບໍ່ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນເຊັ່ນນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ໃນເວລານີ້ ສາຄະຕະພໍຈະຕໍ່ສູ້ແມ່ນກັບງູນ້ຳໄດ້ບໍ?

ພິກຂຸທັງຫຼາຍຂາບທູນວ່າ "ສູ້ບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ນ້ຳທີ່ດື່ມເຂົ້າໄປແລ້ວເຮັດໃຫ້ຄວາມຈຳໄດ້ໝາຍຮູ້ເສື່ອມໄປນັ້ນ ຄວນຈະດື່ມບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ຄວນດື່ມເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ການກະທຳຂອງສາຄະຕະນັ້ນບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງ ສາຄະຕະຈຶ່ງ ດື່ມນ້ຳເມົານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໘໗] ພິກຂຸຕ້ອງອາບັດປາຈິດຕິ ຍ້ອນດື່ມສຸຣາ ແລະ ເມໄຣ

### ເລື້ອງພຣະສາຄະຕະ ຈົບ

## ສິກຂາບົດວິພັງ

[໓໘໘] ທີ່ຊື່ວ່າ ສຸຣາ ໄດ້ແກ່ ສຸຣາທີ່ເຮັດຈາກແປ້ງ ສຸຣາທີ່ເຮັດຈາກເຂົ້າໜົມ ສຸຣາທີ່ເຮັດຈາກເຂົ້າສຸກ ສຸຣາໝັກແປ້ງເຊື້ອເຫຼົ້າ ສຸຣາທີ່ປະສົມເຄື່ອງປຸງຫຼາຍຊະນິດ

ທີ່ຊື່ວ່າ ເມໄຣ ໄດ້ແກ່ ນ້ຳໝັກດອງດອກໄມ້ ນ້ຳໝັກດອງໝາກໄມ້ ນ້ຳໝັກດອງນ້ຳເຜີ້ງນ້ຳໝັກດອງນ້ຳອ້ອຍ ນ້ຳໝັກດອງທີ່ປະສົມເຄື່ອງປຸງຫຼາຍຊະນິດ

ຄຳວ່າ ດື່ມ ຄື ພິກຂຸດື່ມ ໂດຍທີ່ສຸດແມ່ນດື່ມດ້ວຍປາຍຫຍ້າຄາແຕະ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

### ຕິກະປາຈິດຕິ

ນ້ຳເມົາ ພິກຂຸສຳຄັນວ່າເປັນນ້ຳເມົາ ດື່ມ ຕ້ອງອາບັດປາຈິດຕີ
ນ້ຳເມົາ ພິກຂຸບໍ່ແນ່ໃຈ ດື່ມ ຕ້ອງອາບັດປາຈິດຕີ
ນ້ຳເມົາ ພິກຂຸສຳຄັນວ່າບໍ່ແມ່ນນ້ຳເມົາ ດື່ມ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ບໍ່ແມ່ນນ້ຳເມົາ ພິກຂຸສຳຄັນວ່າເປັນນ້ຳເມົາ ຕ້ອງອາບັດທຸກກົດ
ບໍ່ແມ່ນນ້ຳເມົາ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ແມ່ນນ້ຳເມົາ ພິກຂຸສຳຄັນວ່າບໍ່ແມ່ນນ້ຳເມົາ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໒໙] ໑. ພິກຂຸດື່ມຢາດອງທີ່ມີສີ ກິ່ນ ຣົດ ເໝືອນນ້ຳເມົາແຕ່ບໍ່ແມ່ນນ້ຳເມົາ
໒. ພິກຂຸດື່ມນ້ຳເມົາໃສ່ໃນແກງ
໓. ພິກຂຸດື່ມນ້ຳເມົາໃສ່ໃນຊີ້ນ
໔. ພິກຂຸດື່ມນ້ຳເມົາເຈືອປົນໃນນ້ຳມັນ
໕. ພິກຂຸດື່ມນ້ຳເມົາເຈືອປົນນ້ຳອ້ອຍດອງໝາກຂາມປ້ອມ
໖. ພິກຂຸດື່ມຢາດອງອະຣິດຖະເຊິ່ງບໍ່ແມ່ນນ້ຳເມົາ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສຸຣາປານະສິກຂາບົດທີ ໑ ຈົບ**

# ໕. ສຸຣາປານະວັກ

## ໔. ອັງຄຸລິປະໂຕທະກະສິກຂາບົດ
## ວ່າດ້ວຍການໃຊ້ນິ້ວມືຈີ້ຍອກກັນ

### ເລື້ອງພຣະສັບພັກຄີ

[໓໓໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໃຊ້ນິ້ວມືຈີ້ພິກຂຸອົງໜຶ່ງໃນກຸ່ມພິກຂຸສັດຕະຣະສະວັກຄີໃຫ້ຫົວ ພິກຂຸນັ້ນຫົວຈົນເມື່ອຍ ຫັນໃຈບໍ່ທັນເຖິງແກ່ມໍຣະນະພາບ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໃຊ້ນິ້ວມືຈີ້ພິກຂຸໃຫ້ຫົວແນວນັ້ນນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ນິ້ວມືຈີ້ ພິກຂຸໃຫ້ຫົວແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ນິ້ວມືຈີ້ພິກຂຸໃຫ້ຫົວນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໓໓໑] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນໃຊ້ນິ້ວມືຈີ້

#### ເລື້ອງພຣະສັບພັກຄີ ຈົບ

### ສິກຂາບົດວິພັງ

[໓໓໔] ທີ່ຊື່ວ່າ ໃຊ້ນິ້ວມືຈີ້ ຄື ພິກຂຸຈີ້ດ້ວຍນິ້ວມື

ອຸປະສຳບັນປະສົງຈະໃຫ້ອຸປະສຳບັນຫົວ ໃຊ້ກາຍຈັບຕ້ອງກາຍ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ໃຊ້ນິ້ວມືຈີ້ໃຫ້ຫົວ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸບໍ່ແນ່ໃຈ ໃຊ້ນິ້ວມືຈີ້ໃຫ້ຫົວ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ໃຊ້ນິ້ວມືຈີ້ໃຫ້ຫົວ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

[໕໕໕] ພິກຂຸໃຊ້ກາຍຈັບຕ້ອງກາຍອະນຸປະສຳບັນ ຕ້ອງອາບັດທຸກກົດ
ພິກຂຸໃຊ້ກາຍຈັບຕ້ອງຂອງເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ
ພິກຂຸໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື
[໕໕໔] ໑. ພິກຂຸບໍ່ປະສົງຈະໃຫ້ຫົວ ຈັບຕ້ອງກາຍເມື່ອມີເຫດຈຳເປັນ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ອັງຄຸລິປະໂຕທະກະສິກຂາບົດທີ ໔ ຈົບ**

# ໖. ສຸຣາປານະວັກ

## ໑. ຫັດສະທຳມະສິກຂາບົດ

### ວ່າດ້ວຍການຫຼິ້ນນ້ຳ

### ເລື່ອງພຣະສັດຕະຣະສະວັກຄີ

[໑໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັດຕະຣະສະວັກຄີຫຼິ້ນນ້ຳໃນແມ່ນ້ຳອະຈິຣະວະດີ ເວລານັ້ນ ພຣະເຈົ້າປະເສນທິໂກສົນປະທັບຢູ່ທີ່ຜາສາດຊັ້ນເທິງກັບພຣະນາງມັນລິກາເທວີ ພຣະອົງໄດ້ທອດພຣະເນດເຫັນພວກພິກຂຸສັດຕະຣະສະວັກຄີຫຼິ້ນນ້ຳຢູ່ໃນແມ່ນ້ຳອະຈິຣະວະດີ ເມື່ອທອດພຣະເນດເຫັນແລ້ວ ຈຶ່ງຮັບສັ່ງກັບພຣະນາງມັນລິກາເທວີດັ່ງນີ້ວ່າ "ນ້ອງມັນລິກາ ນັ້ນພຣະອະຣະຫັນເຫຼົ່ານັ້ນກຳລັງຫຼິ້ນນ້ຳ"

ພຣະນາງຂາບທູນວ່າ "ພຣະຜູ້ມີພຣະພາກເຈົ້າຄົງຈະຍັງບໍ່ໄດ້ຊົງບັນຍັດສິກຂາບົດ ຫຼືພິກຂຸເຫຼົ່ານັ້ນຍັງບໍ່ຮອບຮູ້ພຣະບັນຍັດກໍເປັນໄປໄດ້ ຂ້ານ້ອຍ"

ບັດນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຊົງມີພຣະດຳຣິດັ່ງນີ້ວ່າ "ດ້ວຍອຸບາຍແນວໃດນໍ ທີ່ເຮັດໃຫ້ເຮົາບໍ່ຕ້ອງຂາບທູນພຣະຜູ້ມີພຣະພາກເຈົ້າ ແລະພຣະຜູ້ມີພຣະພາກເຈົ້າຈະຊົງຮູ້ໄດ້ວ່າພິກຂຸເຫຼົ່ານີ້ຫຼິ້ນນ້ຳກັນ" ເມື່ອແລ້ວພຣະເຈົ້າປະເສນທິໂກສົນ ຈຶ່ງຮັບສັ່ງໃຫ້ນິມົນພວກພິກຂຸສັດຕະຣະສະວັກຄີມາ ແລ້ວພຣະຣາດຊະທານນ້ຳອ້ອຍເປັນຈຳນວນຫຼາຍແກ່ພິກຂຸເຫຼົ່ານັ້ນດ້ວຍຮັບສັ່ງວ່າ "ຄູບາຜູ້ຈະເລີນ ຂໍຄູບາທັງຫຼາຍໂຜດຖວາຍນ້ຳອ້ອຍນີ້ແດ່ ພຣະຜູ້ມີພຣະພາກເຈົ້າ"

ພວກພິກຂຸສັດຕະຣະສະວັກຄີນຳນ້ຳອ້ອຍນັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນດັ່ງນີ້ວ່າ "ພຣະເຈົ້າປະເສນທິໂກສົນຖວາຍນ້ຳອ້ອຍນີ້ແດ່ ພຣະຜູ້ມີພຣະພາກເຈົ້າ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ພຣະຣາຊາພົບພວກທ່ານຢູ່ໃສ"

ພວກພິກຂຸສັດຕະຣະສະວັກຄີຂາບທູນວ່າ "ພຣະຣາຊາພົບພວກຂ້າພຣະອົງກຳລັງຫຼິ້ນນ້ຳຢູ່ໃນແມ່ນ້ຳອະຈິຣະວະດີ ຂ້ານ້ອຍ"

### ຊົງຕຳໜິແລ້ວບັນຍັດສິກຂາບົດ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງພາກັນຫຼິ້ນນ້ຳນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ

ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[๓๓๒] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນຫຼິ້ນນ້ຳ

### ເລື້ອງພຣະສັດຕະຣະສະວັກຄີ ຈົບ

## ສິກຂາບົດວິພັງ

[๓๓๓] ທີ່ຊື່ວ່າ ຫຼິ້ນນ້ຳ ຄື ພິກຂຸປະສົງຈະຫຼິ້ນນ້ຳຈຶ່ງດຳລົງ ຜຸດຂຶ້ນ ຫຼື ລອຍໃນນ້ຳເລິກພໍຖ້ວມຂໍ້ຕີນໄດ້ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[๓๓๔] ຫຼິ້ນນ້ຳ ພິກຂຸສຳຄັນວ່າຫຼິ້ນ ຕ້ອງອາບັດປາຈິດຕີ
ຫຼິ້ນນ້ຳ ພິກຂຸບໍ່ແນ່ໃຈ ຕ້ອງອາບັດປາຈິດຕີ
ຫຼິ້ນນ້ຳ ພິກຂຸສຳຄັນວ່າບໍ່ໄດ້ຫຼິ້ນ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸຫຼິ້ນນ້ຳຕື້ນໃຕ້ຂໍ້ຕີນ ຕ້ອງອາບັດທຸກກົດ
ພິກຂຸນັ່ງເຮືອຫຼິ້ນໃນນ້ຳ ຕ້ອງອາບັດທຸກກົດ
ພິກຂຸໃຊ້ມື ໃຊ້ຕີນ ໃຊ້ໄມ້ ຫຼື ໃຊ້ກະເບື້ອງຕີນ້ຳ ຕ້ອງອາບັດທຸກກົດ
ພິກຂຸຫຼິ້ນນ້ຳ ນ້ຳຊາວເຂົ້າ ນ້ຳນົມ ນ້ຳມັນງົວ ນ້ຳຍ້ອມ ນ້ຳປັດສາວະ ຫຼື ນ້ຳຂີ້ຕົມ ທີ່ຂັງໃນພາຊະນະ ຕ້ອງອາບັດທຸກກົດ
ບໍ່ໄດ້ຫຼິ້ນນ້ຳ ພິກຂຸສຳຄັນວ່າຫຼິ້ນ ຕ້ອງອາບັດທຸກກົດ
ບໍ່ໄດ້ຫຼິ້ນນ້ຳ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ໄດ້ຫຼິ້ນນ້ຳ ພິກຂຸສຳຄັນວ່າບໍ່ໄດ້ຫຼິ້ນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[๓๓๕] ໑. ພິກຂຸບໍ່ປະສົງຈະຫຼິ້ນນ້ຳ

໔. ພິກຂຸລົງນ້ຳແລ້ວດຳລົງ ຜຸດຂຶ້ນ ຫຼື ລອຍໃນນ້ຳເມື່ອມີເຫດຈຳເປັນ
໓. ພິກຂຸຈະຂ້າມຟາກຈຶ່ງດຳລົງ ຜຸດຂຶ້ນ ຫຼື ລອຍໃນນ້ຳ
໔. ພິກຂຸຜູ້ລອຍນ້ຳໃນເວລາມີເຫດຂັດຂ້ອງ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ຫັດສະທຳມະສິກຂາບົດທີ ໑ ຈົບ**

# ໖. ສຸຣາປານະວັກ

## ໔. ອະນາທະຣິຍະສິກຂາບົດ

## ວ່າດ້ວຍຄວາມບໍ່ເອື້ອເຟື້ອຕໍ່ຄຳຕັກເຕືອນ

## ເລື້ອງພຣະສັນນະ

[໓໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ທ່ານພຣະສັນນະປະພຶດບໍ່ສົມຄວນ ພິກຂຸທັງຫຼາຍກ່າວຕັກເຕືອນ ຢ່າງນີ້ວ່າ "ທ່ານສັນນະ ທ່ານຢ່າເຮັດຢ່າງນັ້ນ ການເຮັດເຊັ່ນນີ້ບໍ່ສົມຄວນ" ທ່ານບໍ່ເອື້ອເຟື້ອ ຍັງຂືນເຮັດຢູ່ຄືເກົ່າ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະສັນນະຈຶ່ງບໍ່ເອື້ອເຟື້ອນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະສັນນະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານບໍ່ເອື້ອເຟື້ອ ແມ່ນບໍ?" ທ່ານພຣະສັນນະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດເປັນຫຍັງທ່ານຈຶ່ງບໍ່ເອື້ອເຟື້ອນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໔໑] ພິກຂຸຕ້ອງອາບັດປາຈິດຕີ ຍ້ອນບໍ່ເອື້ອເຟື້ອ

**ເລື້ອງພຣະສັນນະ ຈົບ**

## ສິກຂາບົດວິພັງ

[໓໔໘] ທີ່ຊື່ວ່າ ຄວາມບໍ່ເອື້ອເຟື້ອ ໄດ້ແກ່ ຄວາມບໍ່ເອື້ອເຟື້ອ ໒ ຢ່າງ ຄື (໑) ຄວາມບໍ່ເອື້ອເຟື້ອຕໍ່ບຸກຄົນ (໒) ຄວາມບໍ່ເອື້ອເຟື້ອຕໍ່ທຳ

ທີ່ຊື່ວ່າ ຄວາມບໍ່ເອື້ອເຟື້ອຕໍ່ບຸກຄົນ ໄດ້ແກ່ ພິກຂຸຖືກອຸປະສຳບັນຕັກເຕືອນດ້ວຍພຣະບັນຍັດ ບໍ່ເອື້ອເຟື້ອດ້ວຍກ່າວວ່າ "ຜູ້ນີ້ຖືກສົງລົງອຸກເຂປະນີຍະກຳ ຖືກສົງດູໝິ່ນ ຫຼື ຖືກສົງຕຳໜິຄຳເວົ້າຂອງຜູ້ນີ້ບໍ່ໜ້າເຮັດຕາມ" ຕ້ອງອາບັດປາຈິດຕີ

ທີ່ຊື່ວ່າ ຄວາມບໍ່ເອື້ອເຟື້ອຕໍ່ທຳ ໄດ້ແກ່ ພິກຂຸຖືກອຸປະສຳບັນຕັກເຕືອນດ້ວຍ ພຣະບັນຍັດ ບໍ່ເອື້ອເຟື້ອດ້ວຍກ່າວວ່າ "ຈະເຮັດຢ່າງໃດ ທຳຂໍ້ນີ້ເພິ່ງເສື່ອມ ເພິ່ງສູນ ຫຼື ເພິ່ງອັນຕະຣະທານໄປ" ຫຼືວ່າທ່ານບໍ່ປະສົງຈະສຶກສາພຣະບັນຍັດນັ້ນ ຈຶ່ງບໍ່ເອື້ອເຟື້ອ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໓໔໙] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ບໍ່ເອື້ອເຟື້ອ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸບໍ່ແນ່ໃຈ ບໍ່ເອື້ອເຟື້ອ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ບໍ່ເອື້ອເຟື້ອ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸອັນອຸປະສຳບັນຕັກເຕືອນດ້ວຍເລື້ອງທີ່ບໍ່ແມ່ນພຣະບັນຍັດ ບໍ່ເອື້ອເຟື້ອດ້ວຍກ່າວວ່າ "ເລື້ອງນີ້ບໍ່ເປັນໄປເພື່ອຄວາມຂັດເກົາ ບໍ່ເປັນໄປເພື່ອຄວາມກຳຈັດ ບໍ່ເປັນໄປເພື່ອຄວາມເປັນຜູ້ໜ້າເຫຼື້ອມໃສ ບໍ່ເປັນໄປເພື່ອຄວາມບໍ່ກໍ່ ບໍ່ເປັນໄປເພື່ອຜາຣົບຄວາມພຽນ" ຕ້ອງອາບັດທຸກກົດ

ພິກຂຸອັນອະນຸປະສຳບັນຕັກເຕືອນດ້ວຍພຣະບັນຍັດ ຫຼື ບໍ່ແມ່ນພຣະບັນຍັດ ບໍ່ເອື້ອເຟື້ອດ້ວຍກ່າວວ່າ "ເລື້ອງນີ້ບໍ່ເປັນໄປເພື່ອຄວາມຂັດເກົາ ບໍ່ເປັນໄປເພື່ອຄວາມກຳຈັດ ບໍ່ເປັນໄປເພື່ອຄວາມເປັນຜູ້ໜ້າເຫຼື້ອມໃສ ບໍ່ເປັນໄປເພື່ອຄວາມບໍ່ກໍ່ ບໍ່ເປັນໄປເພື່ອຜາຣົບຄວາມພຽນ" ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໘໔] ໑. ພິກຂຸຜູ້ກ່າວວ່າ "ອາຈານຂອງພວກເຮົາຮຽນກັນມາ ສອບຖາມກັນມາຢ່າງນີ້"

໔. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ອະນາທະຣິຍະສິກຂາບົດທີ ໔ ຈົບ**

# ໖. ສຸຣາປານະວັກ

## ໕. ພິງສາປະນະສິກຂາບົດ

## ວ່າດ້ວຍການເຮັດໃຫ້ຕົກໃຈ

## ເລື້ອງພຣະສັບພັກຄີ

[໓໘໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຮັດໃຫ້ພວກພິກຂຸສັດຕະຣະສະວັກຄີຕົກໃຈ ພວກພິກຂຸເຫຼົ່ານັ້ນຖືກເຮັດໃຫ້ຕົກໃຈ ຈຶ່ງຮ້ອງໄຫ້ ພິກຂຸທັງຫຼາຍກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເຮັດຫຍັງ" ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ພວກພິກຂຸສັບພັກຄີເຮັດໃຫ້ພວກເຮົາຕົກໃຈ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງເຮັດໃຫ້ພິກຂຸຕົກໃຈນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຮັດໃຫ້ພິກຂຸຕົກໃຈແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງເຮັດໃຫ້ພິກຂຸຕົກໃຈນໍ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໔໖] ພິກຂຸໃດເຮັດໃຫ້ພິກຂຸຕົກໃຈ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໓໔໗] ຄຳວ່າ ກໍ່ຫລຍໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລຍໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໄດ້ແກ່ ພິກຂຸອື່ນ

ຄຳວ່າ ເຮັດໃຫ້ຫລຍຕົກໃຈ ຄວາມວ່າ ອຸປະສຳບັນຕ້ອງການຈະເຮັດໃຫ້ອຸປະສຳບັນຕົກໃຈ ນຳ ຮູບ ສຽງ ກິ່ນ ຣົດ ຫຼື ໂຜດຖັບພະທີ່ບໍ່ໜ້າພໍໃຈເຂົ້າໄປໃກ້ ພິກຂຸຜູ້ຖືກເຮັດໃຫ້ຕົກໃຈນັ້ນຈະຢ້ານ ຫຼື ບໍ່ຢ້ານກໍຕາມ ຕ້ອງອາບັດປາຈິດຕີ

ອຸປະສຳບັນຕ້ອງການຈະເຮັດໃຫ້ອຸປະສຳບັນຕົກໃຈ ບອກທາງກັນດານຍ້ອນມີໂຈນ ກັນດານຍ້ອນມີສັດຮ້າຍ ຫຼື ກັນດານຍ້ອນມີປີສາດ ພິກຂຸຜູ້ຖືກເຮັດໃຫ້ຕົກໃຈຈະຢ້ານ ຫຼື ບໍ່ຢ້ານກໍຕາມ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໓໔໘] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ເຮັດໃຫ້ຕົກໃຈ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ເຮັດໃຫ້ຕົກໃຈ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ເຮັດໃຫ້ຕົກໃຈ ຕ້ອງອາບັດປາຈິດຕີ

### ທຸກກົດ

ອຸປະສຳບັນຕ້ອງການຈະເຮັດໃຫ້ອະນຸປະສຳບັນຕົກໃຈ ຈຶ່ງນຳຮູບ ສຽງ ກິ່ນ ຣົດ ຫຼື ໂຜດຖັບພະທີ່ບໍ່ໜ້າພໍໃຈເຂົ້າໄປໃກ້ ອະນຸປະສຳປັນຜູ້ຖືກເຮັດໃຫ້ຕົກໃຈນັ້ນຈະຢ້ານ ຫຼື ບໍ່ຢ້ານກໍຕາມ ຕ້ອງອາບັດທຸກກົດ

ອຸປະສຳບັນຕ້ອງການຈະເຮັດໃຫ້ອະນຸປະສຳບັນຕົກໃຈ ບອກທາງກັນດານຍ້ອນມີໂຈນກັນດານຍ້ອນມີສັດຮ້າຍ ຫຼື ກັນດານຍ້ອນມີຜີສາດ ອະນຸປະສຳບັນຜູ້ຖືກເຮັດໃຫ້ຕົກໃຈນັ້ນຈະຢ້ານຫຼືບໍ່ຢ້ານກໍຕາມ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໔໙] ໑. ພິກຂຸບໍ່ຕ້ອງການຈະເຮັດໃຫ້ຕົກໃຈ ນຳຮູບ ສຽງ ກິ່ນ ຣົດ ຫຼື ໂຜດຖັບພະເຂົ້າໄປໃກ້

໒. ພິກຂຸບໍ່ຕ້ອງການຈະເຮັດໃຫ້ຕົກໃຈ ບອກທາງກັນດານຍ້ອນມີໂຈນ ກັນດານຍ້ອນມີສັດຮ້າຍ ຫຼື ກັນດານຍ້ອນມີຜີສາດ

໓. ພິກຂຸວິກົນຈະລິດ

໔. ພິກຂຸຕົ້ນບັນຍັດ

**ພິງສາປະນະສິກຂາບົດທີ ໔ ຈົບ**

# ໖. ສຸຣາປານະວັກ

## ໖. ໂຊຕິກະສິກຂາບົດ

### ວ່າດ້ວຍການດັງໄຟຜີງ

### ເລື້ອງພິກຂຸຫຼາຍອົງ

[໓໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນເພສະກະລາ ມະຣິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວັນພັກຄະ ຄັ້ງນັ້ນໃນລະດູໜາວ ພວກພິກຂຸດັງໄຟໃສ່ຂອນໄມ້ໃຫຍ່ຂອນໜຶ່ງເຊິ່ງມີໂກນແລ້ວຜີງ ງູເຫົ່າໃນໂກນໄມ້ນັ້ນ ພໍຖືກໄຟຮ້ອນ ໄດ້ເລືອອອກມາໄລ່ພວກພິກຂຸ ພິກຂຸທັງຫຼາຍແລ່ນໜີໄປໃນທີ່ນັ້ນ ໆ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພິກຂຸທັງຫຼາຍຈຶ່ງດັງໄຟຜີງນໍ” ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພິກຂຸທັງຫຼາຍດັງໄຟຜີງ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ພິກຂຸທັງຫຼາຍ ເປັນຫຍັງພວກໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງດັງໄຟຜີງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດຕ້ອງການຜີງໄຟ ດັງ ຫຼື ໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸຫຼາຍອົງ ຈົບ

## ຊົງອະນຸຍາດໃຫ້ພິກຂຸເປັນໄຂ້ຜີງໄຟໄດ້

[໓໕໑] ສະໄໝນັ້ນ ພິກຂຸທັງຫຼາຍເປັນໄຂ້ ພວກພິກຂຸຜູ້ມີໜ້າທີ່ສອບຖາມອາການໄຂ້ ໄດ້ກ່າວກັບພວກພິກຂຸເຈັບໄຂ້ດັ່ງນີ້ວ່າ "ທ່ານທັງຫຼາຍ ສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?" ພວກພິກຂຸຕອບວ່າ "ເມື່ອກ່ອນພວກຂ້ານ້ອຍດັງໄຟຜີງ ດັ່ງນັ້ນຈຶ່ງມີຄວາມຜາສຸກ ແຕ່ທັນທີພວກຂ້ານ້ອຍມີຄວາມຢຳເກງຢູ່ວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ ຈຶ່ງບໍ່ກ້າຜີງໄຟ ດັ່ງນັ້ນຈຶ່ງບໍ່ມີຄວາມຜາສຸກ

ພິກຂຸທັງຫຼາຍ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າສັ່ງກັບພິກຂຸທັງຫຼາຍວ່າ "ໆລໆ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ດັງໄຟຫຼືໃຊ້ໃຫ້ດັງໄຟຜີງໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດບໍ່ເປັນໄຂ້ ຕ້ອງການຜີງໄຟ ດັງ ຫຼື ໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ໄຕ້ປະທີບ

[໓໕໘] ສະໄໝນັ້ນ ພິກຂຸທັງຫຼາຍມີຄວາມຢຳເກງການໄຕ້ປະທີບແດ່ ການດັງໄຟແດ່

ການໄຕ້ໄຟໃນເຮືອນໄຟແດ່ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດັງໄຟ ຫຼື ໃຊ້ໃຫ້ດັງໄຟຍ້ອນມີເຫດຜົນທີ່ສົມຄວນ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະອະນຸບັນຍັດ

[໓໕໓] ອັນໜຶ່ງ ພິກຂຸໃດບໍ່ເປັນໄຂ້ ຕ້ອງການຜີງໄຟ ດັງ ຫຼື ໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຜົນທີ່ສົມຄວນ

## ສິກຂາບົດວິພັງ

[໓໕໔] ຄຳວ່າ ອັນໜຶ່ງໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ບໍ່ເປັນໄຂ້ ຄື ພິກຂຸຜູ້ເວັ້ນຈາກໄຟກໍມີຄວາມຜາສຸກ

ທີ່ຊື່ວ່າ ເປັນໄຂ້ ຄື ພິກຂຸຜູ້ເວັ້ນຈາກໄຟຈະບໍ່ມີຄວາມຜາສຸກ

ຄຳວ່າ ຕ້ອງການຜີງໄຟ ຄື ຕ້ອງການໃຫ້ຮ່າງກາຍອົບອຸ່ນ

ທີ່ຊື່ວ່າ ໄຟ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງອັກຄີ

ຄຳວ່າ ດັງ ຄື ພິກຂຸດັງເອງ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ດັງ ຄື ພິກຂຸສັ່ງຜູ້ອື່ນ ຕ້ອງອາບັດປາຈິດຕີ

ພິກຂຸຜູ້ຮັບຄຳສັ່ງຄັ້ງດຽວແຕ່ດັງໄຟຫຼາຍຄັ້ງ ພິກຂຸຜູ້ສັ່ງ ຕ້ອງອາບັດປາຈິດຕີ

ຄຳວ່າ ເວັ້ນໄວ້ແຕ່ມີເຫດຜົນເຊັ່ນນັ້ນ ຄື ຍົກໄວ້ແຕ່ມີເຫດຜົນທີ່ສົມຄວນ

## ບົດພາຊະນີ

### ຕິກະປາຈິດຕີ

[໓໕໕] ບໍ່ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ຕ້ອງການຜີງໄຟ ດັງຫຼືໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຜົນເຊັ່ນນັ້ນ

ບໍ່ເປັນໄຂ້ ພິກຂຸບໍ່ແນ່ໃຈ ຕ້ອງການຜີງໄຟ ດັງຫຼືໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຜົນເຊັ່ນນັ້ນ

ບໍ່ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ຕ້ອງການຜີງໄຟ ດັງຫຼືໃຊ້ໃຫ້ດັງໄຟ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຜົນເຊັ່ນນັ້ນ

**ຕິກະທຸກກົດ**

ພິກຂຸເກັບດົ້ນຟືນທີ່ຕົກເຂົ້າທີ່ເດີມ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸສຳຄັນວ່າບໍ່ເປັນໄຂ້ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸສຳຄັນວ່າເປັນໄຂ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໕໖] ໑. ພິກຂຸເປັນໄຂ້
໒. ພິກຂຸຜີງໄຟທີ່ຜູ້ອື່ນດັງໄວ້
໓. ພິກຂຸຜີງໄຟຖ່ານທີ່ບໍ່ມີປ້ຳ
໔. ພິກຂຸໄຕ້ປະທີບ ດັງໄຟຫຼືໄຕ້ໄຟໃນເຮືອນໄຟຍ້ອນມີເຫດຜົນເຊັ່ນນັ້ນ
໕. ພິກຂຸຜູ້ດັງໄຟໃນເວລາມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ໂຊຕິກະສິກຂາບົດທີ ໖ ຈົບ**

# ໖. ສຸຣາປານະວັກ

## ໗. ນະຫານະສິກຂາບົດ

## ວ່າດ້ວຍການອາບນ້ຳນອກສະໄໝ

## ເລື້ອງພຣະເຈົ້າພິມພິສານ

[໓໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພິກຂຸທັງຫຼາຍອາບນ້ຳໃນແມ່ນ້ຳຕະໂປທາ ໃນທີ່ນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດສະເດັດໄປແມ່ນ້ຳຕະໂປທາ ດ້ວຍມີພຣະຣາຊະປະສົງຈະຊົງ ນ້ຳພຣະສຽນ ປະທັບຖ້າຢູ່ດ້ານໜຶ່ງ ດ້ວຍພຣະດຳຣິວ່າ "ເຮົາຈະລົງສົງນ້ຳຕໍ່ເມື່ອຄູບາທັງຫຼາຍອາບນ້ຳສຳເລັດແລ້ວ" ພິກຂຸອາບນ້ຳຈົນຄ່ຳມືດ ຄັ້ງນັ້ນພຣະເຈົ້າພິມພິສານຈອມທັບມະຄົດຣັດ ຕ້ອງຊົງນ້ຳພຣະສຽນໃນເວລາມືດຄ່ຳ ເມື່ອປະຕູເມືອງປິດຈຳຕ້ອງປະທັບແຮມຢູ່ນອກເມືອງ ເຊົ້າມືດຈຶ່ງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບທັງ ໆ ທີ່ເຄື່ອງປະທິນໃນ

พระวํธะภายยังบ่แข้งดี เมื่อเถิງแล้วได้ถวายอะพิวาดพระผู้มิพระพาภเจ้าแล้วปะทับในที่สิมถวน

พระผู้มีพระพาภเจ้าได้ตัดถามพระเจ้าพิมพิสานจอมทับมะຄົດຣັດผู้ปะทับນັ່ງໃນທີ່ ສົມຄວນດັ່ງນີ້ວ່າ "ເຫດໃດ ພຣະອົງຈຶ່ງສະເດັດມາແຕ່ເຊົ້າມືດ ທັງ ໆ ທີ່ເຄື່ອງປະທິນໃນພຣະວໍຣະກາຍຍັງບໍ່ແຫ້ງດີ" ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຂາບທູນເລື່ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ ໃນບັດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຊົງລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ກະທຳປະທັກຂິນແລ້ວສະເດັດໄປ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຫັນພຣະຣາຊາສະເດັດມາແຕ່ກໍຍັງພາກັນອາບນ້ຳບໍ່ຮູ້ຈັກກຳນົດເວລາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກໂມຄະບຸຣຸດ ເຫຼົ່ານັ້ນ ເຫັນພຣະຣາຊາແລ້ວກໍຍັງອາບນ້ຳບໍ່ຮູ້ຄວາມພໍດີນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນ້ຳ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື່ອງພຣະເຈົ້າພິມພິສານ ຈົບ**

## ຊົງອະນຸຍາດໃຫ້ພິກຂຸອາບນໍ້າໄດ້ໃນສະໄໝທີ່ຮ້ອນ

[໓໕໗] ສະໄໝນັ້ນ ພິກຂຸທັງຫຼາຍມີຄວາມຢຳເກງ ບໍ່ຍອມອາບນໍ້າໃນສະໄໝທີ່ຮ້ອນໃນສະໄໝທີ່ອົບເອົ້າ ຕ້ອງນອນທັງ ໆ ທີ່ຕົນໂຕປຽກຊຸ່ມດ້ວຍເຫື່ອ ຈີວອນກໍດີ ເສນາສະນະກໍດີເສຍຫາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຖິງວ່າຍັງບໍ່ເຖິງເຄິ່ງເດືອນ ເຮົາອະນຸຍາດໃຫ້ອາບນໍ້າໃນສະໄໝທີ່ຮ້ອນ ໃນສະໄໝທີ່ອົບເອົ້າໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນໍ້າ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ ສະໄໝໃນຂໍ້ນັ້ນ ຄື ທ້າຍລະດູຮ້ອນ ໑ ເດືອນເຄິ່ງ ແລະເດືອນທຳອິດແຫ່ງລະດູຝົນ ລວມເປັນ ໒ ເດືອນເຄິ່ງ ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ພິກຂຸອາບນໍ້າໄດ້ໃນສະໄໝທີ່ເປັນໄຂ້

[໓໕໘] ສະໄໝນັ້ນ ພິກຂຸທັງຫຼາຍເປັນໄຂ້ ພວກພິກຂຸຜູ້ມີໜ້າທີ່ສອບຖາມອາການໄຂ້ ໄດ້ກ່າວກັບພວກພິກຂຸເປັນໄຂ້ດັ່ງນີ້ວ່າ "ທ່ານທັງຫຼາຍ ສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?

ພວກພິກຂຸຜູ້ເປັນໄຂ້ຕອບວ່າ "ເມື່ອກ່ອນຍັງບໍ່ເຖິງເຄິ່ງເດືອນ ພວກຂ້ານ້ອຍອາບນໍ້າໄດ້ ດັ່ງນັ້ນຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂ້ານ້ອຍມີຄວາມຢຳເກງຢູ່ວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ ຈຶ່ງບໍ່ໄດ້ອາບນໍ້າ ດັ່ງນັ້ນຈຶ່ງບໍ່ມີຄວາມຜາສຸກ

ພິກຂຸທັງຫຼາຍ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍັງບໍ່ເຖິງເຄິ່ງເດືອນ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ອາບນໍ້າໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນໍ້າ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ ສະໄໝໃນຂໍ້ນັ້ນ ຄື (໑) ທ້າຍລະດູຮ້ອນ ໑ ເດືອນເຄິ່ງ ແລະເດືອນທຳອິດແຫ່ງລະດູຝົນ

ລວມເປັນ ໔ ເດືອນເຄິ່ງ ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ (໔) ສະໄໝທີ່ເປັນໄຂ້ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ພິກຂຸອາບນໍ້າໄດ້ໃນສະໄໝທີ່ເຮັດວຽກ

[໓໖໐] ສະໄໝນັ້ນ ພິກຂຸທັງຫຼາຍເຮັດວຽກ ມີຄວາມຢຳເກງ ຈຶ່ງບໍ່ອາບນໍ້າ ນອນ ທັງ ໆ ທີ່ຕົນໂຕຍັງຊຸ່ມເຫື່ອຢູ່ ຈີວອນກໍດີ ເສນາສະນະກໍດີເສຍຫາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຍັງບໍ່ເຖິງເຄິ່ງເດືອນ ເຮົາອະນຸຍາດໃຫ້ອາບນໍ້າໄດ້ໃນສະໄໝທີ່ເຮັດວຽກ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນໍ້າ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ ໃນສະໄໝ ສະໄໝໃນຂໍ້ນັ້ນ ຄື (໑) ທ້າຍລະດູຮ້ອນ ໑ ເດືອນເຄິ່ງ ແລະເດືອນທຳອິດແຫ່ງລະດູຝົນ ລວມເປັນ ໔ ເດືອນເຄິ່ງ ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ (໔) ສະໄໝທີ່ເປັນໄຂ້ (໓) ສະໄໝທີ່ເຮັດວຽກ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ພິກຂຸອາບນໍ້າໄດ້ໃນສະໄໝທີ່ເດີນທາງໄກ

[໓໖໑] ສະໄໝນັ້ນ ພິກຂຸທັງຫຼາຍເດີນທາງໄກ ມີຄວາມຢຳເກງ ຈຶ່ງບໍ່ອາບນໍ້າ ນອນທັງທີ່ຕົນໂຕຍັງຊຸ່ມເຫື່ອ ຈີວອນກໍດີ ເສນາສະນະກໍດີເສຍຫາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຍັງບໍ່ເຖິງເຄິ່ງເດືອນ ເຮົາອະນຸຍາດໃຫ້ອາບນໍ້າໄດ້ໃນສະໄໝທີ່ເດີນທາງໄກ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນໍ້າ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ ສະໄໝໃນຂໍ້ນັ້ນ ຄື (໑) ທ້າຍລະດູຮ້ອນ ໑ ເດືອນເຄິ່ງ ແລະເດືອນທຳອິດແຫ່ງລະດູຝົນ

ລວມເປັນ ໔ ເດືອນເຄິ່ງ ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ (໔) ສະໄໝທີ່ເປັນໄຂ້ (໓) ສະໄໝທີ່ເຮັດວຽກ (໔) ສະໄໝທີ່ເດີນທາງໄກ ນີ້ເປັນສະໄໝໃນຂໍ້ນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ຊົງອະນຸຍາດໃຫ້ພິກຂຸອາບນ້ຳໄດ້ໃນສະໄໝທີ່ມີພາຍຸຝຸ່ນ

[໓໖໔] ສະໄໝນັ້ນ ພິກຂຸທັງຫຼາຍຕັດຫຍິບຈີວອນຢູ່ກາງແຈ້ງ ຖືກລົມຝຸ່ນເປິະເປື້ອນ ຝົນກໍຕົກຫຍອຍ ໆ ພວກພິກຂຸມີຄວາມຢຳເກງ ຈຶ່ງບໍ່ອາບນ້ຳ ນອນທັງ ໆ ທີ່ຕົນໂຕຍັງເປິະເປື້ອນ ຈີວອນກໍດີ ເສນາສະນະກໍດີເສຍຫາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍັງບໍ່ເຖິງເຄິ່ງເດືອນ ເຮົາອະນຸຍາດໃຫ້ອາບນ້ຳໃນສະໄໝທີ່ມີພາຍຸຝຸ່ນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໓໖໓] ອັນໜຶ່ງ ພິກຂຸໃດ ຍັງບໍ່ເຖິງເຄິ່ງເດືອນ ອາບນ້ຳ ຕ້ອງອາບັດປາຈິດຕິເວັ້ນໄວ້ແຕ່ໃນສະໄໝ ສະໄໝໃນຂໍ້ນັ້ນ ຄື (໑) ທ້າຍລະດູຮ້ອນ ໑ ເດືອນເຄິ່ງ ແລະເດືອນທຳອິດແຫ່ງລະດູຝົນ ລວມເປັນ ໔ ເດືອນເຄິ່ງ ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ (໔) ສະໄໝທີ່ເປັນໄຂ້ (໓) ສະໄໝທີ່ເຮັດວຽກ (໔) ສະໄໝທີ່ເດີນທາງໄກ (໕) ສະໄໝທີ່ມີພາຍຸຝຸ່ນ ນີ້ ເປັນສະໄໝໃນຂໍ້ນັ້ນ

## ສິກຂາບົດວິພັງ

[໓໖໘] ຄຳວ່າ ອັນໜຶ່ງຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຯລຯ ຊື່ວ່າພິກຂຸ ຍ້ອນວ່າເປັນຜູ້ຂໍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຍັງບໍ່ເຖິງເຄິ່ງເດືອນ ຄື ຢ່ອນກວ່າເຄິ່ງເດືອນ

ຄຳວ່າ ອາບນ້ຳ ໄດ້ແກ່ ພິກຂຸອາບນ້ຳຖູຕົວດ້ວຍແປ້ງ ຫຼື ດິນໜຽວ ຕ້ອງອາບັດທຸກກົດທຸກ ໆ ຄັ້ງທີ່ຖູອາບສຳເລັດ ຕ້ອງອາບັດປາຈິດຕິ

ຄຳວ່າ ເວັ້ນໄວ້ແຕ່ໃນສະໄໝ ຄື ຍົກເວັ້ນແຕ່ໃນສະໄໝ

ທີ່ຊື່ວ່າ ສະໄໝທີ່ຮ້ອນ ຄື ທ້າຍລະດູຮ້ອນ ໑ ເດືອນເຄິ່ງ

ທີ່ຊື່ວ່າ ສະໄໝທີ່ອົບເອົ້າ ຄື ເດືອນທຳອິດແຫ່ງລະດູຝົນ ພິກຂຸເພິ່ງອາບນ້ຳໄດ້ຍ້ອນ ຖືວ່າ ໒ ເດືອນເຄິ່ງນີ້ເປັນສະໄໝທີ່ຮ້ອນ ເປັນສະໄໝທີ່ອົບເອົ້າ

ທີ່ຊື່ວ່າ ສະໄໝທີ່ເປັນໄຂ້ ຄື ພິກຂຸໃດບໍ່ໄດ້ອາບນ້ຳຈະບໍ່ມີຄວາມຜາສຸກ ພິກຂຸເພິ່ງອາບນ້ຳໄດ້ຍ້ອນຖືວ່າ ເປັນສະໄໝທີ່ເປັນໄຂ້

ທີ່ຊື່ວ່າ ສະໄໝທີ່ເຮັດວຽກ ຄື ໂດຍທີ່ສຸດແມ່ນຜູ້ປັດກວາດບໍລິເວນວັດ ພິກຂຸເພິ່ງອາບນ້ຳໄດ້ຍ້ອນຖືວ່າເປັນສະໄໝທີ່ເຮັດວຽກ

ທີ່ຊື່ວ່າ ສະໄໝທີ່ເດີນທາງໄກ ຄື ພິກຂຸຄິດວ່າ "ເຮົາຈະເດີນທາງເຄິ່ງໂຍດ" ເພິ່ງອາບນ້ຳໄດ້ ພິກຂຸນັ້ນ ເມື່ອຈະໄປເພິ່ງອາບນ້ຳໄດ້ ໄປແລ້ວເພິ່ງອາບນ້ຳໄດ້

ທີ່ຊື່ວ່າ ສະໄໝທີ່ມີພາຍຸຝຸ່ນ ຄື ພິກຂຸທັງຫຼາຍ ຖືກລົມຝຸ່ນພັດໃສ່ຕົນໂຕເປິະເປື້ອນ ຫຼືເມັດຝົນຕົກຖືກກາຍ ໒-໓ ເມັດ ພິກຂຸເພິ່ງອາບນ້ຳໄດ້ຍ້ອນຖືວ່າ ເປັນສະໄໝທີ່ມີພາຍຸຝຸ່ນ

## ບົດພາຊະນີ

### ຕິກະປາຈິດຕີ

[໓໖໔] ຢ່ອນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ອາບນ້ຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ

ຢ່ອນກວ່າເຄິ່ງເດືອນ ພິກຂຸບໍ່ແນ່ໃຈ ອາບນ້ຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ

ຢ່ອນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າເກີນກວ່າ ອາບນ້ຳ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນສະໄໝ

### ທຸກະທຸກກົດ

ເກີນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າຢ່ອນກວ່າ ຕ້ອງອາບັດທຸກກົດ

ເກີນກວ່າເຄິ່ງເດືອນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ເກີນກວ່າເຄິ່ງເດືອນ ພິກຂຸສຳຄັນວ່າເກີນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໖໖] ໑. ພິກຂຸອາບນ້ຳໃນສະໄໝ

໔. ພິກຂຸອາບນ້ຳເວລາເຄິ່ງເດືອນ
໓. ພິກຂຸອາບນ້ຳເວລາເກີນກວ່າເຄິ່ງເດືອນ
໔. ພິກຂຸຜູ້ຂ້າມຝັ່ງຈຶ່ງອາບນ້ຳ
໕. ພິກຂຸອາບນ້ຳໃນປັດຈັນຕະຊົນນະບົດທຸກແຫ່ງ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ນະຫານະສິກຂາບົດທີ ໗ ຈົບ**

# ໖. ສຸຣາປານະວັກ

## ໙. ທຸບພັນນະກະຣະນະສິກຂາບົດ

### ວ່າດ້ວຍການເຮັດຈີວອນໃໝ່ໃຫ້ເສຍສີ

### ເລື່ອງພິກຂຸຫຼາຍອົງ

[໓໖໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸແລະປະຣິພາຊົກຈຳນວນຫຼາຍ ຕ່າງເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ລະຫວ່າງທາງ ໂຈນທັງຫຼາຍອອກມາປຸ້ນຈີ້ ພວກເຈົ້າໜ້າທີ່ໃນນະຄອນສາວັດຖີຈັບໂຈນເຫຼົ່ານັ້ນໄດ້ພ້ອມຂອງກາງ ຈຶ່ງສົ່ງຂ່າວເຖິງພິກຂຸທັງຫຼາຍວ່າ "ນິມົນຄູບາມາເທີ້ນ ຖ້າຈື່ໄດ້ ນິມົນຮັບເອົາຈີວອນຂອງຕົນ ໆ ຄືນໄປ" ພິກຂຸທັງຫຼາຍ ຈື່ຈີວອນຂອງຕົນບໍ່ໄດ້ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາ ວ່າ "ເປັນຫຍັງ ຄູບາທັງຫຼາຍ ຈຶ່ງຈື່ຈີວອນຂອງຕົນບໍ່ໄດ້ແນວນີ້ນໍ?

ພິກຂຸທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສະແດງທຳມີກະຖາໃຫ້ເໝາະສົມ ໃຫ້ຄ້ອຍຕາມກັບເລື້ອງນັ້ນແກ່ພວກພິກຂຸແລ້ວຮັບສັ່ງກັບ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ

໔. ເພື່ອຄວາມຜາສຸກແຫ່ງສົງ

ຯລຯ

໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໒໘] ກໍພິກຂຸໄດ້ຈີວອນໃໝ່ ເພິ່ງໃຊ້ວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດຢ່າງໃດຢ່າງໜຶ່ງຄື ສີຂຽວ ສີຕົມ ຫຼື ສີດຳຄ້ຳ ມາເຮັດໃຫ້ເສຍສີ ຖ້າພິກຂຸບໍ່ໃຊ້ວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດ ຢ່າງໃດຢ່າງໜຶ່ງ ມາເຮັດໃຫ້ເສຍສີ ໃຊ້ສອຍຈີວອນໃໝ່ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸຫຼາຍອົງ ຈົບ

## ສິກຂາບົດວິພັງ

[໔໒໙] ທີ່ຊື່ວ່າ ໃໝ່ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜ້າທີ່ຍັງບໍ່ເຮັດພິນທຸກັບປະ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ

ຄຳວ່າ ພິກຂຸເພິ່ງໃຊ້ວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດ ຢ່າງໃດຢ່າງໜຶ່ງ ມາເຮັດໃຫ້ເສຍສີ ຄື ໂດຍທີ່ສຸດພິກຂຸເພິ່ງເຮັດໃຫ້ເສຍສີ ແມ່ນດ້ວຍປາຍຫຍ້າຄາແຕະ

ທີ່ຊື່ວ່າ ສີຂຽວ ໄດ້ແກ່ ສີຂຽວ ໔ ຢ່າງ ຄື ຂຽວສຳຣິດ ສີຂຽວໃບໄມ້

ທີ່ຊື່ວ່າ ສີຕົມ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສີນ້ຳຕົມ

ທີ່ຊື່ວ່າ ສີດຳຄ້ຳ ໄດ້ແກ່ ສີດຳຄ້ຳຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ຖ້າພິກຂຸບໍ່ໃຊ້ວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດ ຢ່າງໃດຢ່າງໜຶ່ງ ມາເຮັດໃຫ້ເສຍສີ ຄວາມວ່າ ໂດຍທີ່ສຸດພິກຂຸບໍ່ເອົາປາຍຫຍ້າຄາແຕະວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດ ຢ່າງໃດຢ່າງໜຶ່ງ ມາເຮັດໃຫ້ເສຍສີ ແລ້ວໃຊ້ສອຍຈີວອນໃໝ່ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໔໓໐] ຍັງບໍ່ໄດ້ເຮັດໃຫ້ເສຍສີ ພິກຂຸສຳຄັນວ່າຍັງບໍ່ໄດ້ເຮັດໃຫ້ເສຍສີ ໃຊ້ສອຍ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ເຮັດໃຫ້ເສຍສີ ພິກຂຸບໍ່ແນ່ໃຈ ໃຊ້ສອຍ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ເຮັດໃຫ້ເສຍສີ ພິກຂຸສຳຄັນວ່າເຮັດໃຫ້ເສຍສີແລ້ວ ໃຊ້ສອຍ ຕ້ອງອາບັດປາຈິດຕີ

**ທຸກະທຸກກົດ**

ເຮັດໃຫ້ເສຍສີແລ້ວ ພິກຂຸສຳຄັນວ່າຍັງບໍ່ໄດ້ເຮັດໃຫ້ເສຍສີ ຕ້ອງອາບັດທຸກກົດ
ເຮັດໃຫ້ເສຍສີແລ້ວ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ເຮັດໃຫ້ເສຍສີແລ້ວ ພິກຂຸສຳຄັນວ່າໃຊ້ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໗໑] ໑. ພິກຂຸເຮັດໃຫ້ເສຍສີແລ້ວນຸ່ງຫົ່ມ
໒. ພິກຂຸຫົ່ມຈີວອນທີ່ພິນທຸກັບປະເສຍຫາຍໄປ
໓. ພິກຂຸຫົ່ມຈີວອນທີ່ເຮັດພິນທຸກັບປະໄວ້ ແຕ່ເກົ່າຊຸດໂຊມ
໔. ພິກຂຸຫົ່ມຈີວອນທີ່ບໍ່ໄດ້ເຮັດພິນທຸກັບປະໄວ້ ແຕ່ຫຍິບຕິດກັບຈີວອນທີ່ເຮັດພິນທຸກັບປະໄວ້
໕. ພິກຂຸນຸ່ງຫົ່ມຜ້າຕາບ
໖. ພິກຂຸນຸ່ງຫົ່ມຜ້າທາບ
໗. ພິກຂຸໃຊ້ຜ້າດາມ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ທຸບພັນນະກະຣະນະສິກຂາບົດທີ ໘ ຈົບ**

# ໖. ສຸຣາປານະວັກ

## ໙. ວິກັບປະນະສິກຂາບົດ

## ວ່າດ້ວຍການວິກັບຈີວອນ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໓໗໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດວິກັບຈີວອນດ້ວຍຕົນເອງແກ່ພິກຂຸສັດທິວິຫາຣິກຂອງພິກຂຸຜູ້ເປັນພີ່ນ້ອງກັນ ແລ້ວໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ ລຳດັບນັ້ນ ພິກຂຸນັ້ນໄດ້ແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍໄດ້ຮູ້ວ່າ

"ທ່ານທັງຫຼາຍ ທ່ານພຣະອຸປະນັນທະສາກະຍະບຸດວິກັບຈີວອນດ້ວຍຕົນເອງ ແກ່ຂ້ານ້ອຍແລ້ວ ໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະສາກະຍະບຸດວິກັບຈີວອນດ້ວຍຕົນເອງແກ່ພິກຂຸແລ້ວ ຈຶ່ງໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນແນວນັ້ນບໍ?" ເມື່ອພິກຂຸເຫຼົ່ານັ້ນຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການ ຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານວິກັບຈີວອນດ້ວຍຕົນເອງແກ່ພິກຂຸແລ້ວໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ ແມ່ນບໍ?" ທ່ານພຣະອຸປະນັນທະສາກະຍະບຸດ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ໂມຄະບຸຣຸດ ເປັນຫຍັງທ່ານ ເມື່ອວິກັບຈີວອນດ້ວຍຕົນເອງແກ່ພິກຂຸແລ້ວ ຈຶ່ງໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນບໍ? ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສ ຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໖] ກໍ ພິກຂຸໃດ ວິກັບຈີວອນດ້ວຍຕົນເອງແກ່ພິກຂຸ ຫຼື ແກ່ພິກຂຸນີ ຫຼື ແກ່ສິກຂະມານາ ຫຼືແກ່ສາມະເນນ ຫຼື ແກ່ສາມະເນຣີ ແລ້ວໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ ຕ້ອງອາບັດປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໔໗໘] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ແກ່ພິກຂຸ ຄື ພິກຂຸອົງອື່ນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ສະຕີທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສະຕິຜູ້ສຶກສາສິກຂາທຳ ໖ ຂໍ້ຕະຫຼອດ ໒ ປີ

ທີ່ຊື່ວ່າ ສາມະເນນ ໄດ້ແກ່ ບຸຣຸດຜູ້ຖືສິກຂາບົດ ໑໐ ຂໍ້

ທີ່ຊື່ວ່າ ສາມະເນຣີ ໄດ້ແກ່ ສະຕິຜູ້ຖືສິກຂາບົດ ໑໐ ຂໍ້

ຄຳວ່າ ດ້ວຍຕົນເອງ ຄື ວິກັບເອງ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະວິກັບໄດ້ເປັນຢ່າງຕ່ຳ

ທີ່ຊື່ວ່າ ວິກັບ ມີ ໒ ຢ່າງ ຄື (໑) ວິກັບຕໍ່ໜ້າ (໒) ວິກັບລັບຫຼັງ

ທີ່ຊື່ວ່າ ວິກັບຕໍ່ໜ້າ ຄື ພິກຂຸກ່າວວ່າ "ຂ້າພະເຈົ້າວິກັບຈີວອນຜືນນີ້ແກ່ທ່ານ ຫຼື ຂ້າພະເຈົ້າວິກັບຈີວອນຜືນນີ້ແກ່ພິກຂຸນີ້

ທີ່ຊື່ວ່າ ວິກັບລັບຫຼັງ ຄື ພິກຂຸກ່າວວ່າ "ຂ້າພະເຈົ້າໃຫ້ຈີວອນຜືນນີ້ແກ່ທ່ານເພື່ອວິກັບພິກຂຸຜູ້ຮັບວິກັບຖາມພິກຂຸຜູ້ວິກັບວ່າ "ໃຜເປັນມິດ ຫຼື ເພື່ອນຂອງທ່ານ" ເພິ່ງຕອບວ່າ "ພິກຂຸຊື່ນີ້ ແລະ ພິກຂຸຊື່ນີ້"

ພິກຂຸຜູ້ຮັບວິກັບເພິ່ງກ່າວກັບພິກຂຸຜູ້ວິກັບວ່າ "ຂ້າພະເຈົ້າໃຫ້ແກ່ພິກຂຸເຫຼົ່ານັ້ນ ຈີວອນຜືນນີ້ເປັນຂອງພິກຂຸເຫຼົ່ານັ້ນ ທ່ານຈົ່ງໃຊ້ສອຍ ຈົ່ງສະລະ ຫຼື ຈົ່ງເຮັດຕາມເຫດຜົນເທີ້ນ

ທີ່ຊື່ວ່າ ທີ່ຍັງບໍ່ໄດ້ປັດຈຸດທອນ ຄື ຈີວອນທີ່ຜູ້ຮັບວິກັບຍັງບໍ່ໄດ້ຄືນໃຫ້ ຫຼື ພິກຂຸຜູ້ວິກັບໃຊ້ສອຍຈີວອນໂດຍບໍ່ຄຸ້ນເຄີຍກັບພິກຂຸຜູ້ຮັບວິກັບນັ້ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໓໗໕] ຈີວອນຍັງບໍ່ໄດ້ປັດຈຸດທອນ ພິກຂຸສຳຄັນວ່າຍັງບໍ່ໄດ້ປັດຈຸດທອນ ໃຊ້ສອຍ ຕ້ອງອາບັດປາຈິດຕີ

ຈີວອນຍັງບໍ່ໄດ້ປັດຈຸດທອນ ພິກຂຸບໍ່ແນ່ໃຈ ໃຊ້ສອຍ ຕ້ອງອາບັດປາຈິດຕີ

ຈີວອນຍັງບໍ່ໄດ້ປັດຈຸດທອນ ພິກຂຸສຳຄັນວ່າປັດຈຸດທອນແລ້ວໃຊ້ສອຍ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ພິກຂຸອະທິຖານ ຫຼື ສະລະ ຕ້ອງອາບັດທຸກກົດ

ຈີວອນປັດຈຸດທອນແລ້ວ ພິກຂຸສຳຄັນວ່າຍັງບໍ່ໄດ້ປັດຈຸດທອນ ຕ້ອງອາບັດທຸກກົດ

ຈີວອນປັດຈຸດທອນແລ້ວ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຈີວອນປັດຈຸດທອນແລ້ວ ພິກຂຸສຳຄັນວ່າປັດຈຸດທອນແລ້ວ ບໍ່ເປັນອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[๔๘๙] ໑. ພິກຂຸໃຊ້ສອຍຈີວອນທີ່ຜູ້ຮັບວິກັບຄືນໃຫ້ ຫຼື ໃຊ້ສອຍຈີວອນດ້ວຍຄວາມຄຸ້ນເຄີຍກັບພິກຂຸຜູ້ຮັບວິກັບ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ວິກັບປະນະສິກຂາບົດທີ ๗ ຈົບ**

# ๖. ສຸຣາປານະວັກ

## ໑໐. ຈີວະຣະປະນິທານະສິກຂາບົດ
## ວ່າດ້ວຍການເຊື່ອງຈີວອນ

### ເລື້ອງພຣະສັດຕະຣະສະວັກຄີ

[๔๙๐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັດຕະຣະສະວັກຄີບໍ່ເກັບບໍຣິຂານ ພວກພິກຂຸສັບພັກຄີຈຶ່ງເອົາບາດແດ່ ຈີວອນແດ່ຂອງພວກພິກຂຸສັດຕະຣະສະວັກຄີໄປເຊື່ອງ ພວກພິກຂຸສັດຕະຣະສະວັກຄີໄດ້ກ່າວກັບພວກພິກຂຸສັບພັກຄີດັ່ງນີ້ວ່າ "ທ່ານທັງຫຼາຍພວກທ່ານໂຜດຄືນບາດແດ່ ຈີວອນແດ່ ໃຫ້ແກ່ພວກເຮົາເທີ້ນ" ພວກພິກຂຸສັບພັກຄີພາກັນຫົວຂວນ ພວກພິກຂຸສັດຕະຣະສະວັກຄີພາກັນຮ້ອງໄຫ້

ພິກຂຸທັງຫຼາຍຖາມວ່າ "ພວກທ່ານຮ້ອງໄຫ້ເຮັດຫຍັງ"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີເອົາບາດແດ່ຈີວອນແດ່ ຂອງພວກຂ້ານ້ອຍໄປເຊື່ອງ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງເອົາບາດແດ່ ຈີວອນແດ່ ຂອງພິກຂຸທັງຫຼາຍໄປເຊື່ອງແນວນັ້ນນໍ?" ເມື່ອພິກຂຸເຫຼົ່ານັ້ນ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເອົາບາດແດ່ ຈີວອນແດ່ ຂອງພິກຂຸທັງຫຼາຍໄປເຊື່ອງ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ທ່ານຈຶ່ງເອົາບາດແດ່ຈີວອນແດ່ຂອງພວກພິກຂຸໄປເຊື່ອງນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[๓๗๙] ກໍ ພິກຂຸໃດ ເອົາບາດ ຫຼື ຈີວອນ ຜ້າປູນັ່ງ ກ່ອງເຂັມ ຫຼື ປະຄົດແອວຂອງພິກຂຸໄປເຊື່ອງ ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັດຕະຣະສະວັກຄີ ຈົບ**

## ສິກຂາບົດວິພັງ

[๓๘๗] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຂອງພິກຂຸ ຄື ຂອງພິກຂຸອື່ນ

ທີ່ຊື່ວ່າ ບາດ ໄດ້ແກ່ ບາດ ๘ ຊະນິດ ຄື (๑) ບາດເຫຼັກ (๘) ບາດດິນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ๖ ຊະນິດ ຢ່າງໃດຢ່າງໜຶ່ງເຊິ່ງມີຂະໜາດພໍທີ່ຈະວິກັບໄດ້ເປັນຢ່າງຕ່ຳ

ທີ່ຊື່ວ່າ ຜ້າປູນັ່ງ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜ້າປູນັ່ງມີຊາຍຜ້າ

ທີ່ຊື່ວ່າ ກ່ອງເຂັມ ໄດ້ແກ່ ກ່ອງທີ່ມີເຂັມ ຫຼື ບໍ່ມີເຂັມກໍຕາມ

ທີ່ຊື່ວ່າ ປະຄົດແອວ ໄດ້ແກ່ ປະຄົດແອວ ๘ ຊະນິດ ຄື (๑) ປະຄົດແອວຜ້າ (๘) ປະຄົດແອວໄສ້ໝູ

ຄຳວ່າ ເອົາໄປເຊື່ອງ ຄື ພິກຂຸເອົາໄປເຊື່ອງເອງບໍ່ໃຫ້ເຈົ້າຂອງເຫັນດ້ວຍ ຕ້ອງອາບັດປາຈິດຕິ

ຄຳວ່າ ໃຊ້ໃຫ້ເອົາໄປເຊື່ອງ ຄື ພິກຂຸໃຊ້ຜູ້ອື່ນໃຫ້ເອົາໄປເຊື່ອງ ຕ້ອງອາບັດປາຈິດຕິ

ພິກຂຸຜູ້ຮັບຄຳສັ່ງຄັ້ງດຽວແຕ່ເຊື່ອງຫຼາຍຄັ້ງ ພິກຂຸຜູ້ສັ່ງຕ້ອງອາບັດປາຈິດຕິ

ຄຳວ່າ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຄື ພິກຂຸປະສົງຈະຢອກຫຼິ້ນໃຫ້ມ່ວນຊື່ນ

## ບົດພາຊະນີ

### ຕິກະປາຈິດຕິ

[໓໗໐] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ເອົາບາດ ຫຼື ຈີວອນ ຫຼື ຜ້າປູນັ່ງ ຫຼືກ່ອງເຂັມ ຫຼື ປະຄົດແອວໄປເຊື່ອງ ຫຼື ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ເອົາບາດ ຫຼື ຈີວອນ ຫຼື ຜ້າປູນັ່ງ ຫຼື ກ່ອງເຂັມ ຫຼື ປະຄົດແອວໄປເຊື່ອງ ຫຼື ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ເອົາບາດ ຫຼື ຈີວອນ ຫຼື ຜ້າປູນັ່ງ ຫຼື ກ່ອງເຂັມ ຫຼື ປະຄົດແອວໄປເຊື່ອງ ຫຼື ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດປາຈິດຕິ

### ທຸກກົດ

ພິກຂຸເອົາບໍຣິຂານອື່ນໄປເຊື່ອງ ຫຼື ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດທຸກກົດ

ພິກຂຸເອົາບາດ ຫຼື ຈີວອນ ຫຼື ບໍຣິຂານອື່ນຂອງອະນຸປະສຳບັນໄປເຊື່ອງ ຫຼື ໃຊ້ໃຫ້ເອົາໄປເຊື່ອງ ໂດຍທີ່ສຸດແມ່ນຄິດຈະຢອກຫຼິ້ນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໗໑] ໑. ພິກຂຸບໍ່ປະສົງຈະຢອກຫຼິ້ນ

໒. ພິກຂຸເກັບບໍຣິຂານທີ່ຜູ້ອື່ນວາງໄວ້ບໍ່ດີ

໓. ພິກຂຸເກັບໄວ້ດ້ວຍຫວັງຈະສັ່ງສອນແລ້ວຄືນໃຫ້

໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ຈີວະຣະປະນິທານະສິກຂາບົດທີ ໑໐ ຈົບ**

**ສຸຣາປານະວັກທີ ໖ ຈົບ**

## ລວມສິກຂາບົດທີ່ມີໃນສຸຣາປານະວັກ

ສຸຣາປານະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ສຸຣາປານະສິກຂາບົດ | ວ່າດ້ວຍການດື່ມສຸຣາແລະເມໄຣ |
| ໒. ອັງຄຸລີປະໂຕທະກະສິກຂາບົດ | ວ່າດ້ວຍການໃຊ້ນິ້ວມືຈີ້ກັນແລະກັນ |
| ໓. ຫັດສະທຳມະສິກຂາບົດ | ວ່າດ້ວຍການຫຼິ້ນນ້ຳ |
| ໔. ອະນາທະຣິຍະສິກຂາບົດ | ວ່າດ້ວຍຄວາມບໍ່ເອື້ອເຟື້ອຕໍ່ຄຳຕັກເຕືອນ |
| ໕. ພິງສາປະນະສິກຂາບົດ | ວ່າດ້ວຍການເຮັດໃຫ້ຕົກໃຈ |
| ໖. ໂຊຕິກະສິກຂາບົດ | ວ່າດ້ວຍການດັງໄຟຜີງ |
| ໗. ນະຫານະສິກຂາບົດ | ວ່າດ້ວຍການອາບນ້ຳນອກສະໄໝ |
| ໘. ທຸບພັນນະກະຣະນະສິກຂາບົດ | ວ່າດ້ວຍການເຮັດຈີວອນໃໝ່ໃຫ້ເສຍສີ |
| ໙. ວິກັບປະນະສິກຂາບົດ | ວ່າດ້ວຍການວິກັບຈີວອນ |
| ໑໐. ຈີວະຣະປະນິທານະສິກຂາບົດ | ວ່າດ້ວຍການເຊື່ອງຈີວອນ |

# ໗. ສັບປານະກະວັກ

## ໝວດວ່າດ້ວຍສັດມີຊີວິດ

### ໑. ສັນຈິດຈະສິກຂາບົດ

### ວ່າດ້ວຍຄວາມຈິງໃຈປົງຊີວິດສັດ

### ເລື້ອງພຣະອຸທາຍີ

[໓໘໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸທາຍີເປັນນັກຍິງທະນູ ແລະທ່ານບໍ່ມັກກາ ທ່ານຈຶ່ງຍິງກາທັງຫຼາຍແລ້ວຕັດຫົວມາສຽບຫຼາວລຽງໄວ້

ພິກຂຸທັງຫຼາຍ ກ່າວຢ່າງນີ້ວ່າ "ທ່ານ ໃຜຂ້າກາເຫຼົ່ານີ້"

ທ່ານພຣະອຸທາຍີຕອບວ່າ "ທ່ານທັງຫຼາຍ ຂ້ານ້ອຍເອງ ຂ້ານ້ອຍບໍ່ມັກກາ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸທາຍີ ຈຶ່ງຈົງໃຈປົງຊີວິດສັດແນວນັ້ນນໍ ຯລຯ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະອຸທາຍີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸທາຍີວ່າ "ອຸທາຍີ ໄດ້ຂ່າວວ່າ ທ່ານຈົງໃຈປົງຊີວິດສັດ ແມ່ນບໍ?" ທ່ານພຣະອຸທາຍີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງຈົງໃຈປົງຊີວິດສັດນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໘໓] ກໍ ພິກຂຸໃດ ຈົງໃຈປົງຊີວິດສັດ ຕ້ອງອາບັດປາຈິດຕີ

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໓໘໔] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຈົງໃຈ ໄດ້ແກ່ ຮູ້ຢູ່ ຮູ້ດີຢູ່ ຕັ້ງໃຈ ຝ່າຝືນ ລ່ວງລະເມີດ

ທີ່ຊື່ວ່າ ສັດມີຊີວິດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສັດເດຍຣັດສານ

ຄຳວ່າ ປົງຊີວິດ ໄດ້ແກ່ ຕັດທຳລາຍຊີວິຕິນຊີ ຕັດຄວາມສືບຕໍ່ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ປາຈິດຕີ

[໓໘໕] ສັດມີຊີວິດ ພິກຂຸສຳຄັນວ່າເປັນສັດມີຊີວິດ ປົງຊີວິດ ຕ້ອງອາບັດປາຈິດຕີ

ສັດມີຊີວິດ ພິກຂຸບໍ່ແນ່ໃຈ ປົງຊີວິດ ຕ້ອງອາບັດປາຈິດຕີ
ສັດມີຊີວິດ ພິກຂຸສຳຄັນວ່າບໍ່ແມ່ນສັດມີຊີວິດ ປົງຊີວິດ ບໍ່ຕ້ອງອາບັດ

**ທຸກກົດ**

ບໍ່ແມ່ນສັດມີຊີວິດ ພິກຂຸສຳຄັນວ່າເປັນສັດມີຊີວິດ ຕ້ອງອາບັດທຸກກົດ
ບໍ່ແມ່ນສັດມີຊີວິດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບໍ່ແມ່ນສັດມີຊີວິດ ພິກຂຸສຳຄັນວ່າບໍ່ແມ່ນສັດມີຊີວິດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໘໖] ໑. ພິກຂຸບໍ່ຈົງໃຈຈະປົງຊີວິດສັດ
໒. ພິກຂຸບໍ່ມີສະຕິປົງຊີວິດສັດ
໓. ພິກຂຸຜູ້ບໍ່ຮູ້ຕົວ
໔. ພິກຂຸບໍ່ປະສົງຈະຂ້າ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ສັນຈິດຈະສິກຂາບົດທີ ໑ ຈົບ**

# ໗. ສັບປານະກະວັກ

## ໒. ສັບປານະກະສິກຂາບົດ

## ວ່າດ້ວຍການບໍຣິໂພກນ້ຳທີ່ມີສັດມີຊີວິດ

## ເລື້ອງພຣະສັບພັກຄີ

[໓໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮູ້ຢູ່ວ່ານ້ຳມີສັດມີຊີວິດ ກໍຍັງບໍຣິໂພກ

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຮູ້ຢູ່ວ່ານ້ຳມີສັດມີຊີວິດ ກໍຍັງໃຊ້ບໍຣິໂພກຢູ່ນໍ?" ເມື່ອພິກຂຸທັງຫຼາຍ ຕຳໜິພວກ

ພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ວ່ານ້ຳມີສັດມີຊີວິດກໍຍັງບໍຣິໂພກ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮູ້ຢູ່ວ່ານ້ຳມີສັດມີຊີວິດກໍຍັງໃຊ້ບໍຣິໂພກນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໘໘] ກໍ ພິກຂຸໃດ ຮູ້ຢູ່ວ່ານ້ຳມີສັດມີຊີວິດ ໃຊ້ບໍຣິໂພກ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໓໘໙] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ໄດ້ແກ່ ພິກຂຸຮູ້ເອງ ຫຼື ຄົນອື່ນບອກໃຫ້ພິກຂຸນັ້ນຮູ້

ພິກຂຸຮູ້ຢູ່ວ່າ "ນ້ຳມີສັດມີຊີວິດ" ຮູ້ຢູ່ວ່າ "ສັດມີຊີວິດຈະຕາຍຍ້ອນການບໍຣິໂພກ" ກໍຍັງໃຊ້ບໍຣິໂພກຢູ່ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໓໙໐] ນ້ຳມີສັດມີຊີວິດ ພິກຂຸສຳຄັນວ່າມີສັດມີຊີວິດ ບໍຣິໂພກ ຕ້ອງອາບັດປາຈິດຕີ

ນ້ຳມີສັດມີຊີວິດ ພິກຂຸບໍ່ແນ່ໃຈ ບໍຣິໂພກ ຕ້ອງອາບັດທຸກກົດ

ນ້ຳມີສັດມີຊີວິດ ພິກຂຸສຳຄັນວ່າບໍ່ມີສັດມີຊີວິດ ບໍຣິໂພກ ບໍ່ຕ້ອງອາບັດ

ນ້ຳບໍ່ມີສັດມີຊີວິດ ພິກຂຸສຳຄັນວ່າມີສັດມີຊີວິດ ຕ້ອງອາບັດທຸກກົດ

ນ້ຳບໍ່ມີສັດມີຊີວິດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ນ້ຳບໍ່ມີສັດມີຊີວິດ ພິກຂຸສຳຄັນວ່າບໍ່ມີສັດມີຊີວິດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໙໑] ໑. ພິກຂຸບໍ່ຮູ້ວ່າ "ນ້ຳມີສັດມີຊີວິດ"
໒. ພິກຂຸຮູ້ວ່າ "ນ້ຳບໍ່ມີສັດມີຊີວິດ"
໓. ພິກຂຸຮູ້ຢູ່ວ່າ "ສັດມີຊີວິດຈະບໍ່ຕາຍຍ້ອນການໃຊ້ບໍຣິໂພກ"
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ສັບປານະກະສິກຂາບົດທີ ໒ ຈົບ**

# ໗. ສັບປານະວັກ

## ໑. ອຸກໂກຕະນະສິກຂາບົດ

## ວ່າດ້ວຍການຮື້ຟື້ນອະທິກອນຂຶ້ນມາພິຈາລະນາໃໝ່

## ເລື້ອງພຣະສັບພັກຄີ

[໓໙໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮູ້ຢູ່ ຮື້ຟື້ນອະທິກອນທີ່ໄດ້ຕັດສິນໄປແລ້ວຢ່າງຖືກຕ້ອງເພື່ອພິຈາລະນາໃໝ່ດ້ວຍກ່າວວ່າ "ກຳຍັງບໍ່ໄດ້ເຮັດ ກຳເຮັດບໍ່ດີ ເພິ່ງເຮັດໃໝ່ ກຳນັ້ນຍັງບໍ່ໄດ້ຕັດສິນ ກຳນັ້ນຕັດສິນບໍ່ດີ ເພິ່ງຕັດສິນໃໝ່"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຮູ້ຢູ່ ຍັງຂືນຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງຖືກຕ້ອງເພື່ອພິຈາລະນາໃໝ່ນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບ

ຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ ຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງຖືກຕ້ອງເພື່ອພິຈາລະນາໃໝ່ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ

ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮູ້ຢູ່ ຍັງຂືນຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງຖືກຕ້ອງເພື່ອພິຈາລະນາໃໝ່ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໙໓] ກໍ ພິກຂຸໃດ ຮູ້ຢູ່ ຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງຖືກຕ້ອງ ເພື່ອພິຈາລະນາໃໝ່ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໓໙໔] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ໄດ້ແກ່ ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ ຫຼື ຄົນນັ້ນບອກ

ທີ່ຊື່ວ່າ ຢ່າງຖືກຕ້ອງ ຄື ອະທິກອນທີ່ຕັດສິນໂດຍທຳ ໂດຍວິໄນ ໂດຍສັດຖຸສາດ

ທີ່ຊື່ວ່າ ອະທິກອນ ໄດ້ແກ່ ອະທິກອນ ໔ ຄື (໑) ວິວາທາທິກອນ (໒) ອະນຸວາທາທິກອນ (໓) ອາປັດຕາທິກອນ (໔) ກິດຈາທິກອນ

ຄຳວ່າ ຮື້ຟື້ນฯລฯເພື່ອພິຈາລະນາໃໝ່ ຄື ພິກຂຸຮື້ຟື້ນດ້ວຍກ່າວວ່າ "ກຳຍັງບໍ່ໄດ້ເຮັດ ກຳເຮັດບໍ່ດີ ເພິ່ງເຮັດໃໝ່ ກຳນັ້ນຍັງບໍ່ໄດ້ຕັດສິນ ກຳນັ້ນຕັດສິນບໍ່ດີ ເພິ່ງຕັດສິນໃໝ່" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໓໙໕] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຮື້ຟື້ນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ຮື້ຟື້ນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຮື້ຟື້ນ ບໍ່ຕ້ອງອາບັດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໓໖໖] ໑. ພິກຂຸຮູ້ວ່າ "ກຳນັ້ນເຮັດບໍ່ຖືກຕ້ອງ ແຍກກັນເຮັດ ຫຼື ເຮັດແກ່ຜູ້ບໍ່ຄວນແກ່ກຳ" ຈຶ່ງຮື້ຟື້ນ

໔. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ອຸກໂກຕະນະສິກຂາບົດທີ ໓ ຈົບ**

# ໗. ສັບປານະກະວັກ

## ໔. ທຸດຖຸນລະສິກຂາບົດ

### ວ່າດ້ວຍການປົກປິດອາບັດຊົ່ວຫຍາບ

### ເລື້ອງພຣະອຸປະນັນທະສາກະຍະບຸດ

[໓໖໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດ ຕ້ອງອາບັດຊື່ສັນເຈຕະນິກາສຸກກະວິສັດຖີ ຈຶ່ງບອກພິກຂຸສັດທິວິຫາຣິກຜູ້ເປັນພີ່ນ້ອງກັນວ່າ ທ່ານ ເຮົາຕ້ອງອາບັດຊື່ສັນເຈຕະນິກາສຸກກະວິສັດຖີ ທ່ານໂຜດຢ່າບອກໃຫ້ໃຜຮູ້" ຕໍ່ມາ ພິກຂຸອົງໜຶ່ງກໍຕ້ອງອາບັດຊື່ສັນເຈຕະນິກາສຸກກະວິສັດຖີ ໄດ້ຂໍສົງຢູ່ປະຣິວາດເພື່ອ (ຈະອອກຈາກ) ອາບັດນັ້ນ ສົງໄດ້ໃຫ້ປະຣິວາດເພື່ອ (ອອກຈາກ) ອາບັດນັ້ນແກ່ພິກຂຸນັ້ນ ພິກຂຸຜູ້ກຳລັງຢູ່ປະຣິວາດນັ້ນພົບພິກຂຸນັ້ນຈຶ່ງໄດ້ກ່າວດັ່ງນີ້ວ່າ "ທ່ານ ຂ້ານ້ອຍຕ້ອງອາບັດຊື່ ສັນເຈຕະນິກາສຸກກະວິສັດຖີ ຈຶ່ງໄດ້ຂໍສົງຢູ່ປະຣິວາດ ສົງໄດ້ໃຫ້ຂ້ານ້ອຍຢູ່ປະຣິວາດເພື່ອ (ອອກຈາກ) ອາບັດແລ້ວ ຂ້ານ້ອຍກຳລັງຢູ່ປະຣິວາດ ຂໍບອກໃຫ້ຮູ້ ທ່ານຈົ່ງຈື່ຂ້ານ້ອຍໄວ້ວ່າ ບອກໃຫ້ຮູ້ແລ້ວ

ພິກຂຸນັ້ນຖາມວ່າ "ພິກຂຸອື່ນຜູ້ຕ້ອງອາບັດນີ້ກໍຕ້ອງເຮັດຢ່າງນີ້ແມ່ນບໍ?"

ພິກຂຸຜູ້ຢູ່ປະຣິວາດຕອບວ່າ "ແມ່ນ ຕ້ອງເຮັດຢ່າງນີ້"

ພິກຂຸນັ້ນກ່າວວ່າ "ທ່ານພຣະອຸປະນັນທະສາກະຍະບຸດນີ້ຕ້ອງອາບັດຊື່ ສັນເຈຕະນິກາສຸກກະວິສັດຖິ ໄດ້ບອກຂ້ານ້ອຍວ່າ ທ່ານ ເຮົາຕ້ອງອາບັດຊື່ ສັນເຈຕະນິກາສຸກກະວິສັດຖິ ທ່ານໂຜດຢ່າບອກໃຫ້ໃຜຮູ້"

ພິກຂຸຜູ້ຢູ່ປະຣິວາດຖາມວ່າ "ທ່ານປົກປິດອາບັດໄວ້ແມ່ນບໍ?"

ພິກຂຸນັ້ນຕອບວ່າ "ແມ່ນ ຂ້ານ້ອຍ"

ພິກຂຸຜູ້ຢູ່ປະຣິວາດ ຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮັບຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຮູ້ຢູ່ ຈຶ່ງປົກປິດອາບັດຊົ່ວຫຍາບຂອງພິກຂຸບໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພິກຂຸຜູ້ປົກປິດອາບັດນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸຜູ້ປົກປິດອາບັດນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານຮູ້ຢູ່ ຍັງປົກປິດອາບັດຊົ່ວຫຍາບຂອງພິກຂຸແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງທ່ານຮູ້ຢູ່ ຈຶ່ງປົກປິດອາບັດຊົ່ວຫຍາບຂອງພິກຂຸບໍ? ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໄສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດ ນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໓໙໗] ກໍ ພິກຂຸໃດຮູ້ຢູ່ ປົກປິດອາບັດຊົ່ວຫຍາບຂອງພິກຂຸ ຕ້ອງອາບັດປາຈິດຕີ

### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

## ສິກຂາບົດວິພັງ

[໓໙໘] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ຂອງພິກຂຸ ຄື ຂອງພິກຂຸອົງອື່ນ

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ ຫຼື ພິກຂຸຜູ້ຕ້ອງອາບັດຊົ່ວຫຍາບນັ້ນບອກ

ທີ່ຊື່ວ່າ ອາບັດຊົ່ວຫຍາບ ໄດ້ແກ່ ອາບັດປາຣາຊິກ ໔ ສິກຂາບົດ ແລະອາບັດສັງຄາທິເສດ ໑໓ ສິກຂາບົດ

ຄຳວ່າ ປົກປິດ ຄວາມວ່າ ເມື່ອພິກຂຸຄິດວ່າ "ພິກຂຸທັງຫຼາຍຮູ້ແລ້ວຈະໂຈດ ຈະຕັກເຕືອນ ຈະຂູ່ ຈະບັງຄັບ ຈະເຮັດໃຫ້ເກີ້ເຂີນ ເຮົາຈະບໍ່ບອກ" ແລ້ວປົກປິດໄວ້ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໔໐໐] ອາບັດຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດຊົ່ວຫຍາບ ປົກປິດໄວ້ ຕ້ອງອາບັດປາຈິດຕີ

ອາບັດຊົ່ວຫຍາບ ພິກຂຸບໍ່ແນ່ໃຈ ປົກປິດໄວ້ ຕ້ອງອາບັດທຸກກົດ

ອາບັດຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດບໍ່ຊົ່ວຫຍາບ ປົກປິດໄວ້ ຕ້ອງອາບັດທຸກກົດ

ພິກຂຸປົກປິດອາບັດບໍ່ຊົ່ວຫຍາບ ຕ້ອງອາບັດທຸກກົດ

ພິກຂຸປົກປິດຄວາມປະພຶດຊົ່ວຫຍາບ ຫຼື ບໍ່ຊົ່ວຫຍາບຂອງອະນຸປະສຳບັນ ຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດຊົ່ວຫຍາບ ຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອາບັດບໍ່ຊົ່ວຫຍາບ ພິກຂຸສຳຄັນວ່າເປັນອາບັດບໍ່ຊົ່ວຫຍາບປົກປິດໄວ້ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໑] ໑. ພິກຂຸຄິດວ່າ "ສົງຈະໝາງໃຈກັນ ຈະຜິດຖຽງກັນ ຈະຂັດແຍ້ງກັນ ຫຼື ຈະວິວາດກັນ" ຈຶ່ງບໍ່ບອກ

໒. ພິກຂຸຄິດວ່າ "ສົງຈະແຕກແຍກ ຫຼື ຈະຫ້າວແຫງ" ຈຶ່ງບໍ່ບອກ

໓. ພິກຂຸຄິດວ່າ "ຜູ້ນີ້ແຂງກະດ້າງ ຫຍາບຄາຍ ຈະເຮັດອັນຕະລາຍແກ່ຊີວິດຫຼືອັນຕະລາຍແກ່ພົມມະຈັນ" ຈຶ່ງບໍ່ບອກ

໔. ພິກຂຸບໍ່ພົບພິກຂຸເຫຼົ່າອື່ນທີ່ສົມຄວນຈຶ່ງບໍ່ໄດ້ບອກ

໕. ພິກຂຸບໍ່ຕ້ອງການຈະປົກປິດ ແຕ່ຍັງບໍ່ໄດ້ບອກ

໖. ພິກຂຸຄິດວ່າ "ເຂົາຈັກຜາກົດດ້ວຍກຳຂອງຕົນເອງ" ຈຶ່ງບໍ່ບອກ

໗. ພິກຂຸວິກົນຈະລິດ

໘. ພິກຂຸຕົ້ນບັນຍັດ

**ທຸດຖຸນລະສິກຂາບົດທີ ໔ ຈົບ**

# ໗. ສັບປານະກະວັກ

## ໔. ອູນະວີສະຕິວັດສະສິກຂາບົດ

## ວ່າດ້ວຍການອຸປະສົມບົດໃຫ້ບຸກຄົນມີອາຍຸຍ່ອນກວ່າ ໒໐ ປີ

## ເລື່ອງເດັກຊາຍອຸບາລີ

[໔໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ໃນນະຄອນຣາຊະຄຶ ມີເດັກຊາຍຜູ້ເປັນເພື່ອນກັນ ໑໗ ຄົນ ເດັກຊາຍອຸບາລີເປັນຫົວໜ້າຂອງເດັກເຫຼົ່ານັ້ນ ໃນບັດນັ້ນ ມານດາບິດາຂອງເດັກຊາຍອຸບາລີໄດ້ປຶກສາກັນດັ່ງນີ້ວ່າ "ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລີຈະຢູ່ສຸກສະບາຍ ແລະ ບໍ່ລຳບາກດ້ວຍວິທີໃດໄດ້ນໍ?" ລຳດັບນັ້ນ ມານດາບິດາຂອງເດັກຊາຍອຸບາລີໄດ້ປຶກສາກັນອີກວ່າ "ຖ້າເຈົ້າອຸບາລີຮຽນຂຽນໜັງສືດ້ວຍວິທີຢ່າງນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລີຈະຢູ່ສຸກສະບາຍ ແລະ ບໍ່ລຳບາກ" ແຕ່ກໍວິຕົກໄປວ່າ "ຖ້າເຈົ້າອຸບາລີຮຽນຂຽນໜັງສື ນີ້ວມືຈະຣະບົມ ຖ້າເຈົ້າອຸບາລີຮຽນວິຊາຄຳນວນດ້ວຍວິທີຢ່າງນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລີຈະຢູ່ສຸກສະບາຍ ແລະ ບໍ່ລຳບາກ" ແລະວິຕົກອີກວ່າ "ຖ້າເຈົ້າອຸບາລີຮຽນວິຊາຄຳນວນກໍຈະເປັນໂຣກປະສາດ ຖ້າເຈົ້າອຸບາລີຮຽນວິຊາກ່ຽວກັບການເງິນ ດ້ວຍວິທີຢ່າງນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລີຈະຢູ່ສຸກສະບາຍແລະບໍ່ລຳບາກ" ແຕ່ກໍວິຕົກອີກວ່າ "ຖ້າເຈົ້າອຸບາລີຮຽນວິຊາກ່ຽວກັບການເງິນ ໃນຕາຂອງເຂົາຈະປວດ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມີລັກສະນະນິໄສດີ ປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ນອນໃນຫ້ອງມິດຊິດ ຖ້າເຈົ້າອຸບາລີໄດ້ບວດໃນສຳນັກພຣະສະມະນະເຊື້ອສາຍສາກະຍະບຸດດ້ວຍວິທີຢ່າງນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລີຈະຢູ່ສຸກສະບາຍ ແລະ ບໍ່ລຳບາກ

## ເດັກຊາຍອຸບາລີອອກບວດ

ເດັກຊາຍອຸບາລີໄດ້ຍິນຄຳສົນທະນາຂອງມານດາບິດາ ເມື່ອແລ້ວເດັກຊາຍອຸບາລີຈຶ່ງໄດ້ໄປຫາພວກເດັກ ໆ ເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບພວກເດັກ ໆ ເຫຼົ່ານັ້ນດັ່ງນີ້ວ່າ "ເພື່ອນທັງຫຼາຍ ມາເທີ້ນ ພວກເຮົາຈະໄປບວດໃນສຳນັກພຣະສະມະນະເຊື້ອສາຍສາກະຍະບຸດ"

ເດັກເຫຼົ່ານັ້ນກ່າວວ່າ "ເພື່ອນເອີຍ ຖ້າເຈົ້າບວດ ພວກເຮົາກໍຈະບວດເຊັ່ນກັນ" ເມື່ອແລ້ວເດັກ ໆ ເຫຼົ່ານັ້ນຕ່າງຄົນຕ່າງກໍເຂົ້າໄປຫາມານດາບິດາຂອງຕົນ ແລ້ວໄດ້ກ່າວຂໍອະນຸຍາດດັ່ງນີ້ວ່າ "ພໍ່ແມ່ໂຜດອະນຸຍາດໃຫ້ພວກລູກ ໆ ອອກຈາກເຮືອນໄປບວດເປັນອະນາຄາຣິກດ້ວຍເທີ້ນ

ມານດາບິດາຂອງເດັກເຫຼົ່ານັ້ນອະນຸຍາດດ້ວຍຄິດວ່າ "ເດັກນ້ອຍພວກນີ້ຕ່າງພ້ອມໃຈ ມີຄວາມປາຖະໜາສິ່ງທີ່ດີງາມທຸກຄົນ" ພວກເດັກເຫຼົ່ານັ້ນ ຈຶ່ງເຂົ້າໄປຫາພິກຂຸທັງຫຼາຍຂໍບັນພະຊາ ພິກຂຸທັງຫຼາຍໃຫ້ເດັກນ້ອຍພວກນັ້ນ ບັນພະຊາອຸປະສົມບົດແລ້ວດ້ວຍອາການຢ່າງນັ້ນ

ເມື່ອເວລາໃກ້ຮຸ່ງເຊົ້າແຫ່ງຣາຕີ ພິກຂຸໃໝ່ເຫຼົ່ານັ້ນ ລຸກຂຶ້ນຮ້ອງໄຫ້ວ່າ "ທ່ານທັງຫຼາຍ ໂຜດໃຫ້ເຂົ້າຕົ້ມ ໂຜດໃຫ້ເຂົ້າສຸກ ໂຜດໃຫ້ຂອງຫຍ້ຳ"

ພິກຂຸທັງຫຼາຍກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ຖ້າໃຫ້ຮຸ່ງແຈ້ງສາກ່ອນ ຖ້າມີເຂົ້າຕົ້ມພວກທ່ານຈະໄດ້ສັນ ຖ້າມີເຂົ້າສຸກ ພວກທ່ານຈະໄດ້ສັນ ຖ້າມີຂອງຫຍ້ຳ ພວກທ່ານກໍຈະໄດ້ຫຍ້ຳ ແຕ່ຖ້າເຂົ້າຕົ້ມ ເຂົ້າສວຍ ຫຼື ຂອງຫຍ້ຳບໍ່ມີ ພວກທ່ານຕ້ອງທ່ຽວບິນທະບາດມາສັນເອງ

ພິກຂຸໃໝ່ເຫຼົ່ານັ້ນ ອັນພິກຂຸທັງຫຼາຍກ່າວຢູ່ຢ່າງນີ້ ກໍຍັງພາກັນຮ້ອງໄຫ້ວ່າ "ທ່ານທັງຫຼາຍ ໂຜດໃຫ້ເຂົ້າຕົ້ມ ໂຜດໃຫ້ເຂົ້າສຸກ ໂຜດໃຫ້ຂອງຫຍ້ຳເທີ້ນ" ພາກັນຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ໃສ່ເສນາສະນະ

ພຣະຜູ້ມີພຣະພາກເຈົ້າຊົງຕື່ນບັນທົມໃນເວລາໃກ້ຮຸ່ງເຊົ້າແຫ່ງຣາຕີ ໄດ້ຊົງສະດັບສຽງເດັກ ນ້ອຍຮ້ອງ ຈຶ່ງຕັດກັບທ່ານພຣະອານົນວ່າ "ອານົນ ສຽງເດັກນ້ອຍຮ້ອງໄຫ້ຍ້ອນສາເຫດໃດນໍ?"

ເມື່ອແລ້ວ ທ່ານພຣະອານົນໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ທັງໝົດ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸຮູ້ຢູ່ກໍຍັງອຸປະສົມບົດໃຫ້ບຸກຄົນອາຍຸຢ່ອນກວ່າ ໒໐ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນຮູ້ຢູ່ກໍຍັງອຸປະສົມບົດໃຫ້ບຸກຄົນຜູ້ມີອາຍຸຢ່ອນກວ່າ ໒໐ ປີນໍ? ພິກຂຸທັງຫຼາຍ ບຸກຄົນຜູ້ມີ ອາຍຸບໍ່ຮອດ ໒໐ ປີ ບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ອາດຈະພາກຊີວິດໄດ້ ພິກຂຸທັງຫຼາຍ ບຸກຄົນຜູ້ມີອາຍຸຄົບ ໒໐ ປີ ສາມາດອົດທົນ ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ ເກີດຂຶ້ນເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ບໍ່ໜ້າຍິນ

ດີ ບໍ່ໜ້າພໍໃຈ ອາດຈະພາກຊີວິດໄດ້ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໐໓] ກໍ ພິກຂຸໃດຮູ້ຢູ່ ອຸປະສົມບົດໃຫ້ບຸກຄົນຜູ້ມີອາຍຸຍ່ອນກວ່າ ໒໐ ປີ ບຸກຄົນນັ້ນບໍ່ເປັນອັນອຸປະສົມບົດ ແລະພິກຂຸເຫຼົ່ານັ້ນຄວນຖືກຕຳໜິ ພິກຂຸນັ້ນ ຕ້ອງອາບັດປາຈິດຕີ

### ເລື້ອງເດັກຊາຍອຸບາລີ ຈົບ

## ສິກຂາບົດວິພັງ

[໔໐໔] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ໄດ້ແກ່ ພິກຂຸຮູ້ເອງ ຜູ້ອື່ນບອກໃຫ້ພິກຂຸນັ້ນຮູ້ ຫຼື ບຸກຄົນຜູ້ມີອາຍຸບໍ່ຄົບ ໒໐ ປີນັ້ນບອກ

ທີ່ຊື່ວ່າ ມີອາຍຸຍ່ອນກວ່າ ໒໐ ປີ ຄື ຜູ້ມີອາຍຸບໍ່ຮອດ ໒໐ ປີ

ພິກຂຸຕັ້ງໃຈວ່າ "ຈະອຸປະສົມບົດໃຫ້" ສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພຣະອຸປັດຊາຕ້ອງອາບັດປາຈິດຕີ ຄະນະ ແລະອາຈານຕ້ອງອາບັດທຸກກົດ

## ບົດພາຊະນີ

[໔໐໕] ບຸກຄົນອາຍຸຍ່ອນກວ່າ ໒໐ ປີ ພິກຂຸສຳຄັນວ່າອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດໃຫ້ ຕ້ອງອາບັດປາຈິດຕີ

ບຸກຄົນອາຍຸຍ່ອນກວ່າ ໒໐ ປີ ພິກຂຸບໍ່ແນ່ໃຈ ອຸປະສົມບົດໃຫ້ ຕ້ອງອາບັດທຸກກົດ

ບຸກຄົນອາຍຸຍ່ອນກວ່າ ໒໐ ປີ ພິກຂຸສຳຄັນວ່າອາຍຸຄົບ ໒໐ ປີ ອຸປະສົມບົດໃຫ້ ບໍ່ຕ້ອງອາບັດ

ບຸກຄົນອາຍຸຄົບ ໒໐ ປີ ພິກຂຸສຳຄັນວ່າອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດໃຫ້ ຕ້ອງອາບັດທຸກກົດ

ບຸກຄົນອາຍຸຄົບ ໒໐ ປີ ພິກຂຸບໍ່ແນ່ໃຈ ອຸປະສົມບົດໃຫ້ ຕ້ອງອາບັດທຸກກົດ
ບຸກຄົນອາຍຸຄົບ ໒໐ ປີ ພິກຂຸສໍາຄັນວ່າອາຍຸຄົບ ໒໐ ປີ ອຸປະສົມບົດໃຫ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໖] ໑. ພິກຂຸສໍາຄັນບຸກຄົນອາຍຸຢ່ອນກວ່າ ໒໐ ປີ ວ່າອາຍຸຄົບ ໒໐ ປີ ຈຶ່ງອຸປະສົມບົດໃຫ້

໒. ພິກຂຸສໍາຄັນບຸກຄົນອາຍຸຄົບ ໒໐ ປີ ວ່າອາຍຸຄົບ ໒໐ ປີ ຈຶ່ງອຸປະສົມບົດໃຫ້
໓. ພິກຂຸວິກົນຈະລິດ
໔. ພິກຂຸຕົ້ນບັນຍັດ

**ອູນະວີສະຕິວັດສະສິກຂາບົດທີ ໕ ຈົບ**

# ໗. ສັບປານະກະວັກ

# ໖. ເຖີຍຍະສັດຖະສິກຂາບົດ

## ວ່າດ້ວຍການເດີນທາງໄກຮ່ວມກັບພໍ່ຄ້າກວຽນຜູ້ເປັນໂຈນ

## ເລື້ອງພິກຂຸອົງໜຶ່ງ

[໔໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພໍ່ຄ້າກວຽນກຸ່ມໜຶ່ງຕ້ອງການຈະເດີນທາງຈາກນະຄອນຣາຊະຄືໄປຖິ່ນຍ້ອນແສງ ພິກຂຸອົງໜຶ່ງໄດ້ກ່າວກັບຄົນເຫຼົ່ານັ້ນດັ່ງນີ້ວ່າ "ອາດຕະມາຈະເດີນທາງຮ່ວມໄປກັບພວກທ່ານ"

ພວກພໍ່ຄ້າກວຽນກ່າວວ່າ "ພວກຂ້າພະເຈົ້າຈະໜີພາສີ ຂ້ານ້ອຍ"

ເຈົ້າໜ້າທີ່ເກັບພາສີຮູ້ຂ່າວວ່າ "ພວກພໍ່ຄ້າກວຽນຈະໜີພາສີ" ຈຶ່ງດັກຊຸ້ມຢູ່ຂ້າງທາງ ເມື່ອເຈົ້າໜ້າທີ່ເກັບພາສີຈັບພວກພໍ່ຄ້າກວຽນໝູ່ນັ້ນ ຢຶດຂອງແລ້ວໄດ້ກ່າວກັບພິກຂຸນັ້ນວ່າ "ຄູບາພວກທ່ານຮູ້ຢູ່ ເປັນຫຍັງ ຈຶ່ງຍັງເດີນທາງຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນແນວນີ້ນໍ" ໄດ້ສອບສວນແລ້ວປ່ອຍໄປ ເມື່ອພິກຂຸນັ້ນໄປເຖິງນະຄອນສາວັດຖີ ຈຶ່ງແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຮູ້ຢູ່ ແຕ່ຍັງຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານຮູ້ຢູ່ຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຮູ້ຢູ່ ແຕ່ຍັງຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໐໘] ກໍ ພິກຂຸໃດ ຮູ້ຢູ່ ຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນ ຜູ້ເປັນໂຈນ ໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕິ

### ເລື້ອງພິກຂຸອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໔໐໙] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ໄດ້ແກ່ ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ

ທີ່ຊື່ວ່າ ກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ໄດ້ແກ່ ພວກໂຈນຜູ້ເຄີຍກະທຳການປຸ້ນແລ້ວ ຫຼື ຍັງບໍ່ເຄີຍກະທຳການປຸ້ນ ຜູ້ລັກຂອງຫຼວງ ຫຼື ໜີພາສີ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ຊັກຊວນກັນ ຄື ຊັກຊວນກັນດ້ວຍຄຳວ່າ "ພວກເຮົາໄປກັນເທີ້ນທ່ານ ພວກເຮົາໄປກັນເທີ້ນທ່ານຜູ້ຈະເລີນ ໄປກັນເທີ້ນທ່ານທັງຫຼາຍ ພວກເຮົາໄປກັນເທີ້ນທ່ານ ພວກເຮົາຈະໄປວັນນີ້ ມື້ອື່ນນີ້ ຫຼື ມື້ຮືນີ້" ຕ້ອງອາບັດທຸກກົດ

ຄໍາວ່າ ໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຄື ໝູ່ບ້ານໜຶ່ງກໍານົດພຽງແຕ່ໄກ່ບິນຕົກ ພິກຂຸຕ້ອງອາບັດປາຈິດຕີທຸກ ໆ ບໍລິເວນໝູ່ບ້ານ ໃນປ່າທີ່ບໍ່ມີໝູ່ບ້ານ ພິກຂຸຕ້ອງອາບັດປາຈິດຕີທຸກ ໆ ໄລຍະເຄິ່ງໂຍດ

## ບົດພາຊະນີ

[໔໑໐] ກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸສໍາຄັນວ່າເປັນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ຊັກຊວນກັນເດີນທາງໄກຮ່ວມກັນໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

ກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸບໍ່ແນ່ໃຈ ຊັກຊວນກັນເດີນທາງໄກຮ່ວມກັນໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດທຸກກົດ

ກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸສໍາຄັນວ່າບໍ່ແມ່ນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ຊັກຊວນກັນເດີນທາງໄກຮ່ວມກັນໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ບໍ່ຕ້ອງອາບັດ

ພິກຂຸຊັກຊວນ ຄົນທັງຫຼາຍບໍ່ໄດ້ຊັກຊວນ ພິກຂຸຕ້ອງອາບັດທຸກກົດ

ບໍ່ແມ່ນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸສໍາຄັນວ່າ ກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ຕ້ອງອາບັດທຸກກົດ

ບໍ່ແມ່ນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ພິກຂຸສໍາຄັນວ່າບໍ່ແມ່ນກຸ່ມພໍ່ຄ້າກວຽນຜູ້ເປັນໂຈນບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໑໑] ໑. ພິກຂຸເດີນທາງໂດຍບໍ່ໄດ້ຊັກຊວນ

໒. ຄົນທັງຫຼາຍຊັກຊວນ ແຕ່ພິກຂຸບໍ່ໄດ້ຊັກຊວນ

໓. ພິກຂຸໄປຜິດເວລານັດໝາຍ

໔. ພິກຂຸຜູ້ເດີນທາງກັບພໍ່ຄ້າກວຽນຜູ້ເປັນໂຈນໃນເວລາມີເຫດຂັດຂ້ອງ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ເຖີຍຍະສັດຖະສິກຂາບົດທີ ໖ ຈົບ**

# ໗. ສັບປານະກະວັກ

## ໗. ສັງວິທານະສິກຂາບົດ
## ວ່າດ້ວຍການຊັກຊວນກັນເດີນທາງໄກຮ່ວມກັບມາຕຸຄາມ

### ເລື້ອງພິກຂຸອົງໜຶ່ງ

[໔໑໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງເດີນທາງໄປນະຄອນສາວັດຖີ ໃນແຄວ້ນໂກສົນ ຜ່ານທາງປະຕູໝູ່ບ້ານແຫ່ງໜຶ່ງ ແມ່ຍິງຄົນໜຶ່ງຜິດຖຽງກັບສາມີອອກຈາກໝູ່ບ້ານພົບພິກຂຸນັ້ນແລ້ວໄດ້ກ່າວດັ່ງນີ້ວ່າ "ຄູບາຜູ້ຈະເລີນກຳລັງຈະໄປໃສ"

ພິກຂຸນັ້ນຕອບວ່າ "ແມ່ອອກ ອາດຕະມາຈະໄປນະຄອນສາວັດຖີ"

ແມ່ຍິງນັ້ນກ່າວວ່າ "ຂ້ານ້ອຍຂໍເດີນທາງໄປກັບຄູບາດ້ວຍ"

ພິກຂຸນັ້ນກ່າວວ່າ "ມາໂລດ ແມ່ອອກ"

ຄັ້ງນັ້ນ ສາມີຂອງແມ່ຍິງນັ້ນອອກຈາກບ້ານແລ້ວຖາມພວກຊາວບ້ານວ່າ "ພວກທ່ານເຫັນແມ່ຍິງມີຮູບຮ່າງຢ່າງນີ້ແດ່ບໍ?"

ພວກຊາວບ້ານຕອບວ່າ "ທ້າວ ແມ່ຍິງຮູບຮ່າງຢ່າງນັ້ນ ເດີນທາງໄປກັບຄູບາແລ້ວ"

ລຳດັບນັ້ນ ຊາຍຄົນນັ້ນໄດ້ຕິດຕາມໄປຈັບພິກຂຸນັ້ນ ໄດ້ທຸບຕີແລ້ວປ່ອຍໄປ ຄັ້ງນັ້ນ ພິກຂຸນັ້ນນັ່ງຈົ່ມຢູ່ທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ

ໃນບັດນັ້ນ ແມ່ຍິງນັ້ນໄດ້ກ່າວກັບສາມີດັ່ງນີ້ວ່າ "ອ້າຍ ພິກຂຸນັ້ນບໍ່ໄດ້ພາເຮົາໄປ ເຮົາເອງເປັນຝ່າຍຂໍໄປກັບພິກຂຸນັ້ນ ພິກຂຸນັ້ນບໍ່ແມ່ນຕົວການ ທ່ານຈົ່ງໄປຂໍຂະມາພິກຂຸນັ້ນ"

ຄັ້ງນັ້ນ ຊາຍຄົນນັ້ນໄດ້ໄປຂໍຂະມາພິກຂຸນັ້ນ

ເມື່ອພິກຂຸນັ້ນໄປເຖິງນະຄອນສາວັດຖີແລ້ວ ຈຶ່ງເລົ່າເລື່ອງນັ້ນໃຫ້ພິກຂຸທັງຫຼາຍຮັບຮູ້ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ

"ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້"

## ພຣະບັນຍັດ

[໔໑໓] ກໍ ພິກຂຸໃດ ຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມ ໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

## ເລື້ອງພິກຂຸອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໔໑໔] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ມາຕຸຄາມ ໄດ້ແກ່ ຍິງມະນຸດ ບໍ່ແມ່ນນາງຍັກ ບໍ່ແມ່ນນາງເຜດ ບໍ່ແມ່ນສັດເດຍຣັດສານໂຕແມ່ ແຕ່ເປັນຍິງທີ່ຮູ້ດຽງສາ ສາມາດເຂົ້າໃຈຄຳເວົ້າສຸພາສິດ ທຸບພາສິດ ຄຳຫຍາບແລະຄຳສຸພາບ

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ຊັກຊວນກັນ ຄື ຊັກຊວນວ່າ "ພວກເຮົາໄປກັນເທີ້ນ ນາງ ພວກເຮົາໄປກັນເທີ້ນຄູບາ ໄປກັນເທີ້ນຄູບາ ພວກເຮົາໄປກັນເທີ້ນນາງ ພວກເຮົາຈະໄປວັນນີ້ ມື້ອື່ນນີ້ ຫຼື ມື້ຮືນີ້" ຕ້ອງອາບັດທຸກກົດ

ຄຳວ່າ ໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຄື ໝູ່ບ້ານໜຶ່ງກຳນົດພຽງແຕ່ໄກ່ບິນຕົກ ພິກຂຸຕ້ອງອາບັດປາຈິດຕີທຸກ ໆ ບໍລິເວນໝູ່ບ້ານ ໃນປ່າທີ່ບໍ່ມີໝູ່ບ້ານ ພິກຂຸຕ້ອງອາບັດປາຈິດຕີທຸກ ໆ ໄລຍະເຄິ່ງໂຍດ

## ບົດພາຊະນີ

## ຕິກະປາຈິດຕີ

[໔໑໕] ມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຊັກຊວນກັນເດີນທາງໄກຮ່ວມກັນ ໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸບໍ່ແນ່ໃຈ ຊັກຊວນກັນເດີນທາງໄກຮ່ວມກັນໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

ມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ຊັກຊວນກັນເດີນທາງໄກຮ່ວມກັນໂດຍທີ່ສຸດແມ່ນພຽງແຕ່ບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸຊັກຊວນ ມາຕຸຄາມບໍ່ໄດ້ຊັກຊວນ ພິກຂຸຕ້ອງອາບັດທຸກກົດ

ພິກຂຸຊັກຊວນກັນເດີນທາງໄກຮ່ວມກັນກັບນາງຍັກ ນາງເຜດ ບັນເດາະ ຫຼື ສັດເດຍຣັດສານມີກາຍເປັນມະນຸດຜູ້ຍິງ ໂດຍທີ່ສຸດແມ່ນສິ້ນບໍລິເວນໝູ່ບ້ານໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າເປັນມາຕຸຄາມ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນມາຕຸຄາມ ພິກຂຸສຳຄັນວ່າບໍ່ແມ່ນມາຕຸຄາມ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໑໖] ໑. ພິກຂຸເດີນທາງໂດຍບໍ່ໄດ້ຊັກຊວນ

໒. ມາຕຸຄາມຊັກຊວນ ແຕ່ພິກຂຸບໍ່ໄດ້ຊັກຊວນ

໓. ພິກຂຸໄປຜິດເວລານັດໝາຍ

໔. ພິກຂຸຜູ້ເດີນທາງກັບມາຕຸຄາມໃນເວລາມີເຫດຂັດຂ້ອງ

໕. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ສັງວິທານະສິກຂາບົດທີ ៧ ຈົບ**

## ៧. ສັບປານະກະວັກ

## ໘. ອະຣິດຖະສິກຂາບົດ

### ວ່າດ້ວຍພຣະອະຣິດຖະກ່າວຕູ່ພຣະຜູ້ມີພຣະພາກເຈົ້າ

### ເລື້ອງພຣະອະຣິດຖະ

[໔໑៧] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່

ພຣະອະຣິດຖະ ຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພິກຂຸຫຼາຍອົງໄດ້ຮັບຮູ້ຂ່າວວ່າ "ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ພຣະອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ" ເມື່ອແລ້ວພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປຫາພຣະອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພຣະອະຣິດຖະຜູ້ມີບັບພະບຸຣຸດເປັນພານຂ້ານົກແຮ້ງດັ່ງນີ້ວ່າ "ທ່ານອະຣິດຖະ ໄດ້ຂ່າວວ່າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ທ່ານວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ ແມ່ນບໍ?

ພຣະອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງກ່າວວ່າ "ເໝືອນຈະເປັນຢ່າງນັ້ນທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພິກຂຸທັງຫຼາຍໄດ້ກ່າວວ່າ "ທ່ານອະຣິດຖະ ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ທ່ານອະຣິດຖະ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນ ກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ຈິງ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຕ່ອນຊີ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຄົບເພີງຫຍ້າ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຂຸມຖ່ານເພີງ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຄວາມຝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຂອງທີ່ຢືມມາ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນໝາກໄມ້ຄາຕົ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຊຽງຊອຍຊີ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຫອກຫຼາວ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ

ພຣະອະຣິດຖະຖືກພິກຂຸເຫຼົ່ານັ້ນຕັກເຕືອນ ແຕ່ກໍຍັງກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນທິດຖິບາບນັ້ນຢູ່ຢ່າງນັ້ນວ່າ "ເຖິງຢ່າງນັ້ນ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພິກຂຸເຫຼົ່ານັ້ນ ບໍ່ອາດຈະປົດເປືອງພຣະອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງຈາກທິດຖິບາບນັ້ນໄດ້ ເມື່ອແລ້ວພິກຂຸທັງຫຼາຍ ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຂາບທູນເລື່ອງນີ້ໃຫ້ພຣະຜູ້ມີພຣະພາກຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພຣະອະຣິດຖະວ່າ "ອະຣິດຖະ ໄດ້ຂ່າວວ່າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ທ່ານວ່າເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ ແມ່ນບໍ?" ພຣະອະຣິດຖະທູນຮັບວ່າ "ເໝືອນຈະເປັນຢ່າງນັ້ນຂ້ານ້ອຍ ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວໄດ້ ຢ່າງໃດ ໂມຄະບຸຣຸດ ເຮົາກ່າວທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນ ກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ ບໍ່ແມ່ນບໍ? ເຮົາກ່າວວ່າກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ ມີໂທດຢ່າງຍິ່ງ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນ ຕ່ອນຊີ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຄົບເພີງຫຍ້າ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຂຸມຖ່ານເພີງ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຄວາມຝັນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຂອງທີ່ຢືມມາ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນໝາກໄມ້ຄາຕົ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຊຽງຊອຍຊີ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຫອກຫຼາວ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ໂມຄະບຸຣຸດ ກໍເມື່ອເປັນເຊັ່ນນີ້ ທ່ານຊື່ວ່າກ່າວຕູ່ເຮົາດ້ວຍທິດຖິທີ່ຍຶດຖືໄວ້ຜິດ ຊື່ວ່າທຳລາຍຕົນເອງ ແລະ ຊື່ວ່າປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ໂມຄະບຸຣຸດ ຂໍ້ນັ້ນຈັກເປັນໄປເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ ໂມຄະບຸຣຸດ ການກະທຳຢ່າງນີ້

ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໑໗] ກໍ ພິກຂຸໃດ ກ່າວຢ່າງນີ້ວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ" ພິກຂຸນັ້ນ ອັນພິກຂຸທັງຫຼາຍເພິ່ງວ່າກ່າວຕັກເຕືອນຢ່າງນີ້ວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ທ່ານ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍໄວ້ໂດຍ ປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ຈິງ" ພິກຂຸນັ້ນ ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນັ້ນອັນພິກຂຸທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງ ເພື່ອໃຫ້ສະລະທິດຖິນັ້ນ ຖ້າທ່ານກຳລັງຖືກສູດສະມະນຸພາດຈົນກວ່າຈະຄົບ ໓ ຄັ້ງ ສະລະທິດຖິນັ້ນໄດ້ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດປາຈິດຕີ

### ເລື້ອງພຣະອະຣິດຖະ ຈົບ

## ສິກຂາບົດວິພັງ

[໔໑໘] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າ ພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ກ່າວຢ່າງນີ້ ຄວາມວ່າ ພິກຂຸກ່າວວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ"

ຄຳວ່າ ພິກຂຸນັ້ນ ໄດ້ແກ່ ພິກຂຸຜູ້ກ່າວຢ່າງນັ້ນ

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ພວກພິກຂຸທີ່ໄດ້ເຫັນ ໄດ້ຍິນ ເພິ່ງວ່າກ່າວຕັກເຕືອນພິກຂຸນັ້ນວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ທ່ານ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່

ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ຈິງ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າພິກຂຸນັ້ນສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ

## ພິກຂຸທັງຫຼາຍຮູ້ເລື່ອງແລ້ວບໍ່ຕັກເຕືອນ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເພິ່ງນຳຕົວພິກຂຸນັ້ນມາທ່າມກາງສົງແລ້ວວ່າກ່າວຕັກເຕືອນວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ທ່ານ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ຈິງ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າພິກຂຸນັ້ນສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍເພິ່ງສູດສະມະນຸພາດພິກຂຸນັ້ນ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ເພິ່ງສູດສະມະນຸພາດພິກຂຸນັ້ນຢ່າງນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໔໘໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ພິກຂຸຊື່ນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ ພິກຂຸນັ້ນບໍ່ສະລະທິດຖິນັ້ນ ຖ້າສົງພ້ອມກັນແລ້ວກໍເພິ່ງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະທິດຖິນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ພິກຂຸຊື່ນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ ພິກຂຸນັ້ນບໍ່ສະລະທິດຖິນັ້ນ ສົງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະທິດຖິນັ້ນ ທ່ານອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະທິດຖິນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເຖິງທັກທ້ວງ

ແມ່ນຄັ້ງທີ ໔ ຂ້າພະເຈົ້າກໍຂໍກ່າວຄວາມນີ້ ຯລຯ ແມ່ນຄັ້ງທີ ໓ ຂ້າພະເຈົ້າກໍຂໍກ່າວຄວາມນີ້ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ພິກຂຸຊື່ນີ້ ຢ່າງນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ ພິກຂຸນັ້ນບໍ່ສະລະທິດຖິນັ້ນ ສົງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະທິດຖິນັ້ນ ທ່ານອົງໃດ ເຫັນດ້ວຍກັບການສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະທິດຖິນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ ສົງສູດສະມະນຸພາດແລ້ວເພື່ອໃຫ້ສະລະທິດຖິນັ້ນ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິຢ່າງນີ້

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

### ຕິກະປາຈິດຕິ

[໔໘໑] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າ ເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງບໍ່ສະລະ ຕ້ອງອາບັດປາຈິດຕິ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໘໒] ໑. ພິກຂຸຍັງບໍ່ຖືກສູດສະມະນຸພາດ

໒. ພິກຂຸຜູ້ສະລະ

໓. ພິກຂຸວິກົນຈະລິດ

໔. ພິກຂຸຕົ້ນບັນຍັດ

**ອະຣິດຖະສິກຂາບົດທີ ໘ ຈົບ**

# ໗. ສັບປານະກະວັກ

## ໙. ອຸກຂິດຕະສຳໂພຄະສິກຂາບົດ

### ວ່າດ້ວຍການຄົບຫາພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ

### ເລື້ອງພຣະສັບພັກຄີ

[໔໘໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮູ້ຢູ່ກໍຍັງຄົບຫາແດ່ ຢູ່ຮ່ວມແດ່ ນອນຮ່ວມແດ່ ກັບພິກຂຸຊື່ອະຣິດຖະຜູ້ກ່າວຕູ່ຢ່າງນັ້ນ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຍັງບໍ່ຍອມສະລະທິດຖິນັ້ນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຮູ້ຢູ່ກໍຍັງຄົບຫາແດ່ ຢູ່ຮ່ວມແດ່ ນອນຮ່ວມແດ່ກັບພິກຂຸຊື່ ອະຣິດຖະ ຜູ້ກ່າວຕູ່ຢ່າງນັ້ນ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຍັງບໍ່ຍອມສະລະທິດຖິນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ກໍຍັງຄົບຫາແດ່ ຢູ່ຮ່ວມແດ່ ນອນຮ່ວມແດ່ກັບພິກຂຸອະຣິດຖະຜູ້ກ່າວຕູ່ຢ່າງນັ້ນ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຍັງບໍ່ຍອມສະລະທິດຖິນັ້ນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮູ້ຢູ່ກໍຍັງຄົບຫາແດ່ ຢູ່ຮ່ວມແດ່ ນອນຮ່ວມແດ່ກັບພິກຂຸອະຣິດຖະຜູ້ກ່າວຕູ່ຢ່າງນັ້ນ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນຍັງບໍ່ຍອມສະລະທິດຖິນັ້ນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔໘໔] ກໍ ພິກຂຸໃດ ຮູ້ຢູ່ກໍຍັງຄົບຫາ ຢູ່ຮ່ວມ ຫຼື ນອນຮ່ວມກັບພິກຂຸຜູ້ກ່າວຕູ່ຢ່າງນັ້ນຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຍັງບໍ່ຍອມສະລະທິດຖິນັ້ນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໔໕] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ ຫຼື ພິກຂຸອົງທີ່ກ່າວຕູ່ ນັ້ນບອກ

ຄຳວ່າ ຜູ້ກ່າວຕູ່ຢ່າງນັ້ນ ຄື ພິກຂຸຜູ້ກ່າວຢ່າງນີ້ວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ທີ່ຊື່ວ່າ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຄື ພິກຂຸນັ້ນຖືກສົງລົງອຸກເຂປະນີຍະກຳແລ້ວ ແຕ່ສົງຍັງບໍ່ໄດ້ຮຽກເຂົ້າໝູ່

ຄຳວ່າ ກັບ ຯລຯ ຍັງບໍ່ຍອມສະລະທິດຖິນັ້ນ ຄື ຮ່ວມກັບຜູ້ທີ່ຍັງບໍ່ຍອມສະລະຄວາມເຫັນນັ້ນ

ຄຳວ່າ ຄົບຫາ ອະທິບາຍວ່າ ທີ່ຮຽກວ່າຄົບຫາ ໄດ້ແກ່ ການຄົບຫາ ໒ ຢ່າງຄື (໑) ຄົບຫາທາງອາມິດ (໒) ຄົບຫາທາງທຳ

ທີ່ຊື່ວ່າ ຄົບຫາທາງອາມິດ ຄື ພິກຂຸໃຫ້ອາມິດ ຫຼື ຮັບອາມິດ ຕ້ອງອາບັດປາຈິດຕິ

ທີ່ຊື່ວ່າ ຄົບຫາທາງທຳ ຄື ພິກຂຸຍົກທຳຂຶ້ນສະແດງ ຫຼື ໃຫ້ຍົກທຳຂຶ້ນສະແດງ

ພິກຂຸຍົກທຳຂຶ້ນສະແດງຫຼືໃຫ້ຍົກທຳຂຶ້ນສະແດງເປັນບົດ ຕ້ອງອາບັດປາຈິດຕິທຸກ ໆ ບົດ

ພິກຂຸຍົກທຳຂຶ້ນສະແດງ ຫຼື ໃຫ້ຍົກທຳຂຶ້ນສະແດງເປັນອັກສອນ ຕ້ອງອາບັດປາຈິດຕິທຸກ ໆ ອັກສອນ

ຄຳວ່າ ຢູ່ຮ່ວມ ຄວາມວ່າ ພິກຂຸກະທຳອຸໂປສົດ ປະວາຣະນາ ຫຼື ສັງຄະກຳຮ່ວມກັບພິກຂຸຜູ້ຖືກສົງອຸກເຂປະນີຍະກຳ ຕ້ອງອາບັດປາຈິດຕິ

ຄຳວ່າ ນອນຮ່ວມກັບ ອະທິບາຍວ່າ ໃນທີ່ທີ່ມີຫຼັງຄາດຽວກັນ ເມື່ອພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳນອນ ພິກຂຸກໍນອນ ຕ້ອງອາບັດປາຈິດຕິ ເມື່ອພິກຂຸນອນ ພິກຂຸ ຜູ້ຖືກສົງລົງອຸກເຂປະນີຍະກຳກໍນອນ ພິກຂຸທີ່ນອນດ້ວຍ ຕ້ອງອາບັດປາຈິດຕິ ຫຼື ນອນ ທັງ ໒ ອົງ ກໍຕ້ອງອາບັດປາຈິດຕິ ພິກຂຸລຸກຂຶ້ນແລ້ວກັບນອນອີກ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

[໔໔໖] ພິກຂຸຖືກສົງລົງອຸກເຂປະນີຍະກຳ ພິກຂຸສຳຄັນວ່າເປັນພິກຂຸຖືກສົງລົງອຸກເຂປະນີຍະກຳ ຄົບຫາ ຢູ່ຮ່ວມ ຫຼື ນອນຮ່ວມ ຕ້ອງອາບັດປາຈິດຕິ

ພິກຂຸຖືກສົງລົງອຸກເຂປະນີຍະກຳ ພິກຂຸບໍ່ແນ່ໃຈ ຄົບຫາ ຢູ່ຮ່ວມ ຫຼື ນອນຮ່ວມ ຕ້ອງອາບັດທຸກກົດ

ພິກຂຸຖືກສົງລົງອຸກເຂປະນີຍະກຳ ພິກຂຸສຳຄັນວ່າບໍ່ແມ່ນພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ ຄົບຫາ ຢູ່ຮ່ວມ ຫຼື ນອນຮ່ວມ ບໍ່ຕ້ອງອາບັດ

ພິກຂຸບໍ່ໄດ້ຖືກສົງລົງອຸກເຂປະນີຍະກຳ ພິກຂຸສຳຄັນວ່າເປັນພິກຂຸທີ່ຖືກສົງລົງ ອຸກເຂປະນີຍະກຳ ຕ້ອງອາບັດທຸກກົດ

ພິກຂຸບໍ່ໄດ້ຖືກສົງລົງອຸກເຂປະນີຍະກຳ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ພິກຂຸບໍ່ໄດ້ຖືກສົງລົງອຸກເຂປະນີຍະກຳ ພິກຂຸສຳຄັນວ່າບໍ່ແມ່ນພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໘໗] ໑. ພິກຂຸຮູ້ວ່າ ພິກຂຸນັ້ນບໍ່ໄດ້ຖືກສົງລົງອຸກເຂປະນີຍະກຳ

໒. ພິກຂຸຮູ້ວ່າ "ພິກຂຸນັ້ນຖືກສົງລົງອຸກເຂປະນີຍະກຳ ແຕ່ສົງຮຽກເຂົ້າໝູ່ແລ້ວ"

໓. ພິກຂຸຮູ້ວ່າ "ພິກຂຸນັ້ນ ຍອມສະລະທິດຖິນັ້ນແລ້ວ"

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ອຸກຂິດຕະສຳໂພຄະສິກຂາບົດທີ ໙ ຈົບ**

# ໗. ສັບປານະກະວັກ

## ໑໐. ກັນຕະກະສິກຂາບົດ

## ວ່າດ້ວຍສະມະນຸດເທດຊື່ກັນຕະກະຖືກສົງນາສະນະ

## ເລື້ອງສະມະນຸດເທດຊື່ກັນຕະກະ

[໔໘໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ສະມະນຸດເທດຊື່ກັນຕະກະວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ"

ພິກຂຸຫຼາຍອົງໄດ້ຮັບຮູ້ຂ່າວວ່າ "ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ສະມະນຸດເທດຊື່ກັນຕະກະວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ" ເມື່ອແລ້ວພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປຫາສະມະນຸດເທດຊື່ກັນຕະກະເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບສະມະນຸດເທດຊື່ກັນຕະກະດັ່ງນີ້ວ່າ "ກັນຕະກະ ໄດ້ໄດ້ຂ່າວວ່າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ທ່ານວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກແມ່ນບໍ?

ສະມະນຸດເທດຊື່ກັນຕະກະກ່າວວ່າ "ເໝືອນຈະເປັນຢ່າງນັ້ນ ທ່ານຜູ້ຈະເລີນທັງຫຼາຍຂ້າພະເຈົ້າຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພິກຂຸທັງຫຼາຍ ໄດ້ກ່າວວ່າ "ກັນຕະກະ ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດ ຢ່າງນັ້ນ ກັນຕະກະ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ຈິງ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຮ່າງໂຄງກະດູກ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຕ່ອນຊີ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຄົບເພີງຫຍ້າ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຂຸມຖ່ານເພີງ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຄວາມຝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຂອງທີ່ຢືມມາ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນໝາກໄມ້ຄາຕົ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຊຽງຊອຍຊີ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຫອກຫຼາວ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າການທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດຢ່າງຍິ່ງ

ສະມະນຸດເທດຊື່ວ່າ ກັນຕະກະຖືກພິກຂຸເຫຼົ່ານັ້ນຕັກເຕືອນ ແຕ່ກໍຍັງກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນທິດຖິບາບນັ້ນຢູ່ຢ່າງນັ້ນວ່າ "ເໝືອນຈະເປັນຢ່າງນັ້ນ ທ່ານທັງຫຼາຍ ຂ້າພະເຈົ້າ ຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ດອກ"

ພິກຂຸເຫຼົ່ານັ້ນບໍ່ອາດປົດເປື້ອງສະມະນຸດເທດຊື່ກັນຕະກະຈາກທິດຖິບາບນັ້ນໄດ້ ເມື່ອແລ້ວພິກຂຸທັງຫຼາຍຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

## ຊົງປະຊຸມສົງສັ່ງນາສະນະກັນຕະກະສະມະນຸດເທດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມສະມະນຸດເທດຊື່ກັນຕະກະວ່າ "ກັນຕະກະ ໄດ້ຂ່າວວ່າ ທິດຖິບາບເຊັ່ນນີ້ໄດ້ເກີດຂຶ້ນແກ່ທ່ານວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ດອກ ແມ່ນບໍ?" ສະມະນຸດເທດຊື່ກັນຕະກະທູນຮັບວ່າ "ເໝືອນຈະເປັນຢ່າງນັ້ນ ຂ້ານ້ອຍ ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ດອກ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມຄະບຸຣຸດ ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວໄດ້ຢ່າງໃດ ໂມຄະບຸຣຸດ ເຮົາກ່າວທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ ບໍ່ແມ່ນບໍ? ເຮົາກ່າວວ່າກາມທັງຫຼາຍມີຄວາມຍິນດີນ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຕ່ອນຊີ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຄົບເພີງຫຍ້າ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຂຸມຖ່ານເພີງ ຯລຯ ເຮົາກ່າວ ວ່າກາມທັງຫຼາຍປຽບເໝືອນຄວາມຝັນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຂອງທີ່ຢືມມາ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນໝາກໄມ້ຄາຕົ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຂຽງຊອຍຊີ້ນ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຫອກຫຼາວ ຯລຯ ເຮົາກ່າວວ່າກາມທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ

ໂມຄະບຸຣຸດ ກໍເມື່ອເປັນເຊັ່ນນີ້ ທ່ານຊື່ວ່າກ່າວຕູ່ເຮົາດ້ວຍທິດຖິທີ່ຢຶດຖືໄວ້ຜິດ ຊື່ວ່າທຳລາຍຕົນເອງ ແລະ ຊື່ວ່າປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ໂມຄະບຸຣຸດ ຂໍ້ນັ້ນຈັກເປັນໄປເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ຖ້າຢ່າງນັ້ນ ສົງຈົ່ງນາສະນະ ສະມະນຸດເທດຊື່ກັນຕະກະ ພິກຂຸທັງຫຼາຍ ສົງເພິ່ງນາສະນະ ສະມະນຸດເທດຊື່ກັນຕະກະຢ່າງນີ້ ວ່າ "ກັນຕະກະ ຕັ້ງແຕ່ວັນນີ້ທ່ານບໍ່ເພິ່ງອ້າງພຣະຜູ້ມີພ

ຣະພາກເຈົ້າວ່າເປັນສາດສະດາ ແລະທ່ານຈະບໍ່ມີການນອນຮ່ວມກັນ ໒-໓ ຄືນກັບພິກຂຸທັງຫຼາຍເໝືອນສະມະນຸດເທດເຫຼົ່າອື່ນໄດ້ ທ່ານຈົ່ງໄປທີ່ອື່ນ ທ່ານຈົ່ງໄປໃຫ້ພົ້ນ" ດັ່ງນີ້ ຄັ້ງນັ້ນແລ ສົງໄດ້ນາສະນະສະມະນຸດເທດຊື່ກັນຕະກະແລ້ວ

ສະໄໝນັ້ນ ພວກພິກຂຸສັບພັກຄີຮູ້ຢູ່ ກໍຍັງປອບໂຍນສະມະນຸດເທດຊື່ກັນຕະກະທີ່ຖືກສົງນາສະນະຢ່າງນັ້ນແລ້ວແດ່ ໃຊ້ທ່ານໃຫ້ອຸປັດຖາກແດ່ ຄົບຫາແດ່ ນອນຮ່ວມແດ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຮູ້ຢູ່ ຈຶ່ງປອບໂຍນສະມະນຸດເທດຊື່ກັນຕະກະທີ່ຖືກສົງນາສະນະຢ່າງນັ້ນແລ້ວແດ່ ໃຊ້ເຂົາໃຫ້ອຸປັດຖາກແດ່ ຄົບຫາແດ່ ນອນຮ່ວມແດ່ນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ຍັງປອບໂຍນ ສະມະນຸດເທດຊື່ກັນຕະກະທີ່ຖືກສົງນາສະນະຢ່າງນັ້ນແລ້ວແດ່ ໃຊ້ເຂົາໃຫ້ອຸປັດຖາກແດ່ ຄົບຫາແດ່ ນອນຮ່ວມແດ່ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮູ້ຢູ່ ຍັງປອບໂຍນສະມະນຸດເທດຊື່ກັນຕະກະທີ່ຖືກສົງນາສະນະຢ່າງນັ້ນແລ້ວແດ່ ໃຊ້ເຂົາໃຫ້ອຸປັດຖາກແດ່ ຄົບຫາແດ່ນອນຮ່ວມແດ່ນໍ ໂມຄະບຸຣຸດທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເສື່ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໘໙] ຖ້າສະມະນຸດເທດກ່າວຢ່າງນີ້ວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ" ສະມະນຸດເທດນັ້ນອັນພິກຂຸທັງຫຼາຍ ເພິ່ງວ່າກ່າວຕັກເຕືອນວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ສະມະນຸດເທດ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ຊ້ອງເສບໄດ້ແທ້ຈິງ" ສະມະນຸດເທດນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ ກໍຍັງຄົງຢືນຢັນຢູ່ຢ່າງນັ້ນ ສະມະນຸດເທດນັ້ນອັນພິກຂຸທັງຫຼາຍເພິ່ງວ່າ

ກ່າວຕັກເຕືອນວ່າ "ສະມະນຸດເທດ ຕັ້ງແຕ່ວັນນີ້ທ່ານບໍ່ເພິ່ງອ້າງພຣະຜູ້ມີພຣະພາກເຈົ້າວ່າ ເປັນສາດສະດາ ແລະທ່ານຈະບໍ່ມີການນອນຮ່ວມກັບ ໒-໓ ຄືນກັບພິກຂຸທັງຫຼາຍ ເໝືອນສະມະນຸດເທດເຫຼົ່າອື່ນໄດ້ ທ່ານຈົ່ງໄປທີ່ອື່ນ ທ່ານຈົ່ງໄປໃຫ້ພົ້ນ" ກໍ ພິກຂຸໃດຮູ້ຢູ່ ກໍຍັງປອບໂຍນສະມະນຸດເທດຜູ້ຖືກສົງນາສະນະແລ້ວຢ່າງນັ້ນ ໃຊ້ເຂົາໃຫ້ອຸປັດຖາກ ຄົບຫາ ຫຼື ນອນຮ່ວມ ຕ້ອງອາບັດປາຈິດຕີ

**ເລື້ອງສະມະນຸດເທດຊື່ກັນຕະກະ ຈົບ**

## ສິກຂາບົດວິພັງ

[໔໓໐] ທີ່ຊື່ວ່າ ສະມະນຸດເທດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສາມະເນນ

ຄຳວ່າ ກ່າວຢ່າງນີ້ ຄື ສະມະນຸດເທດກ່າວວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ດອກ"

ຄຳວ່າ ສະມະນຸດເທດນັ້ນ ໄດ້ແກ່ ສະມະນຸດເທດຜູ້ກ່າວຢ່າງນັ້ນ

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ພວກພິກຂຸທີ່ໄດ້ເຫັນໄດ້ຍິນ ເພິ່ງວ່າກ່າວຕັກເຕືອນສະມະນຸດເທດນັ້ນວ່າ "ສະມະນຸດເທດ ທ່ານຢ່າໄດ້ກ່າວຢ່າງນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດຢ່າງນັ້ນ ສະມະນຸດເທດ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ຊ້ອງເສບໄດ້ແທ້ຈິງ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ເປັນການດີ ຖ້າບໍ່ສະລະ ສະມະນຸດເທດນັ້ນອັນພິກຂຸທັງຫຼາຍເພິ່ງວ່າ ກ່າວຕັກເຕືອນຢ່າງນີ້ວ່າ "ສະມະນຸດເທດ ຕັ້ງແຕ່ວັນນີ້ທ່ານບໍ່ເພິ່ງອ້າງພຣະຜູ້ມີພຣະພາກເຈົ້າວ່າເປັນສາດສະດາ ແລະທ່ານຈະບໍ່ມີການນອນຮ່ວມກັບ ໒-໓ ຄືນກັບພິກຂຸທັງຫຼາຍ ເໝືອນສະມະນຸດເທດເຫຼົ່າອື່ນໄດ້ ທ່ານຈົ່ງໄປທີ່ອື່ນ ທ່ານຈົ່ງໄປໃຫ້ພົ້ນ"

ຄຳວ່າ ກໍ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໗ລ໗ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ ຫຼື ສະມະນຸດເທດ ນັ້ນບອກ

ຄຳວ່າ ຜູ້ຖືກສົງນາສະນະແລ້ວຢ່າງນັ້ນ ຄື ຖືກສົງໃຫ້ຈິບຫາຍແລ້ວຢ່າງນັ້ນ

ທີ່ຊື່ວ່າ ສະມະນຸດເທດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສາມະເນນ

ຄຳວ່າ ປອບໂຍນ ຄື ພິກຂຸປອບໂຍນວ່າ "ເຮົາຈະໃຫ້ບາດ ຈີວອນ ອຸດເທດ ຫຼື ປະຣິປຸດສາແກ່ສະມະນຸດເທດນັ້ນ" ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ເຂົາໃຫ້ອຸປັດຖາກ ຄື ພິກຂຸຍິນດີແປ້ງ ດິນໜຽວ ໄມ້ຖູແຂ້ວ ຫຼື ນ້ຳບ້ວນປາກຂອງສະມະນຸດເທດນັ້ນ ຕ້ອງອາບັດປາຈິດຕີ

ຄຳວ່າ ຄົບຫາ ອະທິບາຍວ່າ ທີ່ຮຽກວ່າຄົບຫາ ໄດ້ແກ່ ການຄົບຫາ ໒ ຢ່າງ ຄື (໑) ຄົບຫາທາງອາມິດ (໒) ຄົບຫາທາງທຳ

ທີ່ຊື່ວ່າ ຄົບຫາທາງອາມິດ ຄື ພິກຂຸໃຫ້ອາມິດ ຫຼື ຮັບອາມິດ ຕ້ອງອາບັດປາຈິດຕີ

ທີ່ຊື່ວ່າ ຄົບຫາທາງທຳ ຄື ພິກຂຸຍົກທຳຂຶ້ນສະແດງ ຫຼື ໃຫ້ຍົກທຳຂຶ້ນສະແດງ

ພິກຂຸຍົກທຳຂຶ້ນສະແດງ ຫຼື ໃຫ້ຍົກທຳຂຶ້ນສະແດງ ເປັນບົດ ຕ້ອງອາບັດປາຈິດຕີທຸກ ໆ ບົດ

ພິກຂຸຍົກທຳຂຶ້ນສະແດງຫຼືໃຫ້ຍົກທຳຂຶ້ນສະແດງ ເປັນອັກສອນ ຕ້ອງອາບັດປາຈິດຕີທຸກ ໆ ຕົວອັກສອນ

ຄຳວ່າ ນອນຮ່ວມ ອະທິບາຍວ່າ ໃນທີ່ທີ່ມີຫຼັງຄາດຽວກັນ ເມື່ອສະມະນຸດເທດຜູ້ຖືກສົງນາສະນະນອນ ພິກຂຸກໍນອນ ຕ້ອງອາບັດປາຈິດຕີ ເມື່ອພິກຂຸນອນ ສະມະນຸດເທດຜູ້ຖືກສົງນາສະນະກໍນອນ ພິກຂຸທີ່ນອນດ້ວຍ ຕ້ອງອາບັດປາຈິດຕີ ຫຼື ນອນທັງ ໒ ອົງ ກໍຕ້ອງອາບັດປາຈິດຕີ ທັງ ໒ ລຸກຂຶ້ນແລ້ວ ກັບນອນອີກ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໔໓໑] ສະມະນຸດເທດທີ່ຖືກສົງນາສະນະແລ້ວ ພິກຂຸສຳຄັນວ່າຖືກສົງນາສະນະແລ້ວ ປອບໂຍນ ໃຊ້ເຂົາໃຫ້ອຸປັດຖາກ ຄົບຫາ ຫຼື ນອນຮ່ວມ ຕ້ອງອາບັດປາຈິດຕີ

ສະມະນຸດເທດທີ່ຖືກສົງນາສະນະແລ້ວ ພິກຂຸບໍ່ແນ່ໃຈ ປອບໂຍນ ໃຊ້ເຂົາໃຫ້ອຸປັດຖາກ ຄົບຫາ ຫຼື ນອນຮ່ວມ ຕ້ອງອາບັດທຸກກົດ

ສະມະນຸດເທດທີ່ຖືກສົງນາສະນະແລ້ວ ພິກຂຸສຳຄັນວ່າບໍ່ໄດ້ຖືກສົງນາສະນະ ປອບໂຍນ ໃຊ້ເຂົາໃຫ້ອຸປັດຖາກ ຄົບຫາ ຫຼື ນອນຮ່ວມ ບໍ່ຕ້ອງອາບັດ

ສະມະນຸດເທດທີ່ບໍ່ຖືກສົງນາສະນະ ພິກຂຸສຳຄັນວ່າຖືກສົງນາສະນະ ຕ້ອງອາບັດທຸກກົດ

ສະມະນຸດເທດທີ່ບໍ່ຖືກສົງນາສະນະ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ສະມະນຸດເທດທີ່ບໍ່ຖືກສົງນາສະນະ ພິກຂຸສຳຄັນວ່າບໍ່ຖືກສົງນາສະນະ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໓໒] ໑. ພິກຂຸຮູ້ຢູ່ວ່າ "ສະມະນຸດເທດບໍ່ຖືກສົງນາສະນະ"

໔. ພິກຂຸຮູ້ຢູ່ວ່າ "ສະມະນຸດເທດສະລະທິດຖິນັ້ນແລ້ວ"

໓. ພິກຂຸວິກັບຈະລິດ

໔. ພິກຂຸຕົ້ນບັນຍັດ

**ກັນຕະກະສິກຂາບົດທີ ໑໐ ຈົບ**

**ສັບປານະກະວັກທີ ໗ ຈົບ**

## ລວມສິກຂາບົດທີ່ມີໃນສັບປານະກະວັກ

ສັບປານະກະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ສັນຈິດຈະສິກຂາບົດ | ວ່າດ້ວຍຄວາມຈົງໃຈຂ້າສັດມີຊີວິດ |
| ໒. ສັບປານະກະສິກຂາບົດ | ວ່າດ້ວຍການບໍລິໂພກນ້ຳທີ່ມີສັດມີຊີວິດ |
| ໓. ອຸກໂກຕະນະສິກຂາບົດ | ວ່າດ້ວຍການຮື້ຟື້ນອະທິກອນຂຶ້ນມາພິຈາລະນາໃໝ່ |
| ໔. ທຸດຖຸນລະສິກຂາບົດ | ວ່າດ້ວຍການປົກປິດອາບັດຊົ່ວຫຍາບ |
| ໕. ອູນະວີສະຕິວັດສະສິກຂາບົດ | ວ່າດ້ວຍການອຸປະສົມບົດໃຫ້ບຸກຄົນມີອາຍຸຍ່ອນກວ່າ ໒໐ ປີ |
| ໖. ເຖີຍຍະສັດຖະສິກຂາບົດ | ວ່າດ້ວຍການເດີນທາງໄກຮ່ວມກັບພໍ່ຄ້າກວຽນຜູ້ເປັນໂຈນ |
| ໗. ສັງວິທານະສິກຂາບົດ | ວ່າດ້ວຍການຊັກຊວນເດີນທາງໄກຮ່ວມກັບມາຕຸຄາມ |
| ໘. ອະຣິດຖະສິກຂາບົດ | ວ່າດ້ວຍພຣະອະຣິດຖະກ່າວຕູ່ພຣະຜູ້ມີພຣະພາກເຈົ້າ |
| ໙. ອຸກຂິດຕະສຳໂພຄະສິກຂາບົດ | ວ່າດ້ວຍການຄົບຫາພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ |
| ໑໐. ກັນຕະກະສິກຂາບົດ | ວ່າດ້ວຍສະມະນຸດເທດຊື່ກັນຕະກະຖືກສົງນາສະນະ |

# ໗. ສະຫະທຳມິກະວັກ

## ໝວດວ່າດ້ວຍຜູ້ຮ່ວມປະພຶດທຳ

### ໑. ສະຫະທຳມິກະສິກຂາບົດ

### ວ່າດ້ວຍການກ່າວຕັກເຕືອນຜູ້ຮ່ວມປະພຶດທຳໂດຍຊອບທຳ

### ເລື້ອງພຣະສັນນະ

[໔໓໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ທ່ານພຣະສັນນະປະພຶດບໍ່ສົມຄວນ ພິກຂຸທັງຫຼາຍກ່າວຢ່າງນີ້ ວ່າ "ທ່ານສັນນະທ່ານຢ່າໄດ້ກະທຳຢ່າງນີ້ ການກະທຳແບບນີ້ບໍ່ສົມຄວນ" ທ່ານພຣະສັນນະນັ້ນກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນພຣະວິໄນທອນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະສັນນະອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ຈຶ່ງກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນ ຜູ້ສະຫຼາດ ຜູ້ເປັນພຣະວິໄນທອນນໍ" ເມື່ອພິກຂຸທັງຫຼາຍ ຕຳໜິທ່ານພຣະສັນນະໂດຍປະການ ຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະສັນນະວ່າ "ສັນນະ ໄດ້ຂ່າວວ່າ ທ່ານອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳກໍກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນ ຜູ້ສະຫຼາດ ຜູ້ເປັນພຣະວິໄນທອນ ແມ່ນບໍ?" ທ່ານພຣະສັນນະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານອັນພິກຂຸທັງຫຼາຍວ່າ ກ່າວຕັກເຕືອນໂດຍຊອບທຳກໍກ່າວຢ່າງນີ້ວ່າ ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນພຣະວິໄນທອນນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໓໔] ກໍ ພິກຂຸໃດ ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຊອບທຳ ກ່າວຢ່າງນີ້ວ່າ "ຂ້າພະເຈົ້າ ຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນ ຜູ້ສະຫຼາດ ຜູ້ເປັນວິໄນທອນ" ຕ້ອງອາບັດປາຈິດຕິ ພິກຂຸທັງຫຼາຍ ພິກຂຸຜູ້ສຶກສາເພິ່ງຮູ້ ເພິ່ງສອບຖາມ ເພິ່ງພິຈາລະນາ ນີ້ເປັນການກະທຳທີ່ສົມຄວນໃນເລື້ອງນັ້ນ

### ເລື້ອງພຣະສັນນະ ຈົບ

## ສິກຂາບົດວິພັງ

[໔໓໕] ຄຳວ່າ ກໍຫຼລຫຼໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫຼລຫຼ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຫຼລຫຼໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫຼລຫຼ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ອັນພິກຂຸທັງຫຼາຍ ໄດ້ແກ່ ອັນພິກຂຸເຫຼົ່າອື່ນ

ທີ່ຊື່ວ່າ ໂດຍຊອບທຳ ຄື ສິກຂາບົດໃດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ ນີ້ຊື່ວ່າ ໂດຍຊອບທຳ

ພິກຂຸນັ້ນອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນ ດ້ວຍພຣະບັນຍັດໂດຍຊອບທຳນັ້ນ ກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນພຣະວິໄນທອນ ຜູ້ເປັນບັນດິດ ຜູ້ມີປັນຍາ ຜູ້ເປັນພະຫູສູດ ຜູ້ເປັນພຣະທຳມະກະຖຶກ" ດັ່ງນີ້ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

### ຕິກະປາຈິດຕິ

[໔໓໖] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ກ່າວຢ່າງນັ້ນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ກ່າວຢ່າງນັ້ນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ກ່າວຢ່າງນັ້ນ ຕ້ອງອາບັດປາຈິດຕິ

### ທຸກກົດ

ພິກຂຸນັ້ນອັນອຸປະສຳບັນວ່າກ່າວຕັກເຕືອນດ້ວຍເລື້ອງທີ່ບໍ່ແມ່ນພຣະບັນຍັດ ກ່າວວ່າ "ເລື້ອງນີ້ບໍ່ເປັນໄປເພື່ອຄວາມຂັດເກົາ ບໍ່ເປັນໄປເພື່ອຄວາມກຳຈັດ ບໍ່ເປັນໄປເພື່ອຄວາມເປັນຜູ້ໜ້າເຫຼື້ອມໃສ ບໍ່ເປັນໄປເພື່ອຄວາມບໍ່ກໍ່ ບໍ່ເປັນໄປເພື່ອຜາຣົບຄວາມພຽນ" ກ່າວ ວ່າ "ທ່ານ

ທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນພຣະວິໄນທອນ ຜູ້ເປັນບັນດິດ ຜູ້ມີປັນຍາ ຜູ້ເປັນພະຫູສູດ ຜູ້ເປັນພຣະທຳມະກະຖຶກ" ດັ່ງນີ້ ຕ້ອງອາບັດທຸກກົດ

ພິກຂຸນັ້ນອັນອະນຸປະສຳບັນວ່າກ່າວຕັກເຕືອນດ້ວຍພຣະບັນຍັດ ຫຼື ບໍ່ແມ່ນພຣະບັນຍັດ ກ່າວວ່າ "ເລື້ອງນີ້ບໍ່ເປັນໄປເພື່ອຄວາມຂັດເກົາ ບໍ່ເປັນໄປເພື່ອຄວາມກຳຈັດ ບໍ່ເປັນໄປເພື່ອຄວາມເປັນຜູ້ໜ້າເຫຼື້ອມໃສ ບໍ່ເປັນໄປເພື່ອຄວາມບໍ່ກໍ່ ບໍ່ເປັນໄປເພື່ອຜາຣົບຄວາມພຽນ" ກ່າວວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນພຣະວິໄນທອນ ຜູ້ເປັນບັນດິດ ຜູ້ມີປັນຍາ ຜູ້ເປັນພະຫູສູດ ຜູ້ເປັນພຣະທຳມະກະຖຶກ" ດັ່ງນີ້ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

ຄຳວ່າ ຜູ້ສຶກສາ ຄື ຜູ້ຕ້ອງການຕັ້ງໃຈຮູ້

ຄຳວ່າ ເພິ່ງຮູ້ ຄື ໃຫ້ຮູ້ເອງ

ຄຳວ່າ ເພິ່ງສອບຖາມ ຄື ເພິ່ງສອບຖາມວ່າ "ທ່ານຜູ້ຈະເລີນ ສິກຂາບົດນີ້ເປັນຢ່າງໃດ? ຫຼືສິກຂາບົດນີ້ມີເນື້ອຄວາມວ່າຢ່າງໃດ"

ຄຳວ່າ ເພິ່ງພິຈາລະນາ ຄື ເພິ່ງຄິດ ເພິ່ງໄຕ່ຕອງ

ຄຳວ່າ ນີ້ເປັນການກະທຳທີ່ສົມຄວນໃນເລື້ອງນັ້ນ ຄື ນີ້ເປັນຄວາມຖືກຕ້ອງໃນເລື້ອງນັ້ນ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໗] ໑. ພິກຂຸກ່າວວ່າ "ເຮົາຈັກຮູ້ ຈັກສຶກສາ"

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ສະຫະທຳມິກະສິກຂາບົດທີ ໑ ຈົບ**

# ໙. ສະຫະທຳມິກະວັກ

## ໔. ວິເລຂະນະສິກຂາບົດ

### ວ່າດ້ວຍຄວາມຫຍຸ້ງຍາກແຫ່ງສິກຂາບົດ

### ເລື້ອງພຣະສັບພັກຄີ

[໔໓໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດວິໄນກະຖາ ຊົງພັນນາຄຸນແຫ່ງພຣະວິໄນ ຕັດສັນເສີນການຮຽນພຣະວິໄນ ຊົງພັນນາຄຸນພຣະອຸບາລີໂດຍປະການຕ່າງ ໆ

ພິກຂຸທັງຫຼາຍກ່າວວ່າ "ພຣະຜູ້ມີພຣະພາກເຈົ້າຕັດວິໄນກະຖາ ຊົງພັນນາຄຸນແຫ່ງພຣະວິໄນ ຕັດສັນເສີນການຮຽນພຣະວິໄນ ຊົງພັນນາຄຸນທ່ານພຣະອຸບາລີ ໂດຍປະການຕ່າງ ໆ ຢ່າຈັ່ງຊັ້ນເລີຍ ທ່ານທັງຫຼາຍ ພວກເຮົາຈະຮຽນພຣະວິໄນໃນສຳນັກທ່ານພຣະອຸບາລີ

ພິກຂຸເຫຼົ່ານັ້ນຈຳນວນຫຼາຍ ເປັນເຖຣະກໍມີ ເປັນນະວະກະກໍມີ ເປັນມັດຊິມະກໍມີ ຕ່າງພາກັນຮ່ຳຮຽນພຣະວິໄນໃນສຳນັກທ່ານພຣະອຸບາລີ

ຄັ້ງນັ້ນແລ ພວກພິກຂຸສັບພັກຄີໄດ້ປຶກສາກັນວ່າ "ທ່ານທັງຫຼາຍ ບັດນີ້ ພິກຂຸຈຳນວນຫຼາຍເປັນເຖຣະກໍມີ ເປັນນະວະກະກໍມີ ເປັນມັດຊິມະກໍມີ ຕ່າງພາກັນຮ່ຳຮຽນພຣະວິໄນໃນສຳນັກທ່ານພຣະອຸບາລີ ຖ້າພິກຂຸເຫຼົ່ານີ້ຮອບຮູ້ພຣະບັນຍັດໃນພຣະວິໄນ ກໍຈັກດຶງຈູງຊີ້ນຳພວກເຮົາໄດ້ຕາມທີ່ປາຖະໜາໃນເວລາທີ່ປາຖະໜາຈົນພໍແກ່ຄວາມປາຖະໜາ ຢ່າຈັ່ງຊັ້ນເລີຍ ທ່ານທັງຫຼາຍພວກເຮົາຈະດູໝິ່ນພຣະວິໄນ" ເມື່ອແລ້ວພວກພິກຂຸສັບພັກຄີ ຈຶ່ງເຂົ້າໄປຫາພິກຂຸທັງຫຼາຍແລ້ວກ່າວຢ່າງນີ້ວ່າ "ສິກຂາບົດເລັກ ໆ ນ້ອຍ ໆ ທີ່ຍົກຂຶ້ນສະແດງເຫຼົ່ານີ້ຈະມີປະໂຫຍດອັນໃດຍ່ອມເປັນໄປເພື່ອຄວາມລຳຄານ ເພື່ອຄວາມລຳບາກ ເພື່ອຄວາມຫຍຸ້ງຍາກແກ່ພວກເຮົາແທ້ ໆ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງດູໝິ່ນພຣະວິໄນນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານດູໝິ່ນວິໄນ ແມ່ນບໍ?"

ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງດູໝິ່ນວິໄນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໓໙] ກໍ ພິກຂຸໃດ ເມື່ອມີຜູ້ຍົກປາຕິໂມກຂຶ້ນສະແດງຢູ່ ກ່າວຢ່າງນີ້ວ່າ "ສິກຂາບົດນ້ອຍ ໆ ທີ່ຍົກຂຶ້ນສະແດງເຫຼົ່ານີ້ ຈະມີປະໂຫຍດອັນໃດ ຍ່ອມເປັນໄປເພື່ອຄວາມລຳຄານ ເພື່ອຄວາມລຳບາກ ເພື່ອຄວາມຫຍຸ້ງຍາກ" ຕ້ອງອາບັດປາຈິດຕີ ຍ້ອນດູໝິ່ນສິກຂາບົດ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໔໐] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ເມື່ອມີຜູ້ຍົກປາຕິໂມກຂຶ້ນສະແດງຢູ່ ຄວາມວ່າ ເມື່ອມີຜູ້ໃດຜູ້ໜຶ່ງຍົກຂຶ້ນສະແດງເອງ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງຢູ່ ຫຼື ກຳລັງທ່ອງປາຕິໂມກ

ຄຳວ່າ ກ່າວຢ່າງນີ້ ຄວາມວ່າ "ສິກຂາບົດນ້ອຍ ໆ ທີ່ຍົກຂຶ້ນສະແດງເຫຼົ່ານີ້ຈະມີປະໂຫຍດອັນໃດ ຍ່ອມເປັນໄປເພື່ອຄວາມລຳຄານ ເພື່ອຄວາມລຳບາກ ເພື່ອຄວາມຫຍຸ້ງຍາກ" ຄື ດູໝິ່ນພຣະວິໄນໃຫ້ອຸປະສຳບັນຟັງວ່າ "ພວກພິກຂຸທີ່ຮ່ຳຮຽນພຣະວິໄນນີ້ຈະມີຄວາມ ລຳຄານ ມີຄວາມລຳບາກ ມີຄວາມຫຍຸ້ງຍາກ ພວກພິກຂຸທີ່ບໍ່ຮ່ຳຮຽນພຣະວິໄນນີ້ຈະບໍ່ມີຄວາມລຳຄານ ບໍ່ມີຄວາມລຳບາກ ບໍ່ມີຄວາມຫຍຸ້ງຍາກ ສິກຂາບົດນີ້ພວກທ່ານບໍ່ຍົກຂຶ້ນສະແດງຈະດີກວ່າ ບໍ່ສຶກສາຈະດີກວ່າ ບໍ່ຮ່ຳຮຽນຈະດີກວ່າ ບໍ່ຊົງຈຳຈະດີກວ່າ ພຣະວິໄນ ຈົ່ງອັນຕະຣະທານໄປ ຫຼື ພິກຂຸພວກນີ້ຈົ່ງເປັນຜູ້ບໍ່ຮອບຮູ້ພຣະບັນຍັດ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໔໔໑] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ດູໝິ່ນພຣະວິໄນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ດູໝິ່ນພຣະວິໄນ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ດູໝິ່ນພຣະວິໄນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸດູໝິ່ນທຳຢ່າງອື່ນ ຕ້ອງອາບັດທຸກກົດ
ພິກຂຸດູໝິ່ນພຣະວິໄນ ຫຼື ທຳຢ່າງອື່ນໃຫ້ອະນຸປະສຳບັນຟັງ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໔໔] ໑. ພິກຂຸບໍ່ປະສົງຈະດູໝິ່ນກ່າວຕາມເຫດວ່າ "ນິມົນທ່ານຮຽນ ພຣະສູດ ພຣະຄາຖາ ຫຼືພຣະອະພິທຳໄປກ່ອນ ພາຍຫຼັງຈຶ່ງຮຽນ ພຣະວິໄນ"
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ວິເລຂະນະສິກຂາບົດທີ ໔ ຈົບ**

# ໗. ສະຫະທຳມິກະວັກ

## ໕. ໂມຫະນະສິກຂາບົດ

## ວ່າດ້ວຍການເຮັດໃຫ້ຜູ້ອື່ນຫຼົງ

## ເລື້ອງພຣະສັບພັກຄີ

[໔໔໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີປະພຶດບໍ່ສົມຄວນແລ້ວ ຕັ້ງໃຈຢູ່ວ່າ "ຂໍພິກຂຸທັງຫຼາຍຈົ່ງໄດ້ຂ່າວວ່າ ພວກເຮົາຕ້ອງອາບັດຍ້ອນຄວາມບໍ່ຮູ້" ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ກໍກ່າວຢ່າງນີ້ວ່າ "ພວກຂ້າພະເຈົ້າຫາກໍ່ຮູ້ດຽວນີ້ເອງວ່າ ທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ຈຶ່ງກ່າວຢ່າງນີ້ວ່າ ພວກຂ້າພະເຈົ້າຫາກໍ່ຮູ້ດ່ຽວນີ້ເອງວ່າທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍ ປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ກໍກ່າວຢ່າງນີ້ວ່າ ພວກຂ້າພະເຈົ້າເພິ່ງຮັບຮູ້ດ່ຽວນີ້ເອງວ່າ ໄດ້ຂ່າວວ່າທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງ ຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ຈຶ່ງກ່າວຢ່າງນີ້ວ່າ ພວກຂ້າພະເຈົ້າຫາກໍຮູ້ດ່ຽວນີ້ເອງວ່າ ທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໔໔] ກໍ ພິກຂຸໃດ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ທຸກເຄິ່ງເດືອນ ກ່າວຢ່າງນີ້ວ່າ "ຂ້າພະເຈົ້າຫາກໍຮູ້ດ່ຽວນີ້ເອງວ່າ ທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນ" ຖ້າພິກຂຸເຫຼົ່າອື່ນຈື່ໄດ້ວ່າພິກຂຸນັ້ນເຄີຍຟັງ "ເວລາພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ພິກຂຸນີ້ເຄີຍນັ່ງຢູ່ ໒-໓ ຄັ້ງມາແລ້ວ ບໍ່ຕ້ອງເວົ້າຮອດຫຼາຍຄັ້ງຍິ່ງກວ່າ" ພິກຂຸນັ້ນຍ່ອມບໍ່ພົ້ນຍ້ອນຄວາມບໍ່ຮູ້ ແຕ່ພິກຂຸນັ້ນຈະຕ້ອງອາບັດໃດຍ້ອນປະພຶດບໍ່ເໝາະສົມນັ້ນ ເພິ່ງປັບອາບັດນັ້ນຕາມທຳ ແລະເພິ່ງຍົກໂມຫາໂຣປະນະກຳຂຶ້ນມາປັບເພີ່ມໃຫ້ຍິ່ງຂຶ້ນໄປອີກວ່າ "ທ່ານ ບໍ່ແມ່ນລາບຂອງທ່ານ ທ່ານໄດ້ບໍ່ດີ ທີ່ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ທ່ານບໍ່ໃສ່ໃຈຟັງໃຫ້ສຳເລັດປະໂຫຍດດ້ວຍດີ" ຕ້ອງອາບັດປາຈິດຕິ ຍ້ອນແກ້ງເຮັດຜູ້ອື່ນໃຫ້ຫຼົງນັ້ນ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໔໕] ຄຳວ່າ ກໍ່ຫລຫໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລຫໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ທຸກເຄິ່ງເດືອນ ຄື ທຸກວັນອຸໂປສົດ

ຄຳວ່າ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ຄື ເມື່ອພິກຂຸກຳລັງສະແດງປາຕິໂມກ

ຄຳວ່າ ກ່າວຢ່າງນີ້ ຄວາມວ່າ ພິກຂຸປະພຶດບໍ່ສົມຄວນແລ້ວ ຕັ້ງໃຈຢູ່ວ່າ "ຂໍ ພິກຂຸທັງຫຼາຍຈົ່ງໄດ້ຂ່າວວ່າ ພວກເຮົາຕ້ອງອາບັດຍ້ອນຄວາມບໍ່ຮູ້ ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ກໍກ່າວຢ່າງນີ້ວ່າ "ຂ້າພະເຈົ້າຫາກໍຮູ້ດຽວນີ້ເອງວ່າ ໄດ້ຂ່າວວ່າ ທຳແມ່ນນີ້ມາໃນພຣະສູດ ຢູ່ໃນພຣະສູດ ມີການຍົກຂຶ້ນສະແດງທຸກເຄິ່ງເດືອນ" ຕ້ອງອາບັດທຸກກົດ

ຖ້າພິກຂຸເຫຼົ່າອື່ນຈື່ພິກຂຸຜູ້ປະສົງຈະເຮັດໃຫ້ຫຼົງນັ້ນໄດ້ວ່າ "ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ພິກຂຸນີ້ເຄີຍນັ່ງຢູ່ ໒-໓ ຄັ້ງມາແລ້ວ ບໍ່ຕ້ອງເວົ້າຮອດຫຼາຍຄັ້ງຍິ່ງກວ່ານັ້ນ" ພິກຂຸນັ້ນຍ່ອມບໍ່ພົ້ນຍ້ອນຄວາມບໍ່ຮູ້ ພິກຂຸນັ້ນຈະຕ້ອງອາບັດໃດຍ້ອນປະພຶດບໍ່ເໝາະສົມນັ້ນ ເພິ່ງປັບອາບັດນັ້ນຕາມທຳ ແລະເພິ່ງຍົກໂມຫາໂຣປະນະກຳຂຶ້ນມາປັບເພີ່ມໃຫ້ຍິ່ງຂຶ້ນໄປອີກ

ພິກຂຸທັງຫຼາຍເພິ່ງຍົກໂມຫາໂຣປະນະກຳຂຶ້ນປັບຢ່າງນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

## ກຳມະວາຈາລົງໂມຫາໂຣປະນະກຳ

[໔໔໖] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ບໍ່ໃສ່ໃຈຟັງໃຫ້ສຳເລັດປະໂຫຍດດ້ວຍດີ ຖ້າສົງພ້ອມກັນແລ້ວ ກໍເພິ່ງຍົກໂມຫາໂຣປະນະກຳຂຶ້ນປັບພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ເມື່ອພິກຂຸຍົກປາຕິໂມກຂຶ້ນສະແດງຢູ່ ບໍ່ໃສ່ໃຈຟັງໃຫ້ສຳເລັດປະໂຫຍດດ້ວຍດີ ສົງຍົກໂມຫາໂຣປະນະກຳຂຶ້ນປັບພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການຍົກໂມຫາໂຣປະນະກຳຂຶ້ນປັບພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ໂມຫາໂຣປະນະກຳອັນສົງຍົກຂຶ້ນປັບພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິຢ່າງນີ້

## ບົດພາຊະນີ

ເມື່ອສົງຍັງບໍ່ຍົກໂມຫາໂຣປະນະກຳຂຶ້ນປັບ ພິກຂຸເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດທຸກກົດ
ເມື່ອສົງຍົກໂມຫາໂຣປະນະກຳຂຶ້ນປັບແລ້ວ ພິກຂຸເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດປາຈິດຕີ

### ຕິກະປາຈິດຕີ

[໔໔໗] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໔໘] ໑. ພິກຂຸຍັງບໍ່ໄດ້ຟັງພຣະປາຕິໂມກໂດຍພິສະດານ
໒. ພິກຂຸຟັງພຣະປາຕິໂມກໂດຍພິສະດານ ແຕ່ບໍ່ເຖິງ ໒-໓ ຄັ້ງ
໓. ພິກຂຸບໍ່ປະສົງຈະເຮັດຜູ້ອື່ນໃຫ້ຫຼົງ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

### ໂມຫະນະສິກຂາບົດທີ ໓ ຈົບ

# ໗. ສະຫະທຳມິກະວັກ

## ໔. ປະຫາຣະສິກຂາບົດ

### ວ່າດ້ວຍການທຳຮ້າຍເພື່ອນພິກຂຸ

### ເລື້ອງພຣະສັບພັກຄີ

[໔໔໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ທຳຮ້າຍພວກພິກຂຸສັດຕະຣະສະວັກຄີ ພວກພິກຂຸສັດຕະຣະສະວັກຄີຮ້ອງໄຫ້ ພິກຂຸທັງຫຼາຍຖາມຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເຮັດຫຍັງ"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈທຳຮ້າຍພວກຂ້ານ້ອຍ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໂກດ ບໍ່ພໍໃຈ ທຳຮ້າຍພິກຂຸທັງຫຼາຍນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໂກດ ບໍ່ພໍໃຈ ທຳຮ້າຍພິກຂຸທັງຫຼາຍແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໂກດ ບໍ່ພໍໃຈ ທຳຮ້າຍພິກຂຸທັງຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔໕໐] ກໍ ພິກຂຸໃດໂກດ ບໍ່ພໍໃຈ ທຳຮ້າຍພິກຂຸ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໔໕] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ຄື ພິກຂຸອື່ນ

ຄຳວ່າ ໂກດ ບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ທຳຮ້າຍ ຄວາມວ່າ ພິກຂຸທຳຮ້າຍດ້ວຍກາຍ ດ້ວຍຂອງເນື່ອງດ້ວຍກາຍ ຫຼືດ້ວຍຂອງທີ່ໂຍນໄປ ໂດຍທີ່ສຸດແມ່ນດ້ວຍກີບອຸບົນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໔໕໔] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ໂກດ ບໍ່ພໍໃຈ ທຳຮ້າຍ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ໂກດ ບໍ່ພໍໃຈ ທຳຮ້າຍ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ໂກດ ບໍ່ພໍໃຈ ທຳຮ້າຍ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸ ໂກດ ບໍ່ພໍໃຈ ທຳຮ້າຍອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໕໓] ໑. ພິກຂຸຖືກໃຜ ໆ ບຽດບຽນ ປະສົງຈະພົ້ນ ຈຶ່ງທຳຮ້າຍ

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ປະຫາຣະສິກຂາບົດທີ ໔ ຈົບ**

# ໗. ສະຫະທຳມິກະວັກ

## ໔. ຕະລະສັດຕິກະສິກຂາບົດ

### ວ່າດ້ວຍການເງື້ອຫອກຄືຝາມືຂຶ້ນທຳທ່າວ່າຈະທຳຮ້າຍ

### ເລື້ອງພຣະສັບພັກຄີ

[໔໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ເງື້ອຫອກຄືຝາມື(ຈະທຳຮ້າຍ) ພວກພິກຂຸສັດຕະຣະສະວັກຄີ ພວກພິກຂຸສັດຕະຣະສະວັກຄີເຫຼົ່ານັ້ນຢ້ານການທຳຮ້າຍຈຶ່ງຮ້ອງໄຫ້ ພິກຂຸທັງຫຼາຍຖາມຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເຮັດຫຍັງ"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພວກຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພິກຂຸທັງຫຼາຍນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພິກຂຸທັງຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພິກຂຸນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔໕໕] ກໍ ພິກຂຸໃດໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພິກຂຸ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໕໖] ຄຳວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ຄື ພິກຂຸອື່ນ

ຄຳວ່າ ໂກດ ບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ເງື້ອຫອກຄືຝາມື ຄວາມວ່າ ພິກຂຸງ້າງມືເນື້ອງດ້ວຍກາຍ ຂອງເນື່ອງດ້ວຍກາຍ ຫຼື ໂດຍທີ່ສຸດແມ່ນດ້ວຍກີບອຸບົນທີ່ຈັບໄວ້ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໔໕໗] ອຸປະສຳບັນ ພິກຂຸສຳຄັນວ່າອຸປະສຳບັນ ໂກດ ບໍ່ພໍໃຈ ເງື້ອຫອກຄື ຝ່າມື ຕ້ອງ ອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ໂກດ ບໍ່ພໍໃຈ ເງື້ອຫອກຄືຝາມື ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ໂກດ ບໍ່ພໍໃຈ ເງື້ອຫອກຄືຝາມື ຕ້ອງ ອາບັດປາຈິດຕີ

### ທຸກກົດ

ພິກຂຸໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໕໘] ໑. ພິກຂຸຖືກໃຜ ໆ ບຽດບຽນ ປະສົງຈະພົ້ນຈຶ່ງເງື້ອຫອກຄືຝາມື

໔. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ຕະລະສັດຕິກະສິກຂາບົດທີ ໕ ຈົບ**

# ໗. ສະຫະທຳມິກະວັກ

## ຝ. ອະມູລະກະສິກຂາບົດ

### ວ່າດ້ວຍການໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ

### ເລື້ອງພຣະສັບພັກຄີ

[໔໕໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດບໍ່ມີມູນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດບໍ່ມີມູນນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃສ່ຄວາມພິກຂຸ ດ້ວຍອາບັດສັງຄາທິເສດບໍ່ມີມູນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດບໍ່ມີມູນນໍ ໂມຄະບຸຣຸດທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໔໖໐] ກ໋ ພິກຂຸໃດ ໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[๔໗໑] ຄຳວ່າ ກໍຫລຫໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຫລຫໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ຄື ພິກຂຸອື່ນ

ທີ່ຊື່ວ່າ ບໍ່ມີມູນ ຄື ບໍ່ໄດ້ເຫັນ ບໍ່ໄດ້ຍິນ ບໍ່ໄດ້ນຶກສົງໄສ

ຄຳວ່າ ອາບັດສັງຄາທິເສດ ຄື ດ້ວຍສັງຄາທິເສດ ໑໓ ສິກຂາບົດ ຂໍ້ໃດຂໍ້ໜຶ່ງ

ຄຳວ່າ ໃສ່ຄວາມ ໄດ້ແກ່ ພິກຂຸໂຈດເອງ ຫຼື ສັ່ງຜູ້ອື່ນໃຫ້ໂຈດ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[๔໗๔] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ໃສ່ຄວາມດ້ວຍອາບັດສັງຄາທິເສດ ທີ່ບໍ່ມີມູນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຕ້ອງອາບັດປາ ຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ ມີມູນ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸໃສ່ຄວາມດ້ວຍອາຈາຣະວິບັດ ຫຼື ທິດຖິວິບັດ ຕ້ອງອາບັດທຸກກົດ

ພິກຂຸໃສ່ຄວາມອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[๔໗໓] ໑. ພິກຂຸສຳຄັນວ່າເປັນເລື້ອງຈິງ ໂຈດເອງ ຫຼື ໃຊ້ຜູ້ອື່ນໃຫ້ໂຈດ

๔. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ອະມູລະກະສິກຂາບົດທີ ໗ ຈົບ**

# ໗. ສະຫະທຳມິກະວັກ

## ໆ. ສັນຈິດຈະສິກຂາບົດ

### ວ່າດ້ວຍການຈົງໃຈກໍ່ຄວາມລຳຄານ

### ເລື້ອງພຣະສັບພັກຄີ

[໔໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຈົງໃຈກໍ່ຄວາມລຳຄານໃຫ້ແກ່ພວກພິກຂຸສັດຕະຣະສະວັກຄີດ້ວຍກ່າວວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ສົງບໍ່ເພິ່ງອຸປະສົມບົດໃຫ້ບຸກຄົນອາຍຸຍ່ອນກວ່າ ໒໐ ປີ ພວກທ່ານອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດແລ້ວ ພວກທ່ານຄົງຈະຍັງເປັນອະນຸປະສຳບັນຂອງພວກເຮົາແລ້ວແມ່ນບໍ?" ພວກພິກຂຸສັດຕະຣະສະວັກຄີເຫຼົ່ານັ້ນພາກັນຮ້ອງໄຫ້

ພິກຂຸທັງຫຼາຍຖາມຢ່າງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເຮັດຫຍັງ"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີເຫຼົ່ານີ້ຈົງໃຈກໍ່ຄວາມລຳຄານໃຫ້ແກ່ພວກຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸສັບພັກຄີຈຶ່ງຈົງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸທັງຫຼາຍນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຈົງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸທັງຫຼາຍ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຈົງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸທັງຫຼາຍນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໙໕] ກໍ ພິກຂຸໃດ ຈົງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸດ້ວຍຫວັງວ່າ "ທ່ານຈັກບໍ່ມີຄວາມຜາສຸກແມ່ນບິດຽວດ້ວຍອຸບາຍນີ້" ປະສົງພຽງເທົ່ານີ້ ບໍ່ມີອັນໃດອື່ນ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໙໖] ຄຳວ່າ ກໍຫຼະໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຫຼະໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ຄື ພິກຂຸອື່ນ

ທີ່ຊື່ວ່າ ຈົງໃຈ ຄື ຮູ້ຢູ່ ຮູ້ດີຢູ່ ຈົງໃຈ ຝ່າຝືນລ່ວງລະເມີດ

ຄຳວ່າ ກໍ່ຄວາມລຳຄານ ຄວາມວ່າ ພິກຂຸກໍ່ຄວາມລຳຄານກ່າວວ່າ "ທ່ານຄົງຈະອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດແລ້ວ ທ່ານຄົງຈະສັນອາຫານໃນເວລາວິການ ທ່ານຄົງຈະດື່ມນ້ຳເມົາ ທ່ານຄົງຈະນັ່ງໃນທີ່ລັບກັບມາຕຸຄາມ" ຕ້ອງອາບັດປາຈິດຕີ

ຄຳວ່າ ປະສົງພຽງເທົ່ານີ້ ບໍ່ມີອັນໃດອື່ນ ຄື ບໍ່ມີເຫດອື່ນທີ່ຈະກໍ່ຄວາມລຳຄານໃຫ້

## ບົດພາຊະນີ

### ຕິກະປາຈິດຕີ

[໔໙໗] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຈົງໃຈກໍ່ຄວາມລຳຄານ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸບໍ່ແນ່ໃຈ ຈົງໃຈກໍ່ຄວາມລຳຄານ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຈົງໃຈກໍ່ຄວາມລຳຄານ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸຈົງໃຈກໍ່ຄວາມລຳຄານໃຫ້ແກ່ອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໗] ໑. ພິກຂຸບໍ່ປະສົງຈະກໍ່ຄວາມລຳຄານ ກ່າວວ່າ "ທ່ານຄົງຈະອາຍຸຢ່ອນກວ່າ ໒໐ ປີ ອຸປະສົມບົດແລ້ວ ທ່ານຄົງຈະສັນອາຫານເວລາວິການ ທ່ານຄົງຈະດື່ມນ້ຳເມົາ ທ່ານຄົງຈະນັ່ງໃນທີ່ລັບກັບມາຕຸຄາມ ທ່ານຈົ່ງຮູ້ເອງເທີ້ນ ຢ່າໄດ້ມີຄວາມລຳຄານພາຍຫຼັງເລີຍ

໔. ພິກຂຸວິກົນຈະລິດ

໖. ພິກຂຸຕົ້ນບັນຍັດ

**ສັນຈິດຈະສິກຂາບົດທີ ໗ ຈົບ**

# ໘. ສະຫະທຳມິກະວັກ

# ໘. ອຸປັດສຸຕິສິກຂາບົດ

## ວ່າດ້ວຍການຈອບຟັງພິກຂຸຜິດຖຽງກັນ

## ເລື້ອງພຣະສັບພັກຄີ

[໔໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຜິດຖຽງກັບພິກຂຸຜູ້ມີສິນດີງາມ ພວກພິກຂຸຜູ້ມີສິນດີງາມກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີບໍ່ມີຄວາມລະອາຍ ພວກເຮົາບໍ່ອາດຜິດຖຽງກັບພິກຂຸພວກນີ້

ພວກພິກຂຸສັບພັກຄີກ່າວຢ່າງນີ້ວ່າ "ທ່ານທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງກ່າວຫາພວກເຮົາວ່າບໍ່ມີຄວາມລະອາຍ

ພິກຂຸຜູ້ມີສິນດີງາມ "ທ່ານທັງຫຼາຍ ພວກທ່ານໄດ້ຍິນມາຈາກໃສ"

ພວກພິກຂຸສັບພັກຄີຕອບວ່າ "ພວກເຮົາຢືນຈອບຟັງພວກທ່ານ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຢືນຈອບຟັງພວກພິກຂຸຜູ້ ໝາງໃຈ ຜິດຖຽງ ວິວາດກັນນໍ" ເມື່ອ ພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຢືນຈອບຟັງພວກພິກຂຸຜູ້ໝາງໃຈ ຜິດຖຽງ ວິວາດກັນ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງຢືນຈອບຟັງພວກພິກຂຸຜູ້ໝາງໃຈ ຜິດຖຽງ ວິວາດກັນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໐] ກໍ ພິກຂຸໃດ ຢືນຈອບຟັງພິກຂຸຜູ້ໝາງໃຈ ຜິດຖຽງ ວິວາດກັນ ດ້ວຍຕັ້ງໃຈວ່າ "ເຮົາຈະຟັງຄຳທີ່ພິກຂຸພວກນີ້ກ່າວ" ປະສົງພຽງເທົ່ານີ້ ບໍ່ມີອັນໃດອື່ນ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໗໑] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໄດ້ແກ່ ພິກຂຸພວກອື່ນ

ຄຳວ່າ ໝາງໃຈ ຜິດຖຽງ ວິວາດກັນ ຄື ຜູ້ເກີດອະທິກອນ

ຄຳວ່າ ຢືນຈອບຟັງ ຄື ພິກຂຸຍ່າງໄປດ້ວຍຕັ້ງໃຈວ່າ "ເຮົາຈະຟັງພິກຂຸເຫຼົ່ານີ້ແລ້ວ ຈັກໂຈດ ຕັກເຕືອນ ວ່າກ່າວຕຳໜິ ໃຫ້ສຳນຶກ ຫຼື ເຮັດໃຫ້ເກີ້ເຂີນ" ຕ້ອງອາບັດທຸກກົດ ຢືນໃນທີ່ທີ່ຈະໄດ້ຍິນ ຕ້ອງອາບັດປາຈິດຕີ

ພິກຂຸຍ່າງຢູ່ຂ້າງຫຼັງ ຟ້າວຍ່າງໃຫ້ທັນດ້ວຍຕັ້ງໃຈວ່າ "ຈະຟັງ" ຕ້ອງອາບັດທຸກກົດ ຢືນຢູ່ໃນທີ່ທີ່ຈະໄດ້ຍິນ ຕ້ອງອາບັດປາຈິດຕີ

ພິກຂຸຍ່າງໄປຂ້າງໜ້າ ກັບຍ່າງໃຫ້ຊ້າລົງດ້ວຍຕັ້ງໃຈວ່າ "ຈະຟັງ" ຕ້ອງອາບັດທຸກກົດ ຢືນຢູ່ໃນທີ່ທີ່ຈະໄດ້ຍິນ ຕ້ອງອາບັດປາຈິດຕີ

ເມື່ອພິກຂຸອື່ນປຶກສາກັນຍ່າງຜ່ານມາຍັງທີ່ທີ່ພິກຂຸຢືນ ທີ່ທີ່ພິກຂຸນັ່ງ ຫຼື ທີ່ທີ່ພິກຂຸນອນ ຕ້ອງອະແຮ່ມໃຫ້ຮູ້ຕົວ ຖ້າບໍ່ອະແຮ່ມ ຫຼື ບໍ່ໃຫ້ເຂົາຮູ້ຕົວ ຕ້ອງອາບັດປາຈິດຕີ

ຄຳວ່າ ປະສົງພຽງເທົ່ານີ້ ບໍ່ມີອັນໃດອື່ນ ຄວາມວ່າ ບໍ່ມີເຫດຜົນອື່ນທີ່ຈະຢືນຈອບຟັງ

## ບົດພາຊະນີ

### ຕິກະປາຈິດຕີ

[໔໗໔] ອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຢືນຈອບຟັງ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸບໍ່ແນ່ໃຈ ຢືນຈອບຟັງ ຕ້ອງອາບັດປາຈິດຕີ
ອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຢືນຈອບຟັງ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸຢືນຈອບຟັງອະນຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໓] ໑. ພິກຂຸຍ່າງໄປດ້ວຍໝາຍໃຈວ່າ "ຈັກຟັງຄຳຂອງພິກຂຸເຫຼົ່ານີ້ແລ້ວ ຈັກ ງົດ ຈັກເວັ້ນ ຈັກລະງັບ ຈັກປົດເປື້ອງຕົວ

໔. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

### ອຸປັດສຸຕິສິກຂາບົດທີ ໗ ຈົບ

# ໗. ສະຫະທຳມິກະວັກ

## ໙. ກຳມະປະຕິພາຫະນະສິກຂາບົດ

## ວ່າດ້ວຍການຄັດຄ້ານກຳທີ່ຖືກຕ້ອງ

## ເລື້ອງພຣະສັບພັກຄີ

[໔໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີປະພຶດກຳກວນ

ເມື່ອສົງກຳລັງເຮັດກຳແກ່ພິກຂຸແຕ່ລະອົງ ໄດ້ພາກັນຄັດຄ້ານ ຄັ້ງນັ້ນ ສົງປະຊຸມກັນດ້ວຍວຽກງານບາງຢ່າງ ພວກພິກຂຸສັບພັກຄີຕັດຫຍິບຈີວອນຢູ່ ຈຶ່ງໄດ້ມອບສັນທະໃຫ້ພິກຂຸອົງໜຶ່ງໄປ ບັດນັ້ນ ສົງກ່າວວ່າ "ທ່ານທັງຫຼາຍ ພິກຂຸນີ້ຢູ່ໃນກຸ່ມພິກຂຸສັບພັກຄີມາພຽງອົງດຽວ ພວກເຮົາຈະເຮັດກຳແກ່ທ່ານ" ແລ້ວໄດ້ເຮັດກຳແກ່ພິກຂຸສັບພັກຄີອົງນັ້ນ ຕໍ່ມາ ພິກຂຸນັ້ນ ເຂົ້າໄປຫາພວກພິກຂຸສັບພັກຄີເຖິງທີ່ຢູ່ ພວກພິກຂຸສັບພັກຄີໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ທ່ານ ສົງເຮັດຫຍັງແກ່ທ່ານ ພິກຂຸນັ້ນຕອບວ່າ "ສົງເຮັດກຳແກ່ຂ້ານ້ອຍ"

ພວກພິກຂຸສັບພັກຄີກ່າວວ່າ "ທ່ານ ພວກເຮົາບໍ່ໄດ້ໃຫ້ສັນທະ ເພື່ອຈະໃຫ້ສົງເຮັດກຳແກ່ທ່ານ ຖ້າພວກເຮົາໄດ້ຂ່າວວ່າ ສົງຈະເຮັດກຳແກ່ທ່ານ ກໍຈະບໍ່ຍອມໃຫ້ສັນທະໄປ"

ບັນດາ ພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ເມື່ອໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວກັບຕິຕຽນໃນພາຍຫຼັງນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວກັບຕິຕຽນໃນພາຍຫຼັງ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບ ວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວກັບຕິຕຽນໃນພາຍຫຼັງນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໕] ກໍ ພິກຂຸໃດ ໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວ ກັບຕິຕຽນໃນພາຍຫຼັງ ຕ້ອງອາບັດປາຈິດຕີ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໗໖] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ກຳທີ່ເຮັດຖືກຕ້ອງ ໄດ້ແກ່ ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ແລະ ຍັດຕິຈະຕຸດຖະກຳ ທີ່ສົງເຮັດໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ນີ້ຊື່ວ່າກຳ ທີ່ເຮັດຖືກຕ້ອງ

ພິກຂຸໃຫ້ສັນທະໄປແລ້ວກັບຕິຕຽນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໔໗໗] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ໃຫ້ສັນທະໄປແລ້ວກັບ ຕິຕຽນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ໃຫ້ສັນທະໄປແລ້ວກັບຕິຕຽນ ຕ້ອງອາບັດທຸກກົດ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ໃຫ້ສັນທະໄປແລ້ວກັບຕິຕຽນ ບໍ່ຕ້ອງອາບັດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໘] ໑. ພິກຂຸຮູ້ຢູ່ວ່າ "ສົງເຮັດກຳບໍ່ຊອບທຳ ແຍກກັນເຮັດ ຫຼື ເຮັດແກ່ພິກຂຸຜູ້ບໍ່ຄວນ ແກ່ກຳ" ຈຶ່ງຕິຕຽນ

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ກຳມະປະຕິພາທະນະສິກຂາບົດທີ ໙ ຈົບ**

# ໗. ສະຫະທຳມິກະວັກ

## ໑໐. ສັນທະອະທັດຕະວາຄະມະນະສິກຂາບົດ ວ່າດ້ວຍການບໍ່ໃຫ້ສັນທະແລ້ວໄປເລີຍ

## ເລື້ອງພຣະສັບພັກຄີ

[໔໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສົງປະຊຸມກັນດ້ວຍວຽກງານບາງ

ຢ່າງ ພວກພິກຂຸສັບພັກຄີມົວຕັດຫຍິບຈີວອນຢູ່ ຈຶ່ງໄດ້ມອບສັນທະໃຫ້ພິກຂຸອົງໜຶ່ງໄປ ຕໍ່ມາ ສົງຕັ້ງຍັດຕິວ່າ "ສົງປະຊຸມກັນເພື່ອປະໂຫຍດແກ່ກຳໃດ ພວກເຮົາຈັກເຮັດກຳນັ້ນ

ລຳດັບນັ້ນ ພິກຂຸອົງນັ້ນໄດ້ກ່າວວ່າ "ພິກຂຸເຫຼົ່ານີ້ເຮັດກຳແກ່ພິກຂຸແຕ່ລະອົງຢ່າງນີ້ ພວກທ່ານຈະເຮັດກຳແກ່ໃຜກັນນໍ" ບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປ

ບັນດາພິກຂຸຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸ ເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ຈຶ່ງບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປ ແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ໂມຄະບຸຣຸດ ເປັນຫຍັງ ເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ທ່ານຈຶ່ງບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໐] ກໍ ພິກຂຸໃດ ເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສໃນສົງ ບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປ ຕ້ອງອາບັດປາຈິດຕິ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໗໑] ຄຳວ່າ ກໍฯລฯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍฯລฯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ເລື້ອງທີ່ຕ້ອງຕັດສິນໃນສົງ ໄດ້ແກ່ (໑) ເລື້ອງທີ່ໂຈດແຈ້ງໄວ້ ແຕ່ຍັງບໍ່ໄດ້ຕັດສິນ (໔) ເລື້ອງທີ່ຕັ້ງຍັດຕິໄວ້ແລ້ວ (໓) ກຳມະວາຈາຍັງສູດຄ້າງຢູ່

ຄຳວ່າ ບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຈາກໄປ ຄື ພິກຂຸໄປດ້ວຍຕັ້ງໃຈວ່າ "ເຮັດຢ່າງໃດ ກຳນີ້ເພິ່ງເສຍຫາຍ ຈະເພິ່ງແຍກພວກກັນ ເພິ່ງເຮັດບໍ່ໄດ້" ຕ້ອງອາບັດທຸກກົດ ກຳລັງລະຫັດຖະບາດທີ່ຊຸມນຸມສົງ ຕ້ອງອາບັດທຸກກົດ ລະຫັດຖະບາດໄປແລ້ວ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

[໔໗໔] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ໃຫ້ສັນທະລຸກຈາກອາສະນະຈາກໄປ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບໍ່ໃຫ້ສັນທະລຸກຈາກອາສະນະຈາກໄປ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ໃຫ້ສັນທະ ລຸກຈາກອາສະນະຈາກໄປ ບໍ່ຕ້ອງອາບັດ

## ທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໓] ໑. ພິກຂຸຈາກໄປດ້ວຍຄິດວ່າ "ສົງຈັກມີຄວາມໝາງໃຈ ຜິດຖຽງ ຂັດແຍ້ງ ຫຼືວິວາດກັນ"

໒. ພິກຂຸຈາກໄປດ້ວຍຄິດວ່າ "ສົງຈັກແຕກແຍກ ຈັກຫ້າວແຫງ"

໓. ພິກຂຸຈາກໄປດ້ວຍຄິດວ່າ "ສົງຈັກເຮັດກຳໂດຍບໍ່ເປັນທຳ ແຍກພວກກັນເຮັດ ຫຼືເຮັດແກ່ພິກຂຸຜູ້ບໍ່ຄວນແກ່ກຳ

໔. ພິກຂຸເປັນໄຂ້ຈຶ່ງຈາກໄປ

໕. ພິກຂຸຈາກໄປດ້ວຍກິດທີ່ຈຳເປັນຂອງພິກຂຸຜູ້ເປັນໄຂ້

໖. ພິກຂຸປວດອຸດຈາຣະປວດປັດສາວະແລ້ວຈາກໄປ

໗. ພິກຂຸບໍ່ຕັ້ງໃຈເຮັດໃຫ້ກຳເສຍ ຈາກໄປດ້ວຍຄິດວ່າຈະກັບມາອີກ

໘. ພິກຂຸວິກົນຈະລິດ

໙. ພິກຂຸຕົ້ນບັນຍັດ

**ສັນທະອະຫັດຕະວາຄະມະນະສິກຂາບົດທີ ໑໐ ຈົບ**

# ໗. ສະຫະທຳມິກະວັກ

## ໑໑. ທັບພະສິກຂາບົດ

## ວ່າດ້ວຍການຖວາຍຈີວອນແກ່ພຣະທັບພະມັນລະບຸດ

## ເລື້ອງພຣະທັບພະມັນລະບຸດ

[໔໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ່ານພຣະທັບພະມັນລະບຸດຈັດແຈງເສນາສະນະ ແລະແຈກພັດຕາຫານແກ່ສົງ ທ່ານມີຈີວອນເກົ່າ ເວລານັ້ນ ຈີວອນຜືນໜຶ່ງໄດ້ເກີດຂຶ້ນແກ່ສົງ ເມື່ອແລ້ວສົງໄດ້ຖວາຍຈີວອນນັ້ນແກ່ທ່ານພຣະທັບພະມັນລະບຸດ

ພວກພິກຂຸສັບພັກຄີພາກັນຕຳໜິ ປະນາມ ໂພນທະນາວ່າ "ພວກພິກຂຸນ້ອມລາບສົງໄປຕາມຄວາມຄຸ້ນເຄີຍກັນ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຮ່ວມກັບສົງຜູ້ພ້ອມພຽງກັນໃຫ້ຈີວອນໄປແລ້ວກັບຕຳໜິໃນພາຍຫຼັງນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮ່ວມກັບສົງ ຜູ້ພ້ອມພຽງກັນໃຫ້ຈີວອນໄປແລ້ວ ກັບຕຳໜິໃນພາຍຫຼັງ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຮ່ວມກັບສົງຜູ້ພ້ອມພຽງກັນໃຫ້ຈີວອນໄປແລ້ວກັບຕຳໜິໃນພາຍຫຼັງນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໗໕] ກໍ ພິກຂຸໃດ ຮ່ວມກັບສົງຜູ້ພ້ອມພຽງກັນ ໃຫ້ຈີວອນໄປແລ້ວກັບຕິຕຽນໃນພາຍຫຼັງວ່າ "ພວກພິກຂຸນ້ອມລາບທີ່ເປັນຂອງສົງໄປຕາມຄວາມຄຸ້ນເຄີຍກັນ" ຕ້ອງອາບັດປາຈິດຕິ

**ເລື້ອງພຣະທັບພະມັນລະບຸດ ຈົບ**

## ສິກຂາບົດວິພັງ

[໔໗໓] ຄຳວ່າ ກໍ່ຫລາຍໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຫລາຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ່ຫລາຍໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຫລາຍ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ສົງທີ່ຊື່ວ່າ ພ້ອມພຽງກັນ ຄື ມີສັງວາດສະເໝີກັນ ຢູ່ໃນສະມານະສັງວາດສີມາດຽວກັນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ບັນດາຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ ເຊິ່ງມີຂະໜາດພໍທີ່ຈະວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ໃຫ້ ຄື ໃຫ້ເອງ

ທີ່ຊື່ວ່າ ຕາມຄວາມຄຸ້ນເຄີຍກັນ ຄື ຕາມຄວາມເປັນມິດ ຕາມຄວາມເປັນເພື່ອນ ຕາມຄວາມໃກ້ຊິດ ຕາມທີ່ເປັນຜູ້ຮ່ວມພຣະອຸປັດຊາ ຕາມທີ່ເປັນຜູ້ຮ່ວມພຣະອາຈານກັນມາ

ທີ່ຊື່ວ່າ ທີ່ເປັນຂອງສົງ ຄື ທີ່ເຂົາຖວາຍ ທີ່ເຂົາບໍລິຈາກແລ້ວແກ່ສົງ

ທີ່ຊື່ວ່າ ລາບ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ໂດຍທີ່ສຸດແມ່ນກ້ອນແປ້ງ ໄມ້ຖູແຂ້ວ ຫຼື ດ້າຍຊາຍຜ້າ

ຄຳວ່າ ພາຍຫຼັງກັບຕິຕຽນ ຄວາມວ່າ ພິກຂຸເມື່ອໃຫ້ຈີວອນແກ່ອຸປະສຳບັນທີ່ສົງແຕ່ງຕັ້ງໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກອາຫານ ແຈກເຂົ້າຕົ້ມ ແຈກໝາກໄມ້ ແຈກຂອງຫຍ້ຳ ຫຼືແຈກຂອງເລັກ ໆ ນ້ອຍ ໆ ກັບຕິຕຽນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໔໗໗] ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ໃຫ້ຈີວອນໄປແລ້ວກັບຕິຕຽນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ໃຫ້ຈີວອນໄປແລ້ວກັບຕິຕຽນ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ໃຫ້ຈີວອນໄປແລ້ວກັບຕິຕຽນ ບໍ່ຕ້ອງອາບັດ

### ທຸກກົດ

ພິກຂຸໃຫ້ບໍຣິຂານຢ່າງອື່ນໄປແລ້ວກັບຕິຕຽນ ຕ້ອງອາບັດທຸກກົດ

ພິກຂຸໃຫ້ຈີວອນ ຫຼື ບໍຣິຂານຢ່າງອື່ນແກ່ອຸປະສຳບັນທີ່ສົງບໍ່ໄດ້ແຕ່ງຕັ້ງໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກອາຫານ ແຈກເຂົ້າຕົ້ມ ແຈກໝາກໄມ້ ແຈກຂອງຫຍ້ຳ ຫຼື ແຈກຂອງເລັກ ໆ ນ້ອຍ ໆ ແລ້ວກັບຕິຕຽນ ຕ້ອງອາບັດທຸກກົດ

ພິກຂຸໃຫ້ຈີວອນ ຫຼື ບໍຣິຂານຢ່າງອື່ນແກ່ອະນຸປະສຳບັນທີ່ສົງແຕ່ງຕັ້ງ ຫຼື ບໍ່ໄດ້ແຕ່ງຕັ້ງໃຫ້ເປັນເຈົ້າໜ້າທີ່ຈັດແຈງເສນາສະນະ ແຈກອາຫານ ແຈກເຂົ້າຕົ້ມ ແຈກໝາກໄມ້ ແຈກຂອງຫຍໍ້າ ຫຼື ແຈກຂອງເລັກ ໆ ນ້ອຍ ໆ ແລ້ວກັບຕິຕຽນ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໗໗] ໑. ພິກຂຸຕິຕຽນສົງທີ່ມັກເຮັດໄປດ້ວຍຄວາມລຳອຽງຍ້ອນຮັກ ລຳອຽງຍ້ອນຊັງ ລຳອຽງຍ້ອນຫຼົງ ລຳອຽງຍ້ອນຢ້ານວ່າ "ລາບທີ່ສົງໃຫ້ແກ່ພິກຂຸນັ້ນໄປຈະມີປະໂຫຍດອັນໃດ ທ່ານໄດ້ໄປກໍຈະເອົາໄປຖິ້ມ ບໍ່ໃຊ້ສອຍໃນທາງທີ່ຄວນ

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ທັບພະສິກຂາບົດທີ ໑໑ ຈົບ**

# ໗. ສະຫະທຳມິກະວັກ

# ໑໔. ປະຣິນາມະນະສິກຂາບົດ
## ວ່າດ້ວຍການນ້ອມລາບທີ່ເປັນຂອງສົງໄປເພື່ອບຸກຄົນ

## ເລື້ອງພຣະສັບພັກຄີ

[໔໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສະມາຄົມໜຶ່ງໃນນະຄອນສາວັດຖີກຽມພັດຕາຫານພ້ອມຈີວອນໄວ້ຖວາຍສົງດ້ວຍຕັ້ງໃຈວ່າ "ພວກເຮົາຈັກນິມົນພິກຂຸໃຫ້ສັນແລ້ວໃຫ້ຄອງຈີວອນ"

ຕໍ່ມາ ພວກພິກຂຸສັບພັກຄີໄດ້ເຂົ້າໄປຫາສະມາຄົມນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ ກ່າວກັບສະມາຄົມນັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານໂຜດຖວາຍຈີວອນແກ່ພິກຂຸ ເຫຼົ່ານີ້"

ສະມາຄົມນັ້ນກ່າວວ່າ "ທ່ານຜູ້ຈະເລີນ ພວກເຮົາຈະບໍ່ຖວາຍ ພວກເຮົາຈັດພົກສາຫານພ້ອມກັບຈີວອນໄວ້ຖວາຍສົງເປັນປະຈໍາທຸກປີ

ພວກພິກຂຸສັບພັກຄີກ່າວວ່າ "ທ່ານທັງຫຼາຍ ທາຍົກຂອງສົງມີຫຼາຍຄົນ ພັດຕາຫານຂອງສົງກໍມີຈໍານວນຫຼາຍ ພິກຂຸເຫຼົ່ານີ້ອາໄສພວກທ່ານ ເຫັນແກ່ພວກທ່ານ

ຈຶ່ງຢູ່ທີ່ນີ້ ຖ້າພວກທ່ານບໍ່ຖວາຍແກ່ພິກຂຸເຫຼົ່ານີ້ແລ້ວ ເວລານີ້ ໃຜນໍຈະຖວາຍແກ່ພິກຂຸເຫຼົ່ານີ້ ພວກທ່ານໂຜດຖວາຍຈີວອນແກ່ພິກຂຸເຫຼົ່ານີ້ເທີ້ນ

ລໍາດັບນັ້ນ ເມື່ອຖືກພວກພິກຂຸສັບພັກຄີຂູ່ຊີ ສະມາຄົມນັ້ນຈຶ່ງຖວາຍຈີວອນຕາມທີ່ຈັດໄວ້ແລ້ວແກ່ພວກພິກຂຸສັບພັກຄີແລ້ວປະເຄນສົງສະເພາະພັດຕາຫານ

ພວກພິກຂຸທີ່ໄດ້ຂ່າວວ່າ "ສະມາຄົມຈັດພັດຕາຫານພ້ອມກັບຈີວອນໄວ້ຖວາຍສົງ" ແຕ່ບໍ່ໄດ້ຂ່າວວ່າ "ພວກເຂົາຖວາຍພວກພິກຂຸສັບພັກຄີໄປແລ້ວ" ຈຶ່ງກ່າວຢ່າງນີ້ວ່າ "ທ່ານທັງຫຼາຍພວກທ່ານຈົ່ງນ້ອມຖວາຍຈີວອນແກ່ສົງເທີ້ນ

ສະມາຄົມນັ້ນກ່າວວ່າ "ທ່ານຜູ້ຈະເລີນ ບໍ່ມີຈີວອນຕາມທີ່ເຄີຍຈັດໄວ້ ພຣະສັບພັກຄີນ້ອມໄປເພື່ອພຣະສັບພັກຄີນໍາກັນແລ້ວ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຮູ້ຢູ່ຈຶ່ງນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງໄປເພື່ອບຸກຄົນນໍ" ເມື່ອພິກຂຸທັງຫຼາຍຕໍາໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຮູ້ຢູ່ ນ້ອມລາບ ທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງໄປເພື່ອບຸກຄົນ ແມ່ນບໍ?" ພວກພິກຂຸສັບພັກຄີ ທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຮູ້ຢູ່ຈຶ່ງນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງໄປເພື່ອບຸກຄົນນໍ ໂມຄະບຸຣຸດທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໙໐] ກໍ ພິກຂຸໃດ ຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງໄປເພື່ອບຸກຄົນ ຕ້ອງອາບັດປາຈິດຕີ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໙໑] ຄໍາວ່າ ກໍໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍໆລໆໃດ

ຄໍາວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸຮູ້ເອງ ຄົນເຫຼົ່າອື່ນບອກພິກຂຸນັ້ນ ຫຼື ຄົນນັ້ນບອກ

ທີ່ຊື່ວ່າ ເປັນຂອງຈະຖວາຍສົງ ໄດ້ແກ່ ເປັນຂອງທີ່ເຂົາຖວາຍ ຫຼື ບໍລິຈາກແລ້ວແກ່ສົງ

ທີ່ຊື່ວ່າ ລາບ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິ ຂານ ໂດຍທີ່ສຸດກະທັ່ງກ້ອນແປ້ງ ໄມ້ຖູແຂ້ວ ຫຼື ດ້າຍຊາຍຜ້າ

ທີ່ຊື່ວ່າ ນ້ອມໄວ້ ຄື ເຂົາເປ່ງວາຈາວ່າ "ເຮົາຈະຖວາຍ ຈະກະທໍາ" ພິກຂຸນ້ອມລາບນັ້ນ ໄປເພື່ອບຸກຄົນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໔໙໔] ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸສໍາຄັນວ່າເຂົານ້ອມໄວ້ແລ້ວ ນ້ອມໄປເພື່ອບຸກຄົນ ຕ້ອງອາບັດປາຈິດຕີ

ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸບໍ່ແນ່ໃຈ ນ້ອມໄປເພື່ອບຸກຄົນ ຕ້ອງອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ແລ້ວ ພິກຂຸສໍາຄັນວ່າເຂົາບໍ່ໄດ້ນ້ອມໄວ້ແລ້ວ ນ້ອມໄປເພື່ອບຸກຄົນ ບໍ່ເປັນອາບັດ

ລາບທີ່ເຂົານ້ອມໄວ້ເພື່ອສົງ ພິກຂຸນ້ອມໄປເພື່ອສົງໝູ່ອື່ນຫຼືເພື່ອເຈດີ ຕ້ອງອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ເພື່ອເຈດີ ພິກຂຸນ້ອມໄປເພື່ອເຈດີອື່ນ ເພື່ອສົງ ຫຼື ເພື່ອບຸກຄົນ ຕ້ອງ ອາບັດທຸກກົດ

ລາບທີ່ເຂົານ້ອມໄວ້ເພື່ອບຸກຄົນ ພິກຂຸນ້ອມໄປເພື່ອບຸກຄົນອື່ນ ເພື່ອສົງ ຫຼື ເພື່ອເຈດີ ຕ້ອງອາບັດທຸກກົດ

ລາບທີ່ເຂົາຍັງບໍ່ໄດ້ນ້ອມໄວ້ ພິກຂຸສໍາຄັນວ່າເຂົານ້ອມໄວ້ ຕ້ອງອາບັດທຸກກົດ

ລາບທີ່ເຂົາຍັງບໍ່ໄດ້ນ້ອມໄວ້ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ລາບທີ່ເຂົາຍັງບໍ່ໄດ້ນ້ອມໄວ້ ພິກຂຸສໍາຄັນວ່າເຂົາຍັງບໍ່ໄດ້ນ້ອມໄວ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໙໓] ໑. ພິກຂຸຖືກທາຍົກຖາມວ່າ "ຈະຖວາຍຢູ່ໃສ" ຈຶ່ງແນະນຳວ່າ "ວັດຖຸທານຂອງພວກທ່ານເພິ່ງໄດ້ຮັບການໃຊ້ສອຍ ໄດ້ຮັບການປະຕິສັງຂອນ ຫຼື ຢູ່ດົນໃນທີ່ໃດ ຫຼື ທ່ານມີຈິດເຫຼື້ອມໃສໃນທີ່ໃດ ຈົ່ງຖວາຍໃນທີ່ນັ້ນເທີ້ນ"

໒. ພິກຂຸວິກົນຈະລິດ

໓. ພິກຂຸຕົ້ນບັນຍັດ

**ປະຣິນາມະນະສິກຂາບົດທີ ໑໒ ຈົບ**

**ສະຫະທຳມິກະວັກທີ ໘ ຈົບ**

## ລວມສິກຂາບົດທີ່ມີໃນສະຫະທຳມິກະວັກ

ສະຫະທຳມິກະວັກມີ ໑໒ ສິກຂາບົດ ຄື

໑. ສະຫະທຳມິກະສິກຂາບົດ ວ່າດ້ວຍການກ່າວຕັກເຕືອນຜູ້ຮ່ວມປະພຶດທຳໂດຍຊອບທຳ
໒. ວິເລຂະນະສິກຂາບົດ ວ່າດ້ວຍຄວາມຫຍຸ້ງຍາກແຫ່ງສິກຂາບົດ
໓. ໂມຫະນະສິກຂາບົດ ວ່າດ້ວຍການເຮັດໃຫ້ຜູ້ອື່ນຫຼົງ
໔. ປະຫາຣະສິກຂາບົດ ວ່າດ້ວຍການທຳຮ້າຍເພື່ອນພິກຂຸ
໕. ຕະລະສັດຕິກະສິກຂາບົດ ວ່າດ້ວຍການເງື້ອຫອກຄືຝາມືຂຶ້ນທຳທ່າວ່າຈະທຳຮ້າຍ
໖. ອະມູລະກະສິກຂາບົດ ວ່າດ້ວຍການໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ
໗. ສັນຈິດຈະສິກຂາບົດ ວ່າດ້ວຍການຈົງໃຈກໍ່ຄວາມລຳຄານ
໘. ອຸປັດສຸຕິສິກຂາບົດ ວ່າດ້ວຍການຈອບຟັງພິກຂຸຜິດຖຽງກັນ
໙. ກຳມະປະຕິພາຫະນະສິກຂາບົດ ວ່າດ້ວຍການຄັດຄ້ານກຳທີ່ຖືກຕ້ອງ
໑໐. ສັນທະອະທັດຕະວາຄະມະນະສິກຂາບົດ ວ່າດ້ວຍການບໍ່ໃຫ້ສັນທະແລ້ວໄປເລີຍ
໑໑. ທັບພະສິກຂາບົດ ວ່າດ້ວຍການຖວາຍຈີວອນແກ່ພຣະທັບພະມັນລະບຸດ
໑໒. ປະຣິນາມະນະສິກຂາບົດ ວ່າດ້ວຍການນ້ອມລາບທີ່ເປັນຂອງສົງໄປເພື່ອບຸກຄົນ

# ໗. ຣະຕະນະວັກ

## ໝວດວ່າດ້ວຍຣັດຕະນະ

### ໑. ອັນເຕປຸຣະສິກຂາບົດ

### ວ່າດ້ວຍການເຂົ້າເຂດພຣະຣາດຊະຖານຊັ້ນໃນ

### ເລື້ອງພຣະເຈົ້າປະເສນທິໂກສົນ

[໔໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຮັບສັ່ງກັບເຈົ້າໜ້າທີ່ເຝົ້າພຣະຣາຊະອຸທະຍານວ່າ "ຈົ່ງໄປທຳຄວາມສະອາດອຸທະຍານ ເຮົາຈັກໄປອຸທະຍານ"

ເຈົ້າໜ້າທີ່ເຝົ້າພຣະຣາຊະອຸທະຍານຮັບສະໜອງພຣະຣາຊະໂອງການແລ້ວ ຈຶ່ງໄປທຳຄວາມສະອາດ ພຣະຣາຊະອຸທະຍານ ໄດ້ເຫັນພຣະຜູ້ມີພຣະພາກພຸດທະເຈົ້າປະທັບນັ່ງຢູ່ໃນຄວງໄມ້ຕົ້ນໜຶ່ງ ເມື່ອເຫັນແລ້ວຈຶ່ງເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະເຈົ້າປະເສນທິໂກສົນດັ່ງນີ້ວ່າ "ຂໍເດຊະ ພຣະຣາຊະອຸທະຍານສະອາດແລ້ວ ພຣະຜູ້ມີພຣະພາກພຸດທະ ເຈົ້າປະທັບຢູ່ໃນພຣະຣາຊະອຸທະຍານນັ້ນ ຂ້ານ້ອຍ"

ພຣະອົງຮັບສັ່ງວ່າ "ຊ່າງເທີ້ນ ນາຍ ພວກເຮົາຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ" ເມື່ອແລ້ວ ພຣະເຈົ້າປະເສນທິໂກສົນໄດ້ສະເດັດໄປພຣະຣາຊະອຸທະຍານແລ້ວ ສະເດັດເຂົ້າໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່

ຂະນະນັ້ນ ອຸປາສົກຄົນໜຶ່ງນັ່ງເຝົ້າຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ ພຣະເຈົ້າປະເສນທິໂກສົນໄດ້ທອດພຣະເນດເຫັນອຸປາສົກຜູ້ນັ່ງເຝົ້າຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ ເມື່ອທອດພຣະເນດເຫັນແລ້ວໄດ້ປະທັບຢືນຕົກພຣະທະໄທ ໃນບັດນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຊົງມີພຣະດຳຣິດັ່ງນີ້ວ່າ "ຊາຍຄົນນີ້ຄົງບໍ່ແມ່ນຄົນທຳມະດາ ເຂົາເຖິງໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຢູ່ໃກ້ ໆ ໄດ້" ຈຶ່ງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວປະທັບນັ່ງໃນທີ່ສົມຄວນ

ຂະນະນັ້ນ ອຸປາສົກນັ້ນບໍ່ຖວາຍບັງຄົມ ບໍ່ລຸກຮັບສະເດັດພຣະເຈົ້າປະເສນທິໂກສົນ ຍ້ອນມີຄວາມເຄົາລົບຕໍ່ພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນບໍ່ຊົງພໍພຣະທະໄທວ່າ "ເປັນຫຍັງ ຊາຍຄົນນີ້ ເມື່ອເຮົາມາເຖິງຈຶ່ງບໍ່ຖວາຍບັງຄົມ ບໍ່ຕ້ອນຮັບເຮົານໍ?"

ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າພຣະເຈົ້າປະເສນທິໂກສົນບໍ່ຊົງພໍພຣະທະໄທ ຈຶ່ງໄດ້ຕັດກັບພຣະເຈົ້າປະເສນທິໂກສົນດັ່ງນີ້ວ່າ "ມະຫາບໍພິດ ອຸປາສົກຄົນນີ້ເປັນພະຫູສູດ ຈື່ສິ່ງທີ່ໄດ້ຮ່ຳຮຽນມາໄດ້ ປາສະຈາກຄວາມກຳໜັດໃນກາມທັງຫຼາຍ"

ຂະນະນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຊົງພຣະດຳຣິດັ່ງນີ້ວ່າ "ອຸປາສົກນີ້ບໍ່ແມ່ນຄົນຕ່ຳຕ້ອຍ ແມ່ນພຣະຜູ້ມີພຣະພາກເຈົ້າຍັງຕັດພັນນາຄຸນຂອງອຸປາສົກນີ້" ຈຶ່ງໄດ້ຮັບສັ່ງກັບອຸປາສົກນັ້ນດັ່ງນີ້ວ່າ "ອຸປາສົກ ທ່ານຈົ່ງເວົ້າສິ່ງທີ່ຈະກໍ່ໃຫ້ເກີດປະໂຫຍດເທີ້ນ

ອຸປາສົກຂາບທູນວ່າ "ເປັນພຣະມະຫາກະລຸນາທິຄຸນຢ່າງລົ້ນເກົ້າ ຂ້ານ້ອຍ"

ລຳດັບ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະເຈົ້າປະເສນທິໂກສົນເຫັນຊັດແຈ້ງຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມິກະຖາ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມິກະຖາແລ້ວຈຶ່ງສະເດັດລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວສະເດັດໄປ

[໔໙໕] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນປະທັບຢູ່ເທິງຜາສາດຊັ້ນເທິງ ໄດ້ທອດພຣະເນດເຫັນອຸປາສົກນັ້ນຍ່າງກັ້ງຮົ່ມໄປຕາມຖະໜົນ ເມື່ອເຫັນແລ້ວຈຶ່ງຮັບສັ່ງໃຫ້ເຊີນມາເຝົ້າ ແລ້ວໄດ້ຕັດກັບອຸປາສົກນັ້ນດັ່ງນີ້ວ່າ "ອຸປາສົກ ໄດ້ຂ່າວວ່າ ທ່ານເປັນພະຫູສູດ ຈື່ສິ່ງທີ່ໄດ້ຮ່ຳຮຽນມາໄດ້ ອຸປາສົກ ທ່ານຊ່ອຍສອນທຳໃນຕຳໜັກຂອງເຮົາດ້ວຍເທີ້ນ"

ອຸປາສົກຂາບທູນວ່າ "ຂໍເດຊະ ຂ້າພຣະອົງຮູ້ທຳຈາກຄູບາທັງຫຼາຍ ຄູບາທັງຫຼາຍເທົ່ານັ້ນຈັກສອນທຳພຣະສະໜົມຂອງພຣະອົງໄດ້"

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຈຶ່ງຮັບສັ່ງວ່າ "ອຸປາສົກກ່າວຈິງ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດແລ້ວປະທັບນັ່ງໃນທີ່ສົມຄວນ ພຣະເຈົ້າປະເສນທິໂກສົນຜູ້ປະທັບນັ່ງໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍປະທານອະໂຣກາດເທີ້ນ ຂ້ານ້ອຍ ຂໍພຣະອົງຊົງພຣະກະລຸນາໂຜດໃຫ້ພິກຂຸອົງໜຶ່ງໄປສອນທຳໃນຕຳໜັກນາງສະໜົມຂອງຂ້າພຣະອົງດ້ວຍເທີ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະເຈົ້າປະເສນທິໂກສົນເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າ ເລີງດ້ວຍທຳມີກະຖາ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຈຶ່ງສະເດັດລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວສະເດັດຈາກໄປ

## ຊົງແຕ່ງຕັ້ງພຣະອານົນເປັນຄູສອນທຳ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບທ່ານພຣະອານົນວ່າ "ອານົນ ທ່ານຈົ່ງໄປສອນທຳໃນຕຳໜັກພຣະສະໜົມຂອງພຣະຣາຊາ

ທ່ານພຣະອານົນທູນຮັບສະໜອງພຣະພຸດທະດຳຣັດ ໄດ້ເຂົ້າໄປສອນທຳໃນຕຳໜັກພຣະສະ ໜົມຕາມການອັນຄວນ ຄັ້ງນັ້ນ ໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປເຖິງພຣະຣາຊະນິເວດ

[໔໙໖] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນປະທັບຢູ່ໃນຫ້ອງບັນທົມກັບພຣະນາງມັນລິກາເທວີ ພຣະນາງມັນລິກາເທວີໄດ້ທອດພຣະເນດເຫັນທ່ານພຣະອານົນມາແຕ່ໄກ ເມື່ອທອດພຣະເນດເຫັນແລ້ວຈຶ່ງຟ້າວລຸກຂຶ້ນ ພຣະພູສາຊົງກ້ຽງສີເຫຼືອງຈຶ່ງເລື່ອນລຸດອອກ ບັດນັ້ນ ທ່ານພຣະອານົນຈຶ່ງຫັນກັບແຕ່ໄກ ໄປເຖິງອາຣາມແລ້ວຈຶ່ງແຈ້ງເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອານົນບໍ່ໄດ້ຮັບແຈ້ງລ່ວງໜ້າຈຶ່ງເຂົ້າໄປພຣະຣາດຊະຖານຊັ້ນໃນນໍ" ເມື່ອພິກຂຸທັງຫຼາຍຕຳໜິທ່ານພຣະອານົນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອານົນວ່າ "ອານົນ ໄດ້ຂ່າວວ່າ ທ່ານບໍ່ໄດ້ຮັບແຈ້ງລ່ວງໜ້າ ແຕ່ເຂົ້າໄປພຣະຣາດຊະຖານຊັ້ນໃນ ແມ່ນບໍ?" ທ່ານພຣະອານົນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ອານົນ ເປັນຫຍັງ ທ່ານຍັງບໍ່ໄດ້ຮັບແຈ້ງລ່ວງໜ້າ ຈຶ່ງເຂົ້າໄປພຣະຣາດຊະຖານຊັ້ນໃນນໍ ອານົນ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ເມື່ອຊົງຕຳໜິແລ້ວຈຶ່ງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ

# ການເຂົ້າເຂດພຣະຣາດຊະຖານຊັ້ນໃນມີໂທດ ໑໐ ຢ່າງ

[໔໕໗] ພິກຂຸທັງຫຼາຍ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນມີໂທດ ໑໐ ຢ່າງ ນີ້ ຄື

(໑) ພິກຂຸທັງຫຼາຍ ພຣະຣາຊາປະທັບຢູ່ກັບພຣະມະເຫສີໃນພຣະຣາດຊະຖານຊັ້ນໃນນີ້ ພິກຂຸເຂົ້າໄປໃນພຣະຣາດຊະຖານຊັ້ນໃນນັ້ນ ພຣະມະເຫສີເຫັນພິກຂຸແລ້ວຊົງຍິ້ມໃຫ້ ຫຼື ພິກຂຸເຫັນພຣະມະເຫສີແລ້ວຍິ້ມໃຫ້ ໃນຂໍ້ນັ້ນພຣະຣາຊາຈະຊົງພຣະດຳຣິຢ່າງນີ້ວ່າ "ຄົນທັງ ໒ ນີ້ໄດ້ເຮັດຫຍັງກັນແລ້ວ ຫຼື ຈັກເຮັດຫຍັງກັນແນ່ນອນ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໑ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໒) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາຊາຊົງມີພຣະຣາດຊະກິດຫຼາຍ ມີການງານຫຼາຍ ສະເດັດໄປຫາພຣະສະໜົມຄົນໜຶ່ງແລ້ວຊົງລືມ ພຣະສະໜົມນັ້ນຖືພາຍ້ອນການທີ່ພຣະຣາຊາສະເດັດໄປຫານັ້ນ ໃນຂໍ້ນັ້ນພຣະຣາຊາຈະຊົງພຣະດຳຣິຢ່າງນີ້ວ່າ "ໃນທີ່ນີ້ ນອກຈາກບັນພະຊິດ ບໍ່ມີໃຜອື່ນເຂົ້າມາໄດ້ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໒ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໓) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ຂອງມີຄ່າຢ່າງໃດຢ່າງໜຶ່ງ ໃນພຣະຣາດຊະຖານຊັ້ນໃນສູນຫາຍໄປ ໃນຂໍ້ນັ້ນພຣະຣາຊາຈະຊົງພຣະດຳຣິຢ່າງນີ້ວ່າ "ໃນທີ່ນີ້ ນອກຈາກບັນພະຊິດ ບໍ່ມີໃຜອື່ນເຂົ້າມາໄດ້ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໓ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໔) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ເມື່ອຄວາມລັບທາງຣາຊະການທີ່ປຶກສາໃນພຣະຣາດຊະຖານຊັ້ນໃນຮົ່ວໄຫຼອອກໄປພາຍນອກ ໃນຂໍ້ນັ້ນພຣະຣາຊາຈະຊົງພຣະດຳຣິຢ່າງນີ້ວ່າ "ໃນທີ່ນີ້ ນອກຈາກບັນພະຊິດ ບໍ່ມີໃຜອື່ນເຂົ້າມາໄດ້ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໔ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໕) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ໃນພຣະຣາດຊະຖານຊັ້ນໃນ ພຣະຣາຊະໂອຣົດປາຖະໜາ (ທີ່ຈະປົງພະຊົນ) ພຣະຣາຊະບິດາ ຫຼື ພຣະຣາຊະບິດາປາຖະໜາ (ທີ່ຈະປົງພະຊົນ) ພຣະຣາຊະໂອ ຣົດ ທັງ ໒ ພຣະອົງຈະຊົງພຣະດຳຣິຢ່າງນີ້ວ່າ "ໃນທີ່ນີ້ ນອກຈາກບັນພະຊິດ ບໍ່ມີໃຜອື່ນເຂົ້າມາໄດ້ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໕ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໖) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາຊາຊົງເລື່ອນຂ້າຣາຊະການຕຳແໜ່ງຕ່ຳຂຶ້ນຕຳແໜ່ງສູງ ພວກທີ່ບໍ່ພໍໃຈເລື້ອງນີ້ຈະມີຄວາມຄິດຢ່າງນີ້ວ່າ "ພຣະຣາຊາຊົງຄຸກຄີຢູ່ກັບບັນພະຊິດ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໖ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໗) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາຊາຊົງລຸດຕຳແໜ່ງຂ້າຣາຊະການທີ່ຢູ່ໃນຕຳແໜ່ງສູງລົງຕຳແໜ່ງຕ່ຳ ພວກທີ່ບໍ່ພໍໃຈເລື້ອງນີ້ຈະມີຄວາມຄິດຢ່າງນີ້ວ່າ "ພຣະຣາຊາຊົງຄຸກຄີຢູ່ກັບບັນພະຊິດ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍນີ້ເປັນໂທດຂໍ້ທີ ໗ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໘) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາຊາຮັບສັ່ງໃຫ້ຍົກກອງທັບໄປໃນເວລາບໍ່ຄວນ ພວກທີ່ບໍ່ພໍໃຈເລື້ອງນີ້ຈະມີຄວາມຄິດຢ່າງນີ້ວ່າ "ພຣະຣາຊາຊົງຄຸກຄີຢູ່ກັບບັນພະຊິດ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໘ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໙) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາຊາຮັບສັ່ງໃຫ້ຍົກກອງທັບໄປໃນເວລາອັນຄວນແລ້ວຮັບສັ່ງໃຫ້ຍົກທັບກັບໃນລະຫວ່າງທາງ ພວກທີ່ບໍ່ພໍໃຈເລື້ອງນີ້ຈະມີຄວາມຄິດຢ່າງນີ້ວ່າ "ພຣະຣາຊາຊົງຄຸກຄີຢູ່ກັບບັນພະຊິດ ຄົງຈະເປັນການກະທຳຂອງບັນພະຊິດ" ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໙ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

(໑໐) ພິກຂຸທັງຫຼາຍ ຂໍ້ອື່ນຍັງມີອີກ ພຣະຣາດຊະຖານຊັ້ນໃນເປັນສະຖານທີ່ຄັບຄັ່ງດ້ວຍຊ້າງ ເປັນສະຖານທີ່ຄັບຄັ່ງດ້ວຍມ້າ ເປັນສະຖານທີ່ຄັບຄັ່ງດ້ວຍລົດ ເປັນສະຖານທີ່ມີຮູບ ສຽງ ກິ່ນ ຣົດ ໂຜດຖັບພະທີ່ເປັນເຫດແຫ່ງຄວາມກຳໜັດ ບໍ່ເໝາະແກ່ບັນພະຊິດ ພິກຂຸທັງຫຼາຍ ນີ້ເປັນໂທດຂໍ້ທີ ໑໐ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ

ພິກຂຸທັງຫຼາຍ ໃນການເຂົ້າໄປສູ່ພຣະຣາດຊະຖານຊັ້ນໃນ ມີໂທດ ໑໐ ຢ່າງນີ້ແລ

## ຊົງປະຊຸມສົງບັນຍັດສິກຂາບົດ

ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິທ່ານພຣະອານົນໂດຍປະການ ຕ່າງໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຄວາມເປັນຜູ້ບຳລຸງຍາກ ຯລຯ ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໙໗] ກໍ ພິກຂຸໃດ ບໍ່ໄດ້ຮັບແຈ້ງລ່ວງໜ້າ ກ້າວລ່ວງທໍຣະນີປະຕູເຂົ້າໄປໃນຕໍາໜັກທີ່ບັນທົມຂອງພຣະຣາຊາຜູ້ເປັນກະສັດທີ່ໄດ້ຮັບມູດທາພິເສກແລ້ວ ທີ່ພຣະຣາຊາຍັງບໍ່ສະເດັດອອກ ທີ່ນາງຣັດຕະນະຍັງບໍ່ສະເດັດອອກ ຕ້ອງອາບັດປາຈິດຕີ

### ເລື້ອງພຣະເຈົ້າປະເສນທິໂກສົນ ຈົບ

## ສິກຂາບົດວິພັງ

[໔໙໙] ຄໍາວ່າ ກໍ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ໗ລ໗ໃດ

ຄໍາວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸໃນຄວາມໝາຍນີ້

ທີ່ຊື່ວ່າ ກະສັດ ຄື ໄດ້ແກ່ ກະສັດຜູ້ປະສູດມາດີທັງຝ່າຍພຣະມານດາ ແລະ ພຣະບິດາ ຊົງຖືກໍາເນີດບໍລິສຸດຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຕໍາໜິຊາດກໍາເນີດໄດ້

ທີ່ຊື່ວ່າ ໄດ້ຮັບມູດທາພິເສກແລ້ວ ຄື ຜູ້ໄດ້ຮັບອະພິເສກໂດຍການອະພິເສກເປັນກະສັດ

ຄໍາວ່າ ທີ່ພຣະຣາຊາຍັງບໍ່ໄດ້ສະເດັດອອກ ຄື ພຣະຣາຊາຍັງບໍ່ສະເດັດອອກຈາກຕໍາໜັກທີ່ບັນທົມ

ຄໍາວ່າ ທີ່ນາງຣັດຕະນະຍັງບໍ່ສະເດັດອອກ ຄື ພຣະມະເຫສີຍັງບໍ່ສະເດັດອອກຈາກຕໍາໜັກທີ່ບັນທົມ ຫຼື ທັງ ໒ ພຣະອົງຍັງບໍ່ສະເດັດອອກ

ຄໍາວ່າ ບໍ່ໄດ້ຮັບແຈ້ງລ່ວງໜ້າ ຄື ບໍ່ໄດ້ບອກໃຫ້ຮູ້ກ່ອນລ່ວງໜ້າວ່າສາມາດເຂົ້າໄປໄດ້

ທີ່ຊື່ວ່າ ທໍຣະນີປະຕູ ພຣະຜູ້ມີພຣະພາກເຈົ້າ ຕັດໝາຍເຖິງທໍຣະນີປະຕູຕໍາໜັກທີ່ບັນທົມຂອງພຣະຣາຊາ

ທີ່ຊື່ວ່າ ຕໍາໜັກທີ່ບັນທົມ ໄດ້ແກ່ ທີ່ບັນທົມຂອງພຣະຣາຊາເຊິ່ງເຈົ້າພະນັກງານຈັດໄວ້ໃນທີ່ໃດທີ່ໜຶ່ງ ໂດຍທີ່ສຸດແມ່ນວົງດ້ວຍພຣະວິສູດ

ຄໍາວ່າ ກ້າວລ່ວງທໍຣະນີປະຕູເຂົ້າໄປ ຄື ພິກຂຸຍົກຕີນທໍາອິດກ້າວຂ້າມທໍຣະນີປະຕູເຂົ້າໄປ ຕ້ອງອາບັດທຸກກົດ ຍົກຕີນທີ ໒ ກ້າວຂ້າມທໍຣະນີປະຕູເຂົ້າໄປ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໕໐໐] ຍັງບໍ່ໄດ້ຮັບແຈ້ງ ພິກຂຸສໍາຄັນວ່າຍັງບໍ່ໄດ້ຮັບແຈ້ງ ກ້າວລ່ວງທໍຣະນີເຂົ້າໄປ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ຮັບແຈ້ງ ພິກຂຸບໍ່ແນ່ໃຈ ກ້າວລ່ວງທໍຣະນີປະຕູເຂົ້າໄປ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ຮັບແຈ້ງ ພິກຂຸສຳຄັນວ່າໄດ້ຮັບແຈ້ງແລ້ວ ກ້າວລ່ວງທໍຣະນີປະຕູເຂົ້າໄປ ຕ້ອງອາບັດປາຈິດຕີ

**ທຸກກົດ**

ໄດ້ຮັບແຈ້ງແລ້ວ ພິກຂຸສຳຄັນວ່າຍັງບໍ່ໄດ້ຮັບແຈ້ງ ຕ້ອງອາບັດທຸກກົດ

ໄດ້ຮັບແຈ້ງແລ້ວ ພິກຂຸສຳຄັນວ່າຍັງບໍ່ໄດ້ຮັບແຈ້ງ ຕ້ອງອາບັດທຸກກົດ

ໄດ້ຮັບແຈ້ງແລ້ວ ພິກຂຸສຳຄັນວ່າໄດ້ຮັບແຈ້ງແລ້ວ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໐໑] ໑. ພິກຂຸຜູ້ໄດ້ຮັບແຈ້ງແລ້ວ

໒. ພິກຂຸເຂົ້າໄປໃນທີ່ທີ່ຜູ້ຢູ່ບໍ່ໄດ້ເປັນກະສັດ

໓. ພິກຂຸເຂົ້າໄປໃນທີ່ທີ່ຜູ້ຢູ່ຍັງບໍ່ໄດ້ຮັບອະພິເສກເປັນກະສັດ

໔. ພິກຂຸເຂົ້າໄປໃນທີ່ທີ່ພຣະຣາຊາສະເດັດອອກຈາກຕຳໜັກທີ່ບັນທົມ

໕. ພິກຂຸເຂົ້າໄປໃນທີ່ທີ່ພຣະມະເຫສີສະເດັດອອກຈາກຕຳໜັກທີ່ບັນທົມ

໖. ພິກຂຸເຂົ້າໄປໃນທີ່ທີ່ທັງ ໒ ພຣະອົງສະເດັດອອກຈາກຕຳໜັກທີ່ບັນທົມ

໗. ພິກຂຸເຂົ້າໄປໃນທີ່ທີ່ບໍ່ແມ່ນຕຳໜັກທີ່ບັນທົມ

໘. ພິກຂຸວິກົນຈະລິດ

໙. ພິກຂຸຕົ້ນບັນຍັດ

**ອັນເຕປຸຣະສິກຂາບົດທີ ໑ ຈົບ**

# ໙. ຣະຕະນະວັກ

## ໒. ຣະຕະນະສິກຂາບົດ

## ວ່າດ້ວຍການເກັບຣັດຕະນະທີ່ເຈົ້າຂອງລືມໄວ້

## ເລື່ອງພຣະອົງໜຶ່ງ

[໕໐໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງອາບນ້ຳໃນແມ່ນ້ຳອະ

ຈິຣະວະດີ ພາມຄົນໜຶ່ງວາງຖົງຊັບ ໕໐໐ ກະຫາປະນະໄວ້ເທິງບົກແລ້ວລົງອາບນ້ຳໃນແມ່ນ້ຳອະຈິຣະວະດີ ແລ້ວລືມຖົງຊັບໄວ້ແລ້ວຈາກໄປ ໃນບັດນັ້ນ ພິກຂຸນັ້ນໄດ້ເກັບໄວ້ດ້ວຍຄິດວ່າ "ຖົງຊັບຂອງພາມນີ້ຢ່າສູນຫາຍໄປເລີຍ" ຝ່າຍພາມພໍນຶກຂຶ້ນໄດ້ກໍຟ້າວແລ່ນກັບມາ ໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທ່ານເຫັນຖົງຊັບຂອງຂ້າພະເຈົ້າແດ່ບໍ?"

ພິກຂຸນັ້ນໄດ້ຄືນໃຫ້ພ້ອມກ່າວວ່າ "ນີ້ ເຊີນທ່ານຮັບໄປເທີ້ນ ພາມ"

ຄັ້ງນັ້ນ ພາມນັ້ນໄດ້ເກີດຄວາມຄິດດັ່ງນີ້ວ່າ "ດ້ວຍອຸບາຍຢ່າງໃດ ເຮົາຈຶ່ງບໍ່ຕ້ອງໃຫ້ລາງວັນແກ່ພິກຂຸນີ້" ຈຶ່ງຢຶດຕົວຂຶ້ນແລ້ວກ່າວວ່າ "ທ່ານ ຊັບຂອງຂ້າພະເຈົ້າບໍ່ແມ່ນ ໕໐໐ ກະຫາປະນະ ແຕ່ມີ ໑,໐໐໐ ກະຫາປະນະຕ່າງຫາກ" ແລ້ວປ່ອຍຕົວໄປ

ເມື່ອພິກຂຸນັ້ນໄປເຖິງອາຣາມແລ້ວຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຈຶ່ງເກັບຣັດຕະນະໄວ້ແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານເກັບຣັດຕະນະໄວ້ແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງເກັບຣັດຕະນະໄວ້ນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະອົງໜຶ່ງ ຈົບ

## ເລື້ອງນາງວິສາຂາ

[໕໐໓] ຄັ້ງນັ້ນ ໃນນະຄອນສາວັດຖີ ມີມະໂຫລະສົບ ປະຊາຊົນແຕ່ງຕົວໄປທ່ຽວອຸທະຍານ ແມ່ນນາງວິສາຂາມິຄາຣະມານດາກໍແຕ່ງຕົວອອກຈາກບ້ານຈະໄປທ່ຽວຊົມອຸທະຍານ ແຕ່

ຄິດວ່າ "ເຮົາຈະໄປທ່ຽວອຸທະຍານເຮັດຫຍັງ ໄປເຝົ້າພຣະຜູ້ມີພຣະພາກເຈົ້າດີກວ່າ" ແລ້ວປົດເຄື່ອງປະດັບອອກ ເອົາຜ້າຫົ່ມຫໍ່ໄວ້ມອບໃຫ້ສາວໃຊ້ດ້ວຍກ່າວວ່າ "ແມ່ສາວໃຊ້ ເຈົ້າຖືຫໍ່ເຄື່ອງປະດັບນີ້ໄວ້" ເມື່ອແລ້ວນາງວິສາຂາມິຄາຣະມານດາກໍໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງນາງວິສາຂາມິຄາຣະມານດາຜູ້ນັ່ງ ໃນທີ່ສົມຄວນໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ນາງວິສາຂາມິຄາຣະມານດາຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ຝ່າຍສາວໃຊ້ນັ້ນລືມຫໍ່ເຄື່ອງປະດັບນັ້ນໄດ້ກັບໄປແລ້ວ

ພິກຂຸທັງຫຼາຍພົບເຂົ້າ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ພຣະອົງຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຍົກໄປເກັບຮັກສາໄວ້ເທີ້ນ

## ຊົງອະນຸຍາດໃຫ້ເກັບຣັດຕະນະໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າ ເປັນຣັດຕະນະໃນວັດທີ່ຢູ່ແລ້ວຖືຮັກສາໄວ້ດ້ວຍຕັ້ງໃຈວ່າ ເຈົ້າຂອງຈະຮັບຄືນໄປ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະຕ້ອງອາບັດປາຈິດຕິ ເວັ້ນໄວ້ແຕ່ໃນອາຣາມ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງນາງວິສາຂາ ຈົບ

## ເລື້ອງຄົນຮັບໃຊ້ຂອງອະນາຖະບິນດິກະເສດຖີ

[໔໐໔] ສະໄໝນັ້ນ ອະນາຖະບິນດິກະຄະຫະບໍດີ ມີບ້ານພັກຄົນງານຢູ່ໃນແຄວັນກາສີຄະຫະບໍດີນັ້ນສັ່ງບຸຣຸດຄົນຮັບໃຊ້ໄວ້ວ່າ "ຖ້າຄູບາທັງຫຼາຍມາເຖິງ ທ່ານເພິ່ງຈັດກຽມພັດຕາຫານ"

ເມື່ອຕໍ່ມາ ພິກຂຸຫຼາຍອົງທ່ຽວຈາຣິກໄປໃນແຄວັ້ນກາສີ ຜ່ານໄປເຖິງບ້ານພັກຄົນງານຂອງທ່ານອະນາຖະບິນດິກະຄະຫະບໍດີນັ້ນ ບຸຣຸດນັ້ນແນມເຫັນພິກຂຸທັງຫຼາຍຍ່າງມາແຕ່ໄກ ເມື່ອເຫັນແລ້ວຈຶ່ງເຂົ້າໄປຫາພິກຂຸເຫຼົ່ານັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ຂາບອາຣາດທະນາດັ່ງນີ້ວ່າ "ຄູບາທັງຫຼາຍໂຜດຮັບນິມົນເພື່ອສັນພັດຕາຫານ ຂອງຄະຫະບໍດີໃນມື້ອື່ນນີ້ດ້ວຍເທີ້ນ"

## ພິກຂຸເຫຼົ່ານັ້ນຮັບນິມົນໂດຍດຸດສະນີພາບ

ເມື່ອແລ້ວ ຣາຕີນັ້ນຜ່ານໄປ ບຸຣຸດນັ້ນສັ່ງໃຫ້ຈັດກຽມຂອງຫຍໍ້າຂອງສັນອັນປະນີດ ແລ້ວສົ່ງຄົນໄປນິມົນຄູບາໃຫ້ມາຮັບພັດຕາຫານ ກ່ອນຈະຖວາຍໄດ້ຖອດແຫວນວາງໄວ້ ແລ້ວຍົກພັດຕະຫານປະເຄນພິກຂຸເຫຼົ່ານັ້ນ ພ້ອມກ່າວວ່າ "ນິມົນຄູບາທັງຫຼາຍສັນແລ້ວຈຶ່ງກັບ ຂ້າພະເຈົ້າຈະໄປເຮັດວຽກກ່ອນ" ໄດ້ລືມແຫວນປະໄວ້

ພິກຂຸທັງຫຼາຍເຫັນແຫວນນັ້ນ ແຕ່ບໍ່ກ້າເກັບ ໄດ້ຄິດວ່າ "ຖ້າພວກເຮົາໄປ ແຫວນນີ້ຈະຫາຍ" ຈຶ່ງບໍ່ຍອມໜີໄປໄສຢູ່ເຝົ້າແຫວນນັ້ນ

ເມື່ອບຸຣຸດນັ້ນກັບມາຈາກເຮັດວຽກເຫັນພິກຂຸເຫຼົ່ານັ້ນ ຈຶ່ງໄດ້ຖາມວ່າ "ເປັນຫຍັງ ຄູບາທັງຫຼາຍ ຍັງຢູ່ໃນທີ່ນີ້ບໍ່ຍອມໄປໄສອີກນໍ?"

ເມື່ອແລ້ວພິກຂຸເຫຼົ່ານັ້ນ ຈຶ່ງເລົ່າເລື່ອງນັ້ນໃຫ້ບຸຣຸດນັ້ນຮູ້ ເມື່ອໄປເຖິງນະຄອນສາວັດຖີແລ້ວຈຶ່ງໄດ້ບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະໃນອາຣາມ ຫຼື ໃນທີ່ພັກແລ້ວຖືຮັກສາໄວ້ດ້ວຍຕັ້ງໃຈວ່າ ເຈົ້າຂອງຈະມາຮັບຄືນໄປ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໐໕] ອັນໜຶ່ງ ພິກຂຸໃດເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ໃນອາຣາມ ຫຼື ໃນທີ່ພັກ ອັນໜຶ່ງ ພິກຂຸເພິ່ງເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະໃນອາຣາມ ຫຼື ໃນທີ່ພັກແລ້ວຖືຮັກສາໄວ້ດ້ວຍຕັ້ງໃຈວ່າ ເຈົ້າຂອງຈະມາຮັບຄືນໄປ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ

### ເລື້ອງຄົນຮັບໃຊ້ຂອງອະນາຖະບິນດິກະເສດຖີ ຈົບ

## ສິກຂາບົດວິພັງ

[໔໐໙] ຄຳວ່າ ອັນໜຶ່ງ໗ລ໗ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ໗ລ໗ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຣັດຕະນະ ໄດ້ແກ່ ແກ້ວມຸກດາ ແກ້ວມະນີ ໄພທູນ ຫອຍສັງ ສິລາ ປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ນີ້ຊື່ວ່າ ຣັດຕະນະ

ທີ່ຊື່ວ່າ ຂອງທີ່ສົມມຸດວ່າເປັນຣັດຕະນະ ໄດ້ແກ່ ເຄື່ອງອຸປະໂພກບໍຣິໂພກຂອງມະນຸດ ນີ້ຊື່ວ່າຂອງທີ່ສົມມຸດວ່າເປັນຣັດຕະນະ

ຄຳວ່າ ເວັ້ນໄວ້ແຕ່ໃນອາຣາມ ຫຼື ໃນທີ່ພັກ ຄື ຍົກເວັ້ນແຕ່ໃນອາຣາມ ຫຼື ໃນທີ່ພັກ

ທີ່ຊື່ວ່າ ໃນອາຣາມ ຄື ສຳລັບອາຣາມທີ່ມີຮົ້ວລ້ອມ ກຳນົດເອົາພາຍໃນອາຣາມ ສຳລັບອາຣາມທີ່ບໍ່ມີຮົ້ວລ້ອມ ກຳນົດເອົາອຸປະຈານ

ທີ່ຊື່ວ່າ ໃນທີ່ພັກ ຄື ສຳລັບທີ່ພັກມີຮົ້ວລ້ອມ ກຳນົດເອົາພາຍໃນທີ່ພັກ ສຳລັບ ທີ່ພັກທີ່ບໍ່ມີຮົ້ວລ້ອມ ກຳນົດເອົາອຸປະຈານ

ຄຳວ່າ ເກັບ ຄື ພິກຂຸຖືເອົາເອງ ຕ້ອງອາບັດປາຈິດຕິ

ບົດ ວ່າ ໃຊ້ໃຫ້ເກັບ ຄື ພິກຂຸໃຊ້ໃຫ້ຜູ້ອື່ນຖືເອົາ ຕ້ອງອາບັດປາຈິດຕິ

ຄຳວ່າ ອັນໜຶ່ງ ພິກຂຸເພິ່ງເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະ

ໃນອາຣາມ ຫຼື ໃນທີ່ພັກແລ້ວຖືຮັກສາໄວ້ ຄວາມວ່າ ພິກຂຸເພິ່ງກຳນົດໝາຍຮູບປະພັນ ຫຼື ຕຳໜິແລ້ວເກັບຖືຮັກສາໄວ້ ແລ້ວປະກາດວ່າ “ຜູ້ໃດຂອງຫາຍ ຜູ້ນັ້ນຈົ່ງມາຮັບເອົາຄືນໄປ” ຖ້າເຂົາມາໃນທີ່ນັ້ນເພິ່ງຖາມເຂົາວ່າ “ສິ່ງຂອງຂອງທ່ານເປັນຢ່າງໃດ” ຖ້າເຂົາບອກຮູບປະພັນ ຫຼື ເຄື່ອງໝາຍ ຖືກຕ້ອງ ເພິ່ງໃຫ້ຄືນ ຖ້າບອກບໍ່ຖືກ ເພິ່ງບອກເຂົາວ່າ “ທ່ານຈົ່ງຫາເບິ່ງເອງເທີ້ນ”

ເມື່ອຈະຈາກໄປຈາກອາວາດນັ້ນ ເພິ່ງມອບໄວ້ແກ່ພິກຂຸຜູ້ເໝາະສົມໃນອາວາດນັ້ນແລ້ວຈຶ່ງຈາກໄປ ຖ້າບໍ່ມີພິກຂຸທີ່ໜ້າເຊື່ອຖື ເພິ່ງມອບໄວ້ແກ່ຄະຫະບໍດີຜູ້ເໝາະສົມໃນທີ່ນັ້ນແລ້ວຈຶ່ງຈາກໄປ

ຄຳວ່າ ນີ້ເປັນການເຮັດທີ່ສົມຄວນໃນເລື້ອງນັ້ນ ຄື ນີ້ເປັນຄວາມຖືກຕ້ອງໃນເລື້ອງນັ້ນ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໐໗] ໑. ພິກຂຸເກັບ ຫຼື ໃຊ້ໃຫ້ເກັບຣັດຕະນະ ຫຼື ຂອງທີ່ສົມມຸດວ່າເປັນຣັດຕະນະໃນ

ອາຣາມຫຼື ໃນທີ່ພັກແລ້ວເກັບຖືຮັກສາໄວ້ດ້ວຍຕັ້ງໃຈວ່າ "ເຈົ້າຂອງຈະມາຮັບຄືນໄປ"

໒. ພິກຂຸຖືວິສາສະເກັບຂອງທີ່ສົມມຸດວ່າເປັນຣັດຕະນະ
໓. ພິກຂຸຖືເອົາໄປເປັນຂອງຢືມ
໔. ພິກຂຸເຂົ້າໃຈວ່າເປັນຂອງບັງສຸກຸນ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ຣະຕະນະສິກຂາບົດທີ ໒ ຈົບ**

# ໙. ຣະຕະນະວັກ

## ໓. ວິກາລະຄາມະປະເວສະນະສິກຂາບົດ

## ວ່າດ້ວຍການເຂົ້າໝູ່ບ້ານໃນເວລາວິການ

## ເລື້ອງພຣະສັບພັກຄີ

[໕໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີເຂົ້າໝູ່ບ້ານໃນເວລາວິການ ນັ່ງໃນທີ່ຊຸມນຸມ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງມະຫາອຳມາດ (໔) ເສນາກະຖາ ເລື້ອງກອງທັບ (໕) ພະຍະກະຖາ ເລື້ອງໄພ (໖) ຍຸດທະກະຖາ ເລື້ອງການຮົບ (໗) ອັນນະກະຖາ ເລື້ອງເຂົ້າ (໘) ປານະກະຖາ ເລື້ອງນ້ຳ (໙) ວັດຖະກະຖາ ເລື້ອງຜ້າ (໑໐) ສະຍະນະກະຖາ ເລື້ອງທີ່ນອນ (໑໑) ມາລາກະຖາ ເລື້ອງພວງດອກໄມ້ (໑໒) ຄັນທະກະຖາ ເລື້ອງຂອງຫອມ (໑໓) ຍາຕິກະຖາ ເລື້ອງຍາດ (໑໔) ຍານະກະຖາ ເລື້ອງຍານ (໑໕) ຄາມະກະຖາ ເລື້ອງບ້ານ (໑໖) ນິຄະມະກະຖາ ເລື້ອງນິຄົມ (໑໗) ນະຄະຣະກະຖາ ເລື້ອງເມືອງ (໑໘) ຊະນະປະທະກະຖາ ເລື້ອງຊົນນະບົດ (໑໙) ອິດຖີກະຖາ ເລື້ອງສະຕີ (໒໐) ປຸຣິສະກະຖາ ເລື້ອງບຸຣຸດ (໒໑) ສູຣະກະຖາ ເລື້ອງຄົນກ້າຫານ (໒໒) ວິສິຂາກະຖາ ເລື້ອງຮ່ອມ (໒໓) ກຸມພັດຖານະກະຖາ ເລື້ອງທ່ານ້ຳ (໒໔) ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ (໒໕) ນານັດຕະກະຖາ ເລື້ອງຕ່າງ ໆ (໒໖) ໂລກັກຂາຍິກະ ເລື້ອງໂລກ (໒໗) ສະມຸດທັກຂາຍິກະ ເລື້ອງທະເລ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະ ຄວາມເສື່ອມ

ຄົນທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງເຂົ້າໝູ່ບ້ານໃນເວລາວິການ ນັ່ງໃນທີ່ຊຸມນຸມ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງ ມະຫາອຳມາດ (໔) ເສນາກະຖາ ເລື້ອງກອງທັບ (໕) ພະຍະກະຖາ ເລື້ອງໄພ (໖) ຍຸດທະກະຖາ ເລື້ອງການຮົບ (໗) ອັນນະກະຖາ ເລື້ອງເຂົ້າ (໘) ປານະກະຖາ ເລື້ອງນ້ຳ (໙) ວັດຖະກະຖາ ເລື້ອງຜ້າ (໑໐) ສະຍະນະກະຖາ ເລື້ອງທີ່ນອນ (໑໑) ມາລາກະຖາ ເລື້ອງພວງດອກໄມ້ (໑໒) ຄັນທະກະຖາ ເລື້ອງຂອງຫອມ (໑໓) ຍາຕິກະຖາ ເລື້ອງຍາດ (໑໔) ຍານະກະຖາ ເລື້ອງຍານ (໑໕) ຄາມະກະຖາ ເລື້ອງໝູ່ບ້ານ (໑໖) ນິຄະມະກະຖາ ເລື້ອງນິຄົມ (໑໗) ນະຄະຣະກະຖາ ເລື້ອງເມືອງ (໑໘) ຊະນະປະທະກະຖາ ເລື້ອງຊົນນະບົດ (໑໙) ອິດຖີກະຖາ ເລື້ອງສະຕີ (໒໐) ປຸຣິສະກະຖາ ເລື້ອງບຸຣຸດ (໒໑) ສູຣະກະຖາ ເລື້ອງຄົນກ້າຫານ (໒໒) ວິສິຂາກະຖາ ເລື້ອງຮ່ອມ (໒໓) ກຸມພັດຖານະກະຖາ ເລື້ອງທ່ານ້ຳ (໒໔) ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ (໒໕) ນານັດຕະກະຖາ ເລື້ອງຕ່າງ ໆ (໒໖) ໂລກັກຂາຍິກະ ເລື້ອງການຄາດກ່ຽວກັບໂລກ (໒໗) ສະມຸດທັກຂາຍິກະ ເລື້ອງການຄາດເດົາກ່ຽວກັບທະເລ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ ເໝືອນພວກຄະລືຫັດທີ່ຍັງບໍຣິໂພກການຢູ່ນໍ?

ພິກຂຸທັງຫຼາຍ ໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງເຂົ້າໝູ່ບ້ານເວລາວິການ ນັ່ງໃນທີ່ຊຸມນຸມ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື ເລື້ອງພຣະຣາຊາ ຯລຯ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານເຂົ້າບ້ານໃນເວລາວິການ ນັ່ງໃນທີ່ຊຸມນຸມ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ ຯລຯ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງເຂົ້າໝູ່ບ້ານໃນເວລາວິການແລ້ວ ນັ່ງໃນທີ່ຊຸມນຸມສົນທະນາເດຍຣັດສານກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ ຯລຯ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້

ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ເຂົ້າໝູ່ບ້ານໃນເວລາວິການ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸຫຼາຍອົງ

[໕໐໙] ສະໄໝນັ້ນ ພິກຂຸຫຼາຍອົງເດີນທາງໄປນະຄອນສາວັດຖີ ແຄວ້ນໂກສົນ ເຂົ້າໄປໝູ່ບ້ານເຂດໜຶ່ງໃນເວລາຄ່ຳ ຄົນທັງຫຼາຍເຫັນພິກຂຸເຫຼົ່ານັ້ນ ຈຶ່ງໄດ້ອາຣາດທະນາດັ່ງນີ້ວ່າ

ທ່ານຜູ້ຈະເລີນ ນິມົນທ່ານທັງຫຼາຍເຂົ້າໄປເທີ້ນ" ຄັ້ງນັ້ນ ພິກຂຸເຫຼົ່ານັ້ນມີຄວາມຢຳເກງວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມການເຂົ້າໝູ່ບ້ານໃນເວລາວິການ" ຈຶ່ງບໍ່ຍອມເຂົ້າໄປ ພວກໂຈນໄດ້ປຸ້ນພິກຂຸເຫຼົ່ານັ້ນ ເມື່ອພິກຂຸເຫຼົ່ານັ້ນໄປເຖິງນະຄອນສາວັດຖີ ໄດ້ແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ເຂົ້າໝູ່ບ້ານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກລາແລ້ວເຂົ້າໝູ່ບ້ານໃນເວລາວິການໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ອັນໜຶ່ງ ພິກຂຸໃດ ບໍ່ບອກລາກ່ອນເຂົ້າໝູ່ບ້ານໃນເວລາວິການ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸຫຼາຍອົງ ຈົບ

## ເລື້ອງພິກຂຸອົງໜຶ່ງ

[໕໑໐] ສະໄໝນັ້ນ ພິກຂຸອົງໜຶ່ງ ເດີນທາງໄປນະຄອນສາວັດຖີ ແຄວ້ນໂກສົນ ເຂົ້າໄປ

ໝູ່ບ້ານເຂດໜຶ່ງໃນເວລາເຢັນ ຄົນທັງຫຼາຍເຫັນພິກຂຸນັ້ນ ຈຶ່ງໄດ້ອາຣາດທະນາດັ່ງນີ້ວ່າ "ທ່ານຜູ້ຈະເລີນ ນິມົນທ່ານທັງຫຼາຍເຂົ້າໄປເທີ້ນ" ຄັ້ງນັ້ນ ພິກຂຸນັ້ນມີຄວາມຢຳເກງວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການເຂົ້າໝູ່ບ້ານໃນເວລາວິການໂດຍບໍ່ໄດ້ບອກລາ" ຈຶ່ງບໍ່ຍອມເຂົ້າໄປ ພວກໂຈນໄດ້ປຸ້ນພິກຂຸນັ້ນ ເມື່ອພິກຂຸນັ້ນໄປເຖິງນະຄອນສາວັດຖີ ໄດ້ແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໝູ່ບ້ານໃນເວລາວິການໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ບໍ່ບອກລາພິກຂຸທີ່ມີຢູ່ກ່ອນ ເຂົ້າໝູ່ບ້ານໃນເວລາວິການ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸອົງໜຶ່ງ ຈົບ

# ເລື້ອງພິກຂຸຖືກງູກັດ

[໕໑໑] ສະໄໝນັ້ນ ພິກຂຸອົງໜຶ່ງຖືກງູກັດ ພິກຂຸອີກອົງໜຶ່ງຈະເຂົ້າໝູ່ບ້ານດ້ວຍຄິດວ່າ "ຈະໄປນຳໄຟມາ" ແຕ່ແລ້ວມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການບໍ່ບອກລາພິກຂຸທີ່ມີຢູ່ກ່ອນ ເຂົ້າໝູ່ບ້ານໃນເວລາວິການ" ຈຶ່ງບໍ່ກ້າເຂົ້າໄປແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເມື່ອມີທຸລະຮີບດ່ວນເຊັ່ນນີ້ ບໍ່ຕ້ອງບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໝູ່ບ້ານໃນເວລາວິການ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໑໘] ອັນໜຶ່ງ ພິກຂຸໃດ ບໍ່ບອກລາພິກຂຸທີ່ມີຢູ່ແລ້ວ ເຂົ້າໝູ່ບ້ານໃນເວລາວິການ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຈຳເປັນຮີບດ່ວນເຊັ່ນນັ້ນ

### ເລື້ອງພິກຂຸຖືກງູກັດ ຈົບ

## ສິກຂາບົດວິພັງ

[໕໑໓] ຄຳວ່າ ອັນໜຶ່ງຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ອັນໜຶ່ງຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ພິກຂຸທີ່ຊື່ວ່າ ມີຢູ່ ຄື ພິກຂຸທີ່ຕົນສາມາດຈະບອກລາແລ້ວເຂົ້າໝູ່ບ້ານໄດ້

ພິກຂຸທີ່ຊື່ວ່າ ບໍ່ມີຢູ່ ຄື ພິກຂຸທີ່ຕົນບໍ່ສາມາດຈະບອກລາແລ້ວເຂົ້າໝູ່ບ້ານໄດ້

ທີ່ຊື່ວ່າ ເວລາວິການ ໝາຍເອົາເວລາເມື່ອທ່ຽງວັນລ່ວງໄປແລ້ວຈົນເຖິງອະຣຸນເຊົ້າມື້ໃໝ່

ຄຳວ່າ ເຂົ້າໝູ່ບ້ານ ຄວາມວ່າ ເມື່ອພິກຂຸກ້າວລ່ວງເຂົ້າເຂດຮົ້ວລ້ອມຂອງໝູ່ບ້ານທີ່ມີຮົ້ວ ລ້ອມ ຕ້ອງອາບັດປາຈິດຕີ ເມື່ອພິກຂຸກ້າວເຂົ້າເຂດອຸປະຈານຂອງໝູ່ບ້ານທີ່ບໍ່ມີຮົ້ວລ້ອມ ຕ້ອງອາ ບັດປາຈິດຕີ

ຄຳວ່າ ເວັ້ນໄວ້ແຕ່ມີເຫດຈຳເປັນຮີບດ່ວນເຊັ່ນນັ້ນ ຄື ຍົກເວັ້ນແຕ່ມີເຫດຈຳເປັນຮີບດ່ວນ ທີ່ຈະຕ້ອງນຳໄຟມາ ຫຼື ເຫັນຈຳເປັນອື່ນ ໆ ທີ່ເປັນເຫດຈຳເປັນຄ້າຍຄືກັນ

## ບົດພາຊະນີ

### ຕິກະປາຈິດຕີ

[໕໑໔] ເວລາວິການ ພິກຂຸສຳຄັນວ່າເປັນເວລາວິການ ບໍ່ບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໝູ່ ບ້ານ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຈຳເປັນຮີບດ່ວນເຊັ່ນນັ້ນ

ເວລາວິການ ພິກຂຸບໍ່ແນ່ໃຈ ບໍ່ບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໝູ່ບ້ານ ຕ້ອງອາບັດປາຈິດຕີ ເວັ້ນໄວ້ແຕ່ມີເຫດຈຳເປັນຮີບດ່ວນທີ່ສົມຄວນ

ເວລາວິການ ພິກຂຸສຳຄັນວ່າ ເປັນການບໍ່ບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໝູ່ບ້ານ ຕ້ອງອາບັ ດປາຈິດຕີ ເວັ້ນໄວ້ແຕ່ມີເຫດຈຳເປັນຮີບດ່ວນທີ່ສົມຄວນ

### ທຸກກົດ

ການ ພິກຂຸສຳຄັນວ່າເປັນເວລາວິການ ຕ້ອງອາບັດທຸກກົດ

ການ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ການ ພິກຂຸສຳຄັນວ່າບໍ່ເປັນການ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໑໕] ໑. ພິກຂຸເຂົ້າບ້ານເມື່ອມີເຫດຈຳເປັນຮີບດ່ວນທີ່ສົມຄວນ
໒. ພິກຂຸບອກລາພິກຂຸທີ່ມີຢູ່ແລ້ວເຂົ້າໄປ
໓. ພິກຂຸບໍ່ໄດ້ບອກລາຍ້ອນພິກຂຸບໍ່ມີແລ້ວເຂົ້າໄປ
໔. ພິກຂຸໄປອາຣາມອື່ນ
໕. ພິກຂຸໄປສຳນັກພິກຂຸນີ
໖. ພິກຂຸໄປສຳນັກເດຍຣະຖີ
໗. ພິກຂຸໄປໂຮງສັນ
໘. ພິກຂຸຍ່າງຕາມທາງທີ່ຜ່ານໝູ່ບ້ານ
໙. ພິກຂຸເຂົ້າໄປໃນເວລາມີເຫດຂັດຂ້ອງ
໑໐. ພິກຂຸວິກົນຈະລິດ
໑໑. ພິກຂຸຕົ້ນບັນຍັດ

**ວິກາລະຄາມະປະເວສະນະສິກຂາບົດທີ ໓ ຈົບ**

# ໙. ຣະຕະນະວັກ

## ໔. ສູຈິຄະຣະສິກຂາບົດ

## ວ່າດ້ວຍການເຮັດກ່ອງເຂັມດ້ວຍກະດູກເປັນຕົ້ນ

## ເລື້ອງພິກຂຸຫຼາຍອົງ

[໕໑໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ນາຍຊ່າງແກະສະຫຼັກງາຊ້າງຄົນໜຶ່ງປະວາຣະນາພິກຂຸທັງຫຼາຍໄວ້ວ່າ "ຂ້າພະເຈົ້າຈະຖວາຍກ່ອງເຂັມແກ່ຄູບາຜູ້ຕ້ອງການກ່ອງເຂັມ" ເມື່ອແລ້ວ ພິກຂຸເຫຼົ່ານັ້ນຈຶ່ງອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍ ພວກພິກຂຸຜູ້ມີກ່ອງເຂັມຂະໜາດນ້ອຍ ກໍອອກປາກຂໍກ່ອງເຂັມຂະໜາດໃຫຍ່ ພວກພິກຂຸຜູ້ມີກ່ອງເຂັມຂະໜາດໃຫຍ່ ກໍອອກປາກຂໍ ກ່ອງເຂັມຂະໜາດນ້ອຍ ນາຍຊ່າງເອົາແຕ່ເຮັດກ່ອງເຂັມເປັນຈຳນວນຫຼາຍໃຫ້ພິກຂຸທັງຫຼາຍ ຈົນບໍ່ສາມາດກະທຳການຄ້າຂາຍຢ່າງອື່ນໄດ້ ຫາລ້ຽງຊີບບໍ່ພໍ ທັງບຸດພັນລະຍາກໍພາກັນລຳບາກໄປນຳ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກສະມະນະເຊື້ອສາຍສາກະຍະບຸດຈຶ່ງບໍ່ຮູ້ປະມານ ອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍນໍ ນາຍຊ່າງເອົາແຕ່ເຮັດກ່ອງ

ເຂັມເປັນຈຳນວນຫຼາຍໃຫ້ພິກຂຸເຫຼົ່ານີ້ ຈົນບໍ່ສາມາດກະທຳການຄ້າຂາຍຢ່າງອື່ນໄດ້ ຫາລ້ຽງຊີບບໍ່ພໍທັງບຸດພັນລະຍາກໍພາກັນລຳບາກໄປນຳ

ພວກພິກຂຸໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງບໍ່ຮູ້ຈັກປະມານ ອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍນໍ” ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸບໍ່ຮູ້ຈັກປະມານ ອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍແມ່ນບໍ?” ພິກຂຸທັງຫຼາຍ ທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງບໍ່ຮູ້ຈັກປະມານ ອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍນໍ ພິກຂຸທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໑໗] ກໍ ພິກຂຸໃດ ເຮັດກ່ອງເຂັມດ້ວຍກະດູກ ດ້ວຍງາ ຫຼື ດ້ວຍເຂົາ ຕ້ອງອາບັດປາຈິດຕີທີ່ຊື່ເພທະນະກະ

**ເລື້ອງພິກຂຸຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໔໑໘] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ກະດູກ ໄດ້ແກ່ ກະດູກຊະນິດໃດຊະນິດໜຶ່ງ

ທີ່ຊື່ວ່າ ງາ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງງາຊ້າງ

ທີ່ຊື່ວ່າ ເຂົາ ໄດ້ແກ່ ເຂົາຊະນິດໃດຊະນິດໜຶ່ງ

ຄຳວ່າ ເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງທຳລາຍແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໔໑໙] ພິກຂຸເຮັດກ່ອງເຂັມທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດກ່ອງເຂັມທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດກ່ອງເຂັມທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດກ່ອງເຂັມທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸເຮັດເອງຫຼືໃຊ້ຜູ້ອື່ນໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

ພິກຂຸໄດ້ກ່ອງເຂັມທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໔໒໐] ໑. ພິກຂຸເຮັດລູກດຸມ
໒. ພິກຂຸເຮັດຕະບັນໄຟ
໓. ພິກຂຸເຮັດລູກຖະວິນ (ຫ່ວງຮ້ອຍສາຍປະຄົດ)
໔. ພິກຂຸເຮັດກັບຢາຕາ
໕. ພິກຂຸເຮັດໄມ້ທາຢາຕາ
໖. ພິກຂຸເຮັດຝັກມີດ
໗. ພິກຂຸເຮັດກະບອກກອງນ້ຳ
໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ສູຈິຄະຣະສິກຂາບົດທີ ໒ ຈົບ**

# ໗. ຣະຕະນະວັກ

## ໕. ມັນຈະປີຖະສິກຂາບົດ

## ວ່າດ້ວຍການເຮັດຕຽງແລະຕັ່ງ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໕໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດນອນເທິງຕຽງສູງ ເວລານັ້ນ ພຣະຜູ້ມີພຣະພາກສະເດັດຈາຣິກຕາມເສນາສະນະພ້ອມພິກຂຸຫຼາຍອົງ ຜ່ານໄປທາງທີ່ຢູ່ຂອງທ່ານອຸປະນັນທະສາກບຸດ ທ່ານໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ເມື່ອເຫັນແລ້ວໄດ້ເຂົ້າໄປຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍເຊີນສະເດັດທອດພຣະເນດຕຽງນອນຂອງຂ້າພຣະອົງເທີ້ນ ຂ້ານ້ອຍ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດກັບຈາກທີ່ນັ້ນແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພວກທ່ານເພິ່ງຮູ້ຈັກໂມຄະບຸຣຸດຍ້ອນທີ່ຢູ່ອາໄສ" ຄັ້ງນັ້ນ ພຣະຜູ້ມີພຣະພາກໄດ້ຊົງຕຳໜິທ່ານພຣະອຸປະນັນທະສາກະຍະບຸດໂດຍປະການຕ່າງ ໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໕໔໒] ກໍ ພິກຂຸ ຜູ້ຈະເຮັດຕຽງ ຫຼື ຕັ່ງໃໝ່ ເພິ່ງເຮັດໃຫ້ມີຕີນພຽງ ໘ ນີ້ວ ໂດຍນີ້ວສຸຄົດນັບແຕ່ໄມ້ຂອບລົງມາ ເຮັດໃຫ້ເກີນກວ່າກຳນົດນັ້ນ ຕ້ອງອາບັດປາຈິດຕີ ທີ່ຊື່ວ່າເສທະນະກະ

#### ເລື້ອງພຣະອຸປະນັນທະສາກະຍະບຸດ ຈົບ

### ສິກຂາບົດວິພັງ

[໕໔໓] ທີ່ຊື່ວ່າ ໃໝ່ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງການເຮັດຂຶ້ນມາ (ໃໝ່)

ທີ່ຊື່ວ່າ ຕຽງ ໄດ້ແກ່ ຕຽງ ໔ ຊະນິດ ຄື (໑) ຕຽງມີໄມ້ຂອບສອດເຂົ້າໃນຂາ (໒) ຕຽງມີໄມ້ຂອບຕິດຢູ່ກັບຂາ (໓) ຕຽງມີຂາເໝືອນກ້າມປູ (໔) ຕຽງມີຂາຕິດໄມ້ຂອບ

ທີ່ຊື່ວ່າ ຕັ່ງ ມີ ໔ ຊະນິດ ຄື (໑) ຕັ່ງມີໄມ້ຂອບສອດເຂົ້າໃນຂາ (໒) ຕັ່ງມີໄມ້ຂອບຕິດຢູ່ກັບຂາ (໓) ຕັ່ງມີຂາດັ່ງກ້າມປູ (໔) ຕັ່ງມີຂາຕິດໄມ້ຂອບ

ຄຳວ່າ ຜູ້ຈະເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ຄົນອື່ນໃຫ້ເຮັດ

ຄຳວ່າ ເພິ່ງເຮັດໃຫ້ມີຕີນພຽງ ໘ ນີ້ວ ໂດຍນີ້ວສຸຄົດ ນັບແຕ່ໄມ້ຂອບລົງມາ ຄື ເວັ້ນໄລຍະໃຕ້ໄມ້ຂອບລົງມາພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເກີນກຳນົດນັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຕັດອອກແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໕໘໔] ພິກຂຸເຮັດຕຽງ ຫຼື ຕັ່ງທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຕຽງ ຫຼື ຕັ່ງທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດຕຽງ ຫຼື ຕັ່ງທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຕຽງ ຫຼື ຕັ່ງທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

ພິກຂຸໄດ້ຕຽງ ຫຼື ຕັ່ງທີ່ຜູ້ອື່ນເຮັດສຳເລັດແລ້ວມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘໕] ໑. ພິກຂຸເຮັດຕຽງຕັ່ງໄດ້ຂະໜາດ

໒. ພິກຂຸເຮັດຕຽງຕັ່ງຕ່ຳກວ່າຂະໜາດ

໓. ພິກຂຸໄດ້ຕຽງຕັ່ງທີ່ຜູ້ອື່ນເຮັດເກີນຂະໜາດມາຕັດໃຫ້ໄດ້ຂະໜາດກ່ອນແລ້ວໃຊ້

໔. ພິກຂຸວິກົນຈະລິດ

໕. ພິກຂຸຕົ້ນບັນຍັດ

**ມັນຈະປິຖະສິກຂາບົດທີ ໕ ຈົບ**

# ໗. ຣະຕະນະວັກ

# ໖. ຕູໂລນັດທະສິກຂາບົດ

## ວ່າດ້ວຍການເຮັດຕຽງຕັ່ງຫຸ້ມນຸ່ນ

## ເລື້ອງພຣະສັບພັກຄີ

[໕໘໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໃຊ້ໃຫ້ເຮັດຕຽງຫຸ້ມນຸ່ນແດ່ ຕັ່ງຫຸ້ມນຸ່ນແດ່ ຄົນທັງຫຼາຍໄປທ່ຽວຈາຣິກໄປຕາມວິຫານເຫັນ ຈຶ່ງຕຳໜິ ປະນາມ

ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງໃຊ້ໃຫ້ເຮັດຕຽງຫຸ້ມນຸ່ນແດ່ ຕັ່ງຫຸ້ມນຸ່ນແດ່ ເໝືອນພວກຄະລິຫັດທີ່ບໍຣິໂພກກາມຢູ່ນໍ?

ພິກຂຸທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງໃຊ້ໃຫ້ເຮັດຕຽງຫຸ້ມນຸ່ນແດ່ ຕັ່ງຫຸ້ມນຸ່ນແດ່ນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ໃຫ້ເຮັດຕຽງແດ່ ຕັ່ງແດ່ຫຸ້ມນຸ່ນແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ໃຫ້ເຮັດຕຽງຫຸ້ມນຸ່ນແດ່ ຕັ່ງຫຸ້ມນຸ່ນແດ່ແນວນັ້ນນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໑] ກໍ ພິກຂຸໃດ ເຮັດຕຽງ ຫຼື ຕັ່ງຫຸ້ມດ້ວຍນຸ່ນ ຕ້ອງອາບັດປາຈິດຕີ ທີ່ຊື່ວ່າ ອຸດທາລະນະກະ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໕໔໒] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຕຽງ ໄດ້ແກ່ ຕຽງ ໔ ຊະນິດ ຄື (໑) ຕຽງມີໄມ້ຂອບສອດເຂົ້າໃນຂາ (໒) ຕຽງມີໄມ້ຂອບຕິດຢູ່ກັບຂາ (໓) ຕຽງມີຂາດັ່ງກ້າມປູ (໔) ຕຽງມີຂາຕິດກັບໄມ້ຂອບ

ທີ່ຊື່ວ່າ ຕັ່ງ ໄດ້ແກ່ ຕັ່ງ ໔ ຊະນິດ ຄື (໑) ຕັ່ງມີໄມ້ຂອບສອດເຂົ້າໃນຂາ (໒) ຕັ່ງມີໄມ້ຂອບຕິດຢູ່ກັບຂາ (໓) ຕັ່ງມີຂາຄືກ້າມປູ (໔) ຕັ່ງມີຂາຕິດກັບໄມ້ຂອບ

ທີ່ຊື່ວ່າ ນຸ່ນ ໄດ້ແກ່ ນຸ່ນ ໓ ຊະນິດ ຄື (໑) ນຸ່ນຈາກຕົ້ນໄມ້ (໒) ນຸ່ນຈາກເຄືອເຂົາ (໓) ນຸ່ນຈາກຫຍ້າເລົາ

ຄຳວ່າ ເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ຕ້ອງອາບັດທຸກກົດ ໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຮື້ອອກກ່ອນແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໕໒໙] ພິກຂຸເຮັດຕຽງ ຫຼື ຕັ່ງຫຸ້ມນຸ່ນທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຕຽງ ຫຼື ຕັ່ງຫຸ້ມນຸ່ນທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດຕຽງ ຫຼື ຕັ່ງຫຸ້ມນຸ່ນທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຕຽງ ຫຼື ຕັ່ງຫຸ້ມນຸ່ນທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

ພິກຂຸໄດ້ຕຽງຕັ່ງທີ່ຜູ້ອື່ນເຮັດສຳເລັດແລ້ວມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໓໐] ໑. ພິກຂຸເຮັດສາຍຮັດເຂົ່າຫຸ້ມນຸ່ນ

໒. ພິກຂຸເຮັດປະຄົດແອວຫຸ້ມນຸ່ນ

໓. ພິກຂຸເຮັດສາຍໂຍກບາດຫຸ້ມນຸ່ນ

໔. ພິກຂຸເຮັດຖົງບາດຫຸ້ມນຸ່ນ

໕. ພິກຂຸເຮັດຜ້າກອງນ້ຳຫຸ້ມນຸ່ນ

໖. ພິກຂຸເຮັດໝອນຫຸ້ມນຸ່ນ

໗. ພິກຂຸໄດ້ຕຽງຕັ່ງຫຸ້ມນຸ່ນທີ່ຜູ້ອື່ນເຮັດສຳເລັດແລ້ວມາທຳລາຍກ່ອນໃຊ້

໘. ພິກຂຸວິກົນຈະລິດ

໙. ພິກຂຸຕົ້ນບັນຍັດ

**ຕູໂລນັດທະສິກຂາບົດທີ ໖ ຈົບ**

# ໙. ຣະຕະນະວັກ

## ໗. ນິສີທະນະສິກຂາບົດ

## ວ່າດ້ວຍການເຮັດຜ້າຮອງນັ່ງ

## ເລື້ອງພຣະສັບພັກຄີ

[໕໓໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າຮອງນັ່ງສຳລັບພິກຂຸທັງຫຼາຍ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດຜ້າຮອງນັ່ງ" ຈຶ່ງໃຊ້ຜ້າຮອງນັ່ງບໍ່ໄດ້ຂະໜາດ ເມື່ອປູເທິງຕຽງແດ່ ເທິງຕັ່ງແດ່ ຈຶ່ງຫ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຈຶ່ງໃຊ້ຜ້າຮອງນັ່ງບໍ່ໄດ້ຂະໜາດນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸພວກສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ຜ້າຮອງນັ່ງບໍ່ໄດ້ຂະໜາດແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ຜ້າຮອງນັ່ງບໍ່ໄດ້ຂະໜາດນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸ ຜູ້ຈະເຮັດຜ້າຮອງນັ່ງ ເພິ່ງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນ ຄື ຍາວ ໒ ຄືບ ກວ້າງຄືບເຄິ່ງ ໂດຍຄືບສຸຄົດ ເຮັດໃຫ້ເກີນຂະໜາດນັ້ນ ຕ້ອງອາບັດປາຈິດຕີ ທີ່ຊື່ວ່າ ເສທະນະກະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

**ເລື້ອງພຣະສັບພັກຄີ ຈົບ**

## ເລື້ອງພຣະອຸທາຍີ

[໕໖໔] ສະໄໝນັ້ນ ທ່ານພຣະອຸທາຍີຮູບຮ່າງໃຫຍ່ ປູຜ້າຮອງນັ່ງເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າແລ້ວນັ່ງດຶງຊາຍຜ້າອອກຮອບ ໆ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະອຸທາຍີດັ່ງນີ້ວ່າ "ອຸທາຍີ ຍ້ອນເຫດໃດ ທ່ານຈຶ່ງປູຜ້າຮອງນັ່ງແລ້ວດຶງຊາຍຜ້າອອກຮອບ ໆ ເໝືອນຊ່າງເຮັດໜັງເກົ່ານໍ

ທ່ານພຣະອຸທາຍີຂາບທູນວ່າ "ຈິງດັ່ງນັ້ນ ຂ້ານ້ອຍ ກໍພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າຮອງນັ່ງສຳລັບພິກຂຸນ້ອຍຫຼາຍ

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຊາຍຜ້າຮອງນັ່ງເພີ່ມອີກ ໑ ຄືບ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໖໖] ອັນໜຶ່ງ ພິກຂຸຜູ້ຈະເຮັດຜ້າຮອງນັ່ງ ເພິ່ງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນ ຄື ຍາວ ໒ ຄືບ ກວ້າງຄືບເຄິ່ງ ຊາຍຜ້າຄືບໜຶ່ງ ໂດຍຄືບສຸຄົດ ເຮັດໃຫ້ເກີນຂະໜາດນັ້ນ ຕ້ອງອາບັດປາຈິດຕີທີ່ຊື່ວ່າເສທະນະກະ

### ເລື້ອງພຣະອຸທາຍີ ຈົບ

## ສິກຂາບົດວິພັງ

[໕໖໔] ທີ່ຊື່ວ່າ ຜ້າຮອງນັ່ງ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜ້າຮອງນັ່ງທີ່ມີຊາຍ

ຄຳວ່າ ຜູ້ຈະເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ຕ້ອງໃຫ້ເຮັດໃຫ້ໄດ້ຂະໜາດຂະໜາດໃນຂໍ້ນັ້ນ ຄື ຍາວ ໒ ຄືບ ກວ້າງຄືບເຄິ່ງ ຊາຍຄືບໜຶ່ງ ໂດຍຄືບສຸຄົດ ພິກຂຸເຮັດເອງຫຼື ໃຊ້ໃຫ້ຜູ້ອື່ນເຮັດເກີນຂະໜາດນັ້ນ ຕ້ອງອາບັດທຸກກົດຍ້ອນເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຕັດກ່ອນແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໕໖໕] ພິກຂຸເຮັດຜ້າຮອງນັ່ງ (ທີ່ເກີນຂະໜາດ) ທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າຮອງນັ່ງທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດຜ້າຮອງນັ່ງທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າຮອງນັ່ງທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

### ທຸກກົດ

ພິກຂຸເຮັດເອງຫຼືໃຊ້ຜູ້ອື່ນໃຫ້ເຮັດຜ້າຮອງນັ່ງ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ຜ້າຮອງນັ່ງທີ່ຜູ້ອື່ນເຮັດສຳເລັດແລ້ວມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໖໖] ໑. ພິກຂຸເຮັດຜ້າຮອງນັ່ງໄດ້ຂະໜາດ
໒. ພິກຂຸເຮັດຜ້າຮອງນັ່ງຕ່ຳກວ່າຂະໜາດ
໓. ພິກຂຸໄດ້ຜ້າຮອງນັ່ງທີ່ຜູ້ອື່ນເຮັດເກີນຂະໜາດມາຕັດແລ້ວໃຊ້
໔. ພິກຂຸເຮັດເປັນຜ້າເພດານ ຜ້າປູພື້ນ ຜ້າມ່ານ ປອກຟູກ ຫຼື ປອກໝອນ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

### ນິສີທະນະສິກຂາບົດທີ ໗ ຈົບ

# ໙. ຣະຕະນະວັກ

# ໗. ກັນທຸປະຕິດສາທິສິກຂາບົດ

## ວ່າດ້ວຍການເຮັດຜ້າປິດຝີ

## ເລື້ອງພຣະສັບພັກຄີ

[໕໖໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດ ຜ້າປິດຝີສຳລັບພິກຂຸທັງຫຼາຍ ພວກພິກຂຸສັບພັກຄີໄດ້ຂ່າວວ່າ “ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດຜ້າປິດຝີ” ຈຶ່ງໃຊ້ຜ້າປິດຝີບໍ່ໄດ້ຂະໜາດ ປ່ອຍຫ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ຍ່າງທ່ຽວໄປຢູ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງໃຊ້ຜ້າປິດຝີບໍ່ໄດ້ຂະໜາດນໍ” ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ຜ້າປິດຝີບໍ່ໄດ້ຂະໜາດແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ຜ້າປິດຝີບໍ່ໄດ້ຂະໜາດນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂື້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໓໗] ກໍ ພິກຂຸ ຜູ້ເຮັດຜ້າປິດຝີ ຕ້ອງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນ ຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄົດ ເຮັດໃຫ້ເກີນຂະໜາດນັ້ນ ຕ້ອງອາບັດປາຈິດຕີ ທີ່ຊື່ວ່າ ເສທະນະກະ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໔໓໙] ທີ່ຊື່ວ່າ ຜ້າປິດຝີ ໄດ້ແກ່ ຜ້າທີ່ຊົງອະນຸຍາດສຳລັບພິກຂຸຜູ້ອາພາດ ຄື ເປັນໂຣກຝີ ໂຣກສຸກໃສ ໂຣກມີນ້ຳໜອງ ໂຣກນ້ຳເຫຼືອງ ຫຼື ໂຣກຝີດາດ ໃຕ້ສາຍບືລົງໄປເໜືອຫົວເຂົ່າຂຶ້ນມາ ເພື່ອໃຊ້ປິດບາດ

ຄຳວ່າ ຜູ້ຈະເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພິ່ງໃຫ້ເຮັດໃຫ້ໄດ້ຂະໜາດຂະໜາດໃນຂໍ້ນັ້ນ ຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເກີນຂະໜາດນັ້ນ ຕ້ອງອາບັດທຸກກົດ ໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຕັດອອກກ່ອນແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໔໔໐] ພິກຂຸເຮັດຜ້າປິດຝີ (ເກີນຂະໜາດ) ທີ່ຕົນເຮັດຄ້າງໄວ້ຈົບສຳເລັດເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າປິດຝີທີ່ຕົນເຮັດຄ້າງໄວ້ຕໍ່ຈົບສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດຜ້າປິດຝີທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົບສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າປິດຝີທີ່ຜູ້ອື່ນເຮັດຄ້າງໄວ້ເຮັດຕໍ່ຈົບສຳເລັດ ຕ້ອງອາບັດປາຈິດຕີ

**ທຸກກົດ**

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ຜ້າປິດຝີທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໔໑] ໑. ພິກຂຸເຮັດຜ້າປິດຝີໄດ້ຂະໜາດ
໒. ພິກຂຸເຮັດຜ້າປິດຝີຕໍ່າກວ່າຂະໜາດ
໓. ພິກຂຸໄດ້ຜ້າປິດຝີທີ່ຜູ້ອື່ນເຮັດໄວ້ເກີນຂະໜາດມາຕັດແລ້ວໃຊ້
໔. ພິກຂຸເຮັດເປັນຜ້າເພດານ ຜ້າປູພື້ນ ຜ້າມ່ານ ເປືອກຟູກ ຫຼື ປອກໝອນ
໕. ພິກຂຸວິກົນຈະລິດ
໖. ພິກຂຸວິກົນຈະລິດ

**ກັນທຸປະຕິດສາທິສິກຂາບົດທີ ໗ ຈົບ**

# ໘. ຣະຕະນະວັກ

# ໘. ວັດສິກະສາຕິກາສິກຂາບົດ

## ວ່າດ້ວຍການເຮັດຜ້າອາບນໍ້າຝົນ

## ເລື້ອງພຣະສັບພັກຄີ

[໕໔໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າອາບນໍ້າຝົນສໍາລັບພິກຂຸທັງຫຼາຍ ພວກພິກຂຸສັບພັກຄີໄດ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າອາບນໍ້າຝົນ" ຈຶ່ງໃຊ້ຜ້າອາບນໍ້າຝົນບໍ່ໄດ້ຂະໜາດ ປ່ອຍຫ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ຍ່າງຫຍ່ງວໄປ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງໃຊ້ຜ້າອາບນໍ້າຝົນບໍ່ໄດ້ຂະໜາດນໍ" ເມື່ອພິກຂຸທັງຫຼາຍ ຕໍາໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານໃຊ້ຜ້າອາບນ້ຳຝົນບໍ່ໄດ້ຂະໜາດ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງໃຊ້ຜ້າອາບນ້ຳຝົນບໍ່ໄດ້ຂະໜາດນໍ ໂມຄະບຸຣຸດທັງຫຼາຍ ການກະທຳແບວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໓] ກໍ ພິກຂຸ ຜູ້ຈະເຮັດຜ້າອາບນ້ຳຝົນ ເພິ່ງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນຄື ຍາວ ໖ ຄືບ ກວ້າງ ໒ ຄືບເຄິ່ງ ໂດຍຄືບສຸຄົດ ເຮັດໃຫ້ເກີນຂະໜາດນັ້ນ ຕ້ອງອາບັດປາຈິດຕີທີ່ຊື່ວ່າເສທະນະກະ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

[໕໔໔] ທີ່ຊື່ວ່າ ຜ້າອາບນ້ຳຝົນ ໄດ້ແກ່ ຜ້າທີ່ຊົງອະນຸຍາດໄວ້ໃຫ້ໃຊ້ໄດ້ຕະຫຼອດ ໔ ເດືອນໃນລະດູຝົນ

ຄຳວ່າ ຜູ້ຈະເຮັດ ຄື ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ຕ້ອງໃຫ້ເຮັດໃຫ້ໄດ້ຂະໜາດ ຄື ຍາວ ໖ ຄືບ ກວ້າງ ໒ ຄືບເຄິ່ງ ໂດຍຄືບສຸຄົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເກີນຂະໜາດນັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຕັດອອກແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໕໔໕] ພິກຂຸເຮັດຜ້າອາບນ້ຳຝົນ (ເກີນຂະໜາດ) ທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າອາບນ້ຳຝົນທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸເຮັດຜ້າອາບນ້ຳຝົນທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຜ້າອາບນ້ຳຝົນທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ຜ້າອາບນ້ຳຝົນທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໔໖] ໑. ພິກຂຸເຮັດຜ້າອາບນ້ຳຝົນໄດ້ຂະໜາດ
໒. ພິກຂຸເຮັດຜ້າອາບນ້ຳຝົນຕ່ຳກວ່າຂະໜາດ
໓. ພິກຂຸໄດ້ຜ້າອາບນ້ຳຝົນທີ່ຜູ້ອື່ນເຮັດເກີນຂະໜາດມາຕັດແລ້ວໃຊ້
໔. ພິກຂຸເຮັດເປັນຜ້າເພດານ ຜ້າປູພື້ນ ຜ້າມ່ານ ເປືອກຟູກ ຫຼື ປອກໝອນ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

**ວັດສະສິກສາຕິກາສິກຂາບົດທີ ໙ ຈົບ**

# ໙. ຣະຕະນະວັກ

## ໑໐. ນັນທະສິກຂາບົດ
### ວ່າດ້ວຍພຣະນັນທະ
### ເລື້ອງພຣະນັນທະ

[໕໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະນັນທະ ໂອຣົດພຣະມາຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ມີຮູບງາມ ໜ້າເບິ່ງ ໜ້າຊົມ ມີກາຍຕ່ຳກວ່າພຣະຜູ້ມີພຣະພາກ ໔ ອົງຄຸລີ ທ່ານພຣະນັນທະນັ້ນຫົ່ມຈີວອນມີຂະໜາດເທົ່າຈີວອນພຣະສຸຄົດ ພິກຂຸທັງຫຼາຍຜູ້ເປັນພຣະເຖຣະໄດ້ເຫັນທ່ານພຣະນັນທະຍ່າງມາແຕ່ໄກ ເມື່ອເຫັນແລ້ວຈຶ່ງລຸກຂຶ້ນຈາກອາສະນະດ້ວຍຄິດວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດມາ" ເມື່ອທ່ານພຣະນັນທະເຂົ້າມາໃກ້ ຈຶ່ງຈື່ໄດ້ແລ້ວພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະນັນທະ ຈຶ່ງຫົ່ມຈີວອນມີຂະໜາດເທົ່າຈີວອນພຣະສຸຄົຕນໍ່" ເມື່ອພິກຂຸທັງຫຼາຍ ຕຳໜິທ່ານພຣະນັນທະໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະນັນທະວ່າ "ນັນທະ ໄດ້ຂ່າວວ່າ ທ່ານຫົ່ມຈີວອນມີຂະໜາດເທົ່າສຸຄົດຈີວອນແມ່ນບໍ?" ທ່ານພຣະນັນທະທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ນັນທະ ເປັນຫຍັງ ທ່ານຈຶ່ງຫົ່ມຈີວອນມີຂະໜາດເທົ່າສຸຄົດຈີວອນນໍ ນັນທະ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໕໔໗] ກໍ ພິກຂຸໃດ ເຮັດຈີວອນມີຂະໜາດເທົ່າກັບສຸຄົດຈີວອນ ຫຼື ໃຫຍ່ກວ່າ ຕ້ອງອາບັດປາຈິດຕີ ທີ່ຊື່ວ່າເສທະນະກະ ຂະໜາດເທົ່າສຸຄົດຈີວອນຂອງສຸຄົດໃນຂໍ້ນັ້ນ ຄື ຍາວ ໙ ຄືບ ກວ້າງ ໖ ຄືບ ໂດຍຄືບສຸຄົດ ນີ້ເປັນຂະໜາດເທົ່າສຸຄົດຈີວອນຂອງພຣະສຸຄົດ

### ເລື້ອງພຣະນັນທະ ຈົບ

## ສິກຂາບົດວິພັງ

[໕໔໙] ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຂະໜາດເທົ່າສຸຄົດຈີວອນ ຄື ຍາວ ໙ ຄືບ ກວ້າງ ໖ ຄືບ ໂດຍຄືບສຸຄົດ

ຄຳວ່າ ເຮັດ ຄື ພິກຂຸເຮັດເອງຫຼືໃຊ້ຜູ້ອື່ນໃຫ້ເຮັດ ຕ້ອງອາບັດທຸກກົດ ໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີຍ້ອນໄດ້ມາ ຕ້ອງຕັດອອກອອກກ່ອນແລ້ວສະແດງອາບັດ

## ບົດພາຊະນີ

### ປາຈິດຕີ

[໕໕໐] ພິກຂຸເຮັດຈີວອນ (ເທົ່າສຸຄົດຈີວອນ) ທີ່ຕົນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງ ອາບັດປາຈິດຕີ

ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຈີວອນທີ່ຕົນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸເຮັດຈີວອນທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ
ພິກຂຸໃຊ້ຜູ້ອື່ນໃຫ້ເຮັດຈີວອນທີ່ຜູ້ອື່ນເຮັດຄ້າງໄວ້ຈົນສຳເລັດ ຕ້ອງອາບັດປາຈິດຕີ

**ທຸກກົດ**

ພິກຂຸເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ
ພິກຂຸໄດ້ຈີວອນທີ່ຜູ້ອື່ນເຮັດສຳເລັດແລ້ວມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໕໑] ໑. ພິກຂຸເຮັດຈີວອນຕ່ຳກວ່າຂະໜາດ
໒. ພິກຂຸໄດ້ຈີວອນທີ່ຜູ້ອື່ນເຮັດສຳເລັດມາຕັດແລ້ວໃຊ້
໓. ພິກຂຸເຮັດເປັນຜ້າເພດານ ຜ້າປູພື້ນ ຜ້າມ່ານ ເປືອກຟູກ ຫຼື ປອກໝອນ
໔. ພິກຂຸວິກົນຈະລິດ
໕. ພິກຂຸຕົ້ນບັນຍັດ

**ນັນທະສິກຂາບົດທີ ໑໐ ຈົບ**

**ຣະຕະນະວັກທີ ໙ ຈົບ**

## ລວມສິກຂາບົດທີ່ມີໃນຣະຕະນະວັກ

ຣະຕະນະວັກມີ ໑໐ ສິກຂາບົດ ຄື

| | |
|---|---|
| ໑. ອັນເຕປຸຣະສິກຂາບົດ | ວ່າດ້ວຍການເຂົ້າເຂດພຣະຣາດຊະຖານຊັ້ນໃນ |
| ໒. ຣະຕະນະສິກຂາບົດ | ວ່າດ້ວຍການເກັບຣັດຕະນະທີ່ເຈົ້າຂອງລືມໄວ້ |
| ໓. ວິກາລະຄາມະປະເວສະນະສິກຂາບົດ | ວ່າດ້ວຍການເຂົ້າບ້ານໃນເວລາວິການ |
| ໔. ສູຈິຄະຣະສິກຂາບົດ | ວ່າດ້ວຍການເຮັດກ່ອງເຂັມດ້ວຍກະດູກເປັນຕົ້ນ |
| ໕. ມັນຈະປີຖະສິກຂາບົດ | ວ່າດ້ວຍການເຮັດຕຽງແລະຕັ່ງ |
| ໖. ຕູໂລນັດທະສິກຂາບົດ | ວ່າດ້ວຍການເຮັດຕຽງແລະຕັ່ງຫຸ້ມນຸ່ນ |
| ໗. ນິສີທະນະສິກຂາບົດ | ວ່າດ້ວຍການເຮັດຜ້າຮອງນັ່ງ |
| ໘. ກັນທຸປະຕິດສາທິສິກຂາບົດ | ວ່າດ້ວຍການເຮັດຜ້າປິດຝີ |
| ໙. ວັດສິກະສາຕິກາສິກຂາບົດ | ວ່າດ້ວຍການເຮັດຜ້າອາບນ້ຳຝົນ |
| ໑໐. ນັນທະສິກຂາບົດ | ວ່າດ້ວຍທ່ານພຣະນັນທະ |

## ບົດສະຫຼຸບ

ທ່ານທັງຫຼາຍ ທຳຄືປາຈິດຕີ ໙໒ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມທ່ານທັງຫຼາຍ ໃນທຳຄືປາຈິດຕີ ໙໒ ສິກຂາບົດເຫຼົ່ານີ້ວ່າ ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ທ່ານທັງຫຼາຍບໍລິສຸດແລ້ວໃນທຳຄືປາຈິດຕີ ໙໒ ສິກຂາບົດນີ້ ດັ່ງນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ຂຸດທະກະສິກຂາບົດ ຈົບບໍລິບູນ**

**ປາຈິດຕີຍະກັນ ຈົບ**

# ๖. ປະຕິເທສະນີຍະກັນ

ທ່ານທັງຫຼາຍ ທຳຄືປະຕິເທສະນີຍະ ๔ ສິກຂາບົດເຫຼົ່ານີ້ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບດັ່ງນີ້

## ๑. ປະຖົມປະຕິເທສະນີຍະສິກຂາບົດ

## ວ່າດ້ວຍການຮັບຂອງຫຍໍ້າຂອງສັນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ

### ເລື້ອງພິກຂຸນີອົງໜຶ່ງ

[๕๕๘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງທ່ຽວບິນທະບາດໃນນະຄອນສາວັດຖີ ເວລາກັບໄດ້ພົບພິກຂຸອົງໜຶ່ງຈຶ່ງໄດ້ກ່າວດັ່ງນີ້ວ່າ "ນິມົນຄູບາ ຮັບພິກສາຫານດ້ວຍເທີ້ນ"

ພິກຂຸນັ້ນຕອບວ່າ "ດີແລ້ວ ນາງ" ແລ້ວຮັບພິກສາຫານທັງໝົດ

ເມື່ອໃກ້ເວລາສັນແລ້ວ ພິກຂຸນີນັ້ນບໍ່ສາມາດທ່ຽວບິນທະບາດໄດ້ທັນ ຈຶ່ງບໍ່ໄດ້ສັນພັດຕາຫານ

ຕໍ່ມາ ແມ່ນໃນວັນທີ ๘ ພິກຂຸນີນັ້ນ ຯລຯ ແມ່ນໃນວັນທີ ๓ ພິກຂຸນີນັ້ນກໍທ່ຽວບິນທະບາດໃນນະຄອນສາວັດຖີ ເວລາກັບໄດ້ພົບພິກຂຸອົງນັ້ນຈຶ່ງໄດ້ກ່າວດັ່ງນີ້ວ່າ "ນິມົນຄູບາ ຮັບພິກສາຫານນີ້ເທີ້ນ"

ພິກຂຸນັ້ນຕອບວ່າ "ດີແລ້ວ ນາງ" ແລ້ວຮັບພິກສາຫານທັງໝົດ

ເມື່ອໃກ້ເວລາສັນແລ້ວ ພິກຂຸນີນັ້ນບໍ່ສາມາດທ່ຽວບິນທະບາດໄດ້ທັນ ຈຶ່ງບໍ່ໄດ້ສັນພັດຕາຫານ

ໃນວັນທີ ๔ ພິກຂຸນີນັ້ນຍ່າງໄຊເຊໄປຕາມຖະໜົນຍ້ອນຄວາມຫິວ ເສດຖີຄະຫະບໍດີນັ່ງລົດສວນທາງມາ ໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ນິມົນທ່ານຫຼີກທາງ" ເມື່ອນາງກຳລັງຈະຫຼີກທາງໃຫ້ໄດ້ ລົ້ມລົງໃນທີ່ນັ້ນ ເສດຖີຄະຫະບໍດີຂໍຂະມາພິກຂຸນີນັ້ນວ່າ "ແມ່ເຈົ້າ ທ່ານໂຜດຍົກໂທດ ຂ້າພະເຈົ້າເຮັດໃຫ້ທ່ານລົ້ມ"

ພິກຂຸນີຕອບວ່າ "ຄະຫະບໍດີ ທ່ານບໍ່ໄດ້ເຮັດໃຫ້ເຮົາລົ້ມ ເຮົາບໍ່ມີແຮງເອງ"

ເສດຖີຖາມວ່າ "ແມ່ເຈົ້າ ຍ້ອນເຫດໃດທ່ານຈຶ່ງບໍ່ມີແຮງນໍ?"

ພິກຂຸນີນັ້ນ ຈຶ່ງເລົ່າເລື່ອງນັ້ນໃຫ້ເສດຖີຄະຫະບໍດີຮູ້ຈົນໝົດ ເສດຖີຄະຫະບໍດີພາພິກຂຸນີນັ້ນໄປສົ່ງຢູ່ເຮືອນ ແລ້ວຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ຄູບາທັງຫຼາຍ ຈຶ່ງຮັບອາມິດຈາກມືຂອງພິກຂຸນີແນວນັ້ນນໍ? ປົກກະຕິມາຕຸຄາມກໍຫາລາບໄດ້ຍາກຢູ່ແລ້ວ

ພວກພິກຂຸໄດ້ຍິນເສດຖີຄະຫະບໍດີຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງຮັບອາມິດຈາກມືຂອງພິກຂຸນີນໍ" ເມື່ອພິກຂຸທັງຫຼາຍ ຕໍາໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າທ່ານຮັບອາມິດຈາກມືຂອງພິກຂຸນີ ແມ່ນບໍ?" ພິກຂຸນັ້ນທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະອົງຕັດຖາມວ່າ "ພິກຂຸ ພິກຂຸນີນັ້ນເປັນຍາດຂອງທ່ານ ຫຼື ບໍ່ແມ່ນຍາດ" ພິກຂຸນັ້ນທູນຕອບວ່າ "ບໍ່ແມ່ນຍາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມຄະບຸຣຸດ ພິກຂຸຜູ້ບໍ່ແມ່ນຍາດຍ່ອມບໍ່ຮູ້ສິ່ງທີ່ເໝາະສົມຫຼືບໍ່ເໝາະສົມ ຂອງທີ່ມີຢູ່ຫຼືບໍ່ມີຢູ່ຂອງພິກຂຸນີຜູ້ບໍ່ແມ່ນຍາດ ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງຮັບອາມິດຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດນໍ ໂມຄະບຸຣຸດ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໔໓] ກໍ ພິກຂຸໃດ ຮັບຂອງຫຍໍ້າ ຫຼື ຂອງສັນດ້ວຍມືຕົນເອງຈາກມືຂອງພິກຂຸນີ ຜູ້ບໍ່ແມ່ນຍາດ ຜູ້ເຂົ້າໄປໃນບໍລິເວນບ້ານ ຫຍໍ້າ ຫຼື ສັນ ພິກຂຸນັ້ນ ເພິ່ງສະແດງຄືນວ່າ "ທ່ານຂ້າພະເຈົ້າຕ້ອງທໍາ ຄື ປະຕິເທສະນີຍະ ເປັນທໍາທີ່ໜ້າຕໍາໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທໍານັ້ນ

### ເລື້ອງພຣະພິກຂຸນີອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໔໔໔] ຄໍາວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ແມ່ນຍາດ ຄື ບໍ່ແມ່ນຄົນທີ່ກ່ຽວເນື່ອງກັນທາງມານດາ ຫຼື ທາງບິດາຕະຫຼອດ ເຈັດຊົ່ວຄົນ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໔ ຝ່າຍ

ທີ່ຊື່ວ່າ ບໍລິເວນບ້ານ ໄດ້ແກ່ ຖະໜົນ ຮ່ອມຕັນ ທາງສີ່ແຍກ ເຮືອນ

ທີ່ຊື່ວ່າ ຂອງຫຍ້ຳ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍ້ຳ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຕູ ປາ ຊີ້ນ

ພິກຂຸຮັບປະເຄນໄວ້ດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປະຕິເທສະນີຍະທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປະຕິເທສະນີຍະ

[໕໕໕] ພິກຂຸນີບໍ່ແມ່ນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດ ຜູ້ເຂົ້າໄປໃນບໍລິເວນບ້ານ ແລ້ວຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ພິກຂຸນີບໍ່ແມ່ນຍາດ ພິກຂຸບໍ່ແນ່ໃຈ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດ ຜູ້ເຂົ້າໄປໃນບໍລິເວນບ້ານ ແລ້ວຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ພິກຂຸນີບໍ່ແມ່ນຍາດ ພິກຂຸສຳຄັນວ່າເປັນຍາດ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດ ຜູ້ເຂົ້າໄປໃນບໍລິເວນບ້ານ ແລ້ວຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

### ທຸກກົດ

ພິກຂຸຮັບຂອງເປັນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກເພື່ອເປັນອາຫານ ຕ້ອງອາບັດ ທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນຈາກມືຂອງພິກຂຸນີຜູ້ອຸປະສົມບົດໃນສົງຝ່າຍດຽວ ດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ພິກຂຸນີເປັນຍາດ ພິກຂຸສຳຄັນວ່າບໍ່ແມ່ນຍາດ ຕ້ອງອາບັດທຸກກົດ

ພິກຂຸນີເປັນຍາດ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ພິກຂຸນີເປັນຍາດ ພິກຂຸສຳຄັນວ່າເປັນຍາດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໕໖] ໑. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນຈາກມືຂອງພິກຂຸນີທີ່ເປັນຍາດ

໒. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຜູ້ບໍ່ແມ່ນຍາດສັ່ງໃຫ້ຖວາຍບໍ່ໄດ້ຖວາຍເອງ

໓. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຖວາຍໂດຍວາງໄວ້

໔. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຖວາຍໃນອາຮາມ

໕. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຖວາຍໃນສຳນັກພິກຂຸນີ

໖. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຖວາຍໃນສຳນັກເດຍຣະຖີ

໗. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີຖວາຍໃນໂຮງອາຫານ

໘. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ພິກຂຸນີນຳອອກຈາກບ້ານແລ້ວຖວາຍ

໙. ພິກຂຸຮັບຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ທີ່ພິກຂຸນີຖວາຍດ້ວຍສັ່ງວ່າ ເມື່ອມີເຫດຈຳເປັນນິມົນສັນໄດ້

໑໐. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ສິກຂະມານາຖວາຍ

໑໑. ພິກຂຸຮັບຂອງຫຍ້ຳ ຫຼື ຂອງສັນທີ່ສາມະເນຣີຖວາຍ

໑໒. ພິກຂຸວິກົນຈະລິດ

໑໓. ພິກຂຸຕົ້ນບັນຍັດ

**ປະຖະມະປະຕິເທສະນີຍະສິກຂາບົດທີ ໑ ຈົບ**

## ໒. ທຸຕິຍະປະຕິເທສະນີຍະສິກຂາບົດ

## ວ່າດ້ວຍການບໍ່ຫ້າມພິກຂຸນີຜູ້ຖ້າບົງການ

## ເລື້ອງພິກຂຸນີສັບພັກຄີ

[໕໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພິກຂຸທັງຫຼາຍຕ່າງຮັບນິມົນສັນໃນຕະກູນ ພວກພິກຂຸນີສັບພັກຄີມາຢືນບົງການເພື່ອພວກພິກຂຸສັບພັກຄີວ່າ "ພວກທ່ານຈົ່ງຖວາຍແກງທີ່ນີ້ ຈົ່ງຖວາຍເຂົ້າສຸກທີ່ນີ້" ພວກພິກຂຸສັບພັກຄີໄດ້ສັນຕາມຕ້ອງການ ພິກຂຸເຫຼົ່າອື່ນບໍ່ໄດ້ສັນຕາມທີ່ຄິດໄວ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຈຶ່ງບໍ່ຫ້າມພວກພິກຂຸນີຜູ້ຖ້າບົງການນໍ" ເມື່ອພິກຂຸທັງຫຼາຍຕຳໜິ ພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານບໍ່ຫ້າມພິກຂຸນີ ຜູ້ຖ້າບົງການ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງບໍ່ຫ້າມພິກຂຸນີຜູ້ຖ້າບົງການນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໔໗] ກໍ ພິກຂຸຮັບນິມົນສັນໃນຕະກູນ ຖ້າພິກຂຸນີມາຢືນບົງການໃນທີ່ນັ້ນວ່າ "ພວກທ່ານຈົ່ງຖວາຍແກງທີ່ນີ້ ຖວາຍເຂົ້າສຸກທີ່ນີ້" ພິກຂຸເຫຼົ່ານັ້ນເພິ່ງໄລ່ພິກຂຸນີນັ້ນອອກໄປດ້ວຍກ່າວວ່າ "ນາງ ທ່ານຈົ່ງຫຼີກໄປຕາບເທົ່າທີ່ພິກຂຸທັງຫຼາຍຍັງສັນຢູ່" ຖ້າບໍ່ມີພິກຂຸແມ່ນອົງໜຶ່ງວ່າກ່າວເພື່ອຈະໄລ່ພິກຂຸນີນັ້ນວ່າ "ນາງ ທ່ານຈົ່ງຫຼີກໄປຕາບເທົ່າທີ່ພິກຂຸທັງຫຼາຍຍັງສັນຢູ່" ພິກຂຸເຫຼົ່ານັ້ນເພິ່ງສະແດງຄືນວ່າ "ທ່ານ ທັງຫຼາຍ ພວກຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ

**ເລື້ອງພວກພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໔໔໘] ຄຳວ່າ ກໍ ພິກຂຸຮັບນິມົນສັນໃນຕະກູນ ຄວາມວ່າ ທີ່ຊື່ວ່າຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ຄຳວ່າ ຮັບນິມົນສັນ ຄື ພິກຂຸຮັບນິມົນສັນໂພຊະນະ ໕ ຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ພິກຂຸນີ ໄດ້ແກ່ ມາຕຸຄາມທີ່ອຸປະສົມບົດໃນສົງ ໒ ຝ່າຍ

ທີ່ຊື່ວ່າ ບົງການ ຄື ພິກຂຸນີຖ້າບົງການວ່າ "ພວກທ່ານຈົ່ງຖວາຍແກງທີ່ນີ້ ຖວາຍເຂົ້າສຸກທີ່ນີ້" ຕາມຄວາມເປັນມິດ ຕາມຄວາມເປັນເພື່ອນ ຕາມຄວາມໃກ້ຊິດ ຕາມທີ່ເປັນຜູ້ຮ່ວມພຣະອຸປັດຊາ ຕາມທີ່ເປັນຜູ້ຮ່ວມພຣະອາຈານກັນມາ ນີ້ຊື່ວ່າຜູ້ບົງການ

ຄຳວ່າ ພິກຂຸເຫຼົ່ານັ້ນ ໄດ້ແກ່ ພິກຂຸຜູ້ກຳລັງສັນ

ຄຳວ່າ ພິກຂຸນີນັ້ນ ໄດ້ແກ່ ພິກຂຸນີຜູ້ບົງການ

ພິກຂຸເຫຼົ່ານັ້ນເພິ່ງໄລ່ພິກຂຸນີນັ້ນໄປດ້ວຍກ່າວວ່າ "ນາງ ທ່ານຈົ່ງຫຼີກໄປຕາບເທົ່າທີ່ພິກຂຸທັງຫຼາຍຍັງສັນຢູ່" ຖ້າບໍ່ມີພິກຂຸແມ່ນອົງໜຶ່ງວ່າກ່າວ ພິກຂຸຮັບມາດ້ວຍຄິດວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປະຕິເທສະນີຍະທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປະຕິເທສະນີຍະ

[໕໗໐] ມາຕຸຄາມຜູ້ເປັນອຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ບໍ່ຫ້າມທ່ານ ຜູ້ບົງການ ຕ້ອງອາບັດປະຕິເທສະນີຍະ

ມາຕຸຄາມຜູ້ເປັນອຸປະສຳບັນ ພິກຂຸບໍ່ແນ່ໃຈ ບໍ່ຫ້າມທ່ານຜູ້ບົງການ ຕ້ອງອາບັດປະຕິເທສະນີຍະ

ມາຕຸຄາມຜູ້ເປັນອຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ບໍ່ຫ້າມທ່ານຜູ້ບົງການ ຕ້ອງອາບັດປະຕິເທສະນີຍະ

### ທຸກກົດ

ມາຕຸຄາມຜູ້ອຸປະສົມບົດໃນສົງຝ່າຍດຽວບົງການ ພິກຂຸບໍ່ຫ້າມ ຕ້ອງອາບັດທຸກກົດ

ມາຕຸຄາມຜູ້ເປັນອະນຸປະສຳບັນ ພິກຂຸສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ມາຕຸຄາມຜູ້ເປັນອະນຸປະສຳບັນ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ມາຕຸຄາມຜູ້ເປັນອະນຸປະສຳບັນ ພິກຂຸສຳຄັນວ່າເປັນອະນຸປະສຳບັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໗໑] ໑. ພິກຂຸຮັບແລ້ວສັນພັດຕາຫານທີ່ພິກຂຸນີໃຊ້ໃຫ້ຖວາຍຂອງຂອງຕົນ ແຕ່ບໍ່ໄດ້ຖວາຍດ້ວຍຕົນເອງ

໒. ພິກຂຸຮັບແລ້ວສັນພັດຕາຫານທີ່ພິກຂຸນີຖວາຍຂອງຂອງຜູ້ອື່ນ ບໍ່ໄດ້ໃຊ້ໃຫ້ຖວາຍ

໓. ພິກຂຸຮັບແລ້ວສັນພັດຕາຫານທີ່ເຂົາຍັງບໍ່ຖວາຍ ແຕ່ພິກຂຸນີໃຊ້ໃຫ້ຖວາຍ

໔. ພິກຂຸຮັບແລ້ວສັນພັດຕາຫານໃນທີ່ທີ່ເຂົາຍັງບໍ່ຖວາຍ ແຕ່ພິກຂຸນີໃຊ້ໃຫ້ຖວາຍ

໕. ພິກຂຸຮັບແລ້ວສັນພັດຕາຫານທີ່ພິກຂຸນີໃຊ້ໃຫ້ຖວາຍເທົ່າ ໆ ກັນທຸກອົງ

໖. ພິກຂຸຮັບແລ້ວສັນພັດຕາຫານທີ່ສິກຂະມານາບົງການ

໗. ພິກຂຸຮັບແລ້ວສັນພັດຕາຫານທີ່ສາມະເນຣີບົງການ

໙. ພິກຂຸຮັບແລ້ວສັນພັດຕາຫານທຸກຢ່າງຍົກເວັ້ນໂພຊະນະ ໕ ບໍ່ຕ້ອງອາບັດ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ທຸຕິຍະປະຕິເທສະນີຍະສິກຂາບທີ ໘ ຈົບ**

## ໓. ຕະຕິຍະປະຕິເທສະນີຍະສິກຂາບົດ

## ວ່າດ້ວຍການຮັບຂອງຫຍ້ຳຂອງສັນໃນທີ່ທີ່ບໍ່ໄດ້ຮັບນິມົນໄວ້ກ່ອນ

## ເລື້ອງຕະກູນໜຶ່ງ

[໕໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ໃນນະຄອນສາວັດຖີ ຕະກູນໜຶ່ງທັງ ໘ ຝ່າຍມີຄວາມເຫຼື້ອມໃສ ຈະເລີນດ້ວຍສັດທາ ແຕ່ຂາດແຄນຊັບ ດ້ວຍສັດທາທີ່ແຮງກ້ານັ້ນເຂົາໄດ້ຖວາຍຂອງຫຍ້ຳຂອງບໍຣິໂພກທັງໝົດທີ່ເກີດຂຶ້ນໃນຕະກູນຕົນເອງແກ່ພິກຂຸທັງຫຼາຍ ຈົນບາງເວລາບໍ່ມີຈະກິນ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງຮັບພັດຕາຫານໂດຍບໍ່ຮູ້ຈັກປະມານນໍ ຄົນເຫຼົ່ານີ້ຖວາຍແກ່ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ຈົນບາງເທື່ອຕົນເອງຈົນວ່າບໍ່ໄດ້ກິນອາຫານ

ພວກພິກຂຸໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ເມື່ອແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດຕະກູນທີ່ຈະເລີນດ້ວຍສັດທາແຕ່ຂາດແຄນຊັບໃຫ້ເປັນຕະກູນເສຂະ ດ້ວຍຍັດຕິທຸຕິຍະກຳ ພິກຂຸທັງຫຼາຍເພິ່ງໃຫ້ເສຂະສົມມຸດຢ່າງນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

## ກຳມະວາຈາໃຫ້ເສຂະສົມມຸດ

[໕໗໙] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຕະກູນຊື່ນີ້ຈະເລີນດ້ວຍສັດທາແຕ່ຂາດແຄນຊັບ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ເສຂະສົມມຸດແກ່ຕະກູນຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຕະກູນຊື່ນີ້ຈະເລີນດ້ວຍສັດທາແຕ່ຂາດແຄນຊັບ ສົງໃຫ້ເສຂະສົມມຸດແກ່ຕະກູນຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ເສຂະສົມມຸດແກ່ຕະກູນຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເພິ່ງທັກທ້ວງ

ເສຂະສົມມຸດສົງໃຫ້ແກ່ຕະກູນນີ້ແລ້ວ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິຢ່າງນີ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍພິກຂຸໃດຮັບຂອງຫຍໍ້າ ຫຼື ຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະເຊັ່ນນັ້ນ ດ້ວຍມືຕົນເອງ ແລ້ວຫຍໍ້າ ຫຼື ສັນ ພິກຂຸນັ້ນເພິ່ງສະແດງຄືນວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງຕະກູນໜຶ່ງ ຈົບ

## ເລື້ອງພິກຂຸຫຼາຍອົງ

[໕໖໔] ສະໄໝນັ້ນ ມີມະໂຫລະສົບໃນນະຄອນສາວັດຖີ ຄົນທັງຫຼາຍນິມົນພິກຂຸໄປສັນ ແມ່ນຕະກູນນັ້ນກໍໄດ້ນິມົນພິກຂຸເຊັ່ນກັນ ພິກຂຸທັງຫຼາຍມີຄວາມຢຳເກງ ຈຶ່ງບໍ່ຮັບນິມົນດ້ວຍຄິດວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມການຮັບຂອງຫຍໍ້າຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະດ້ວຍມືຂອງຕົນແລ້ວສັນ

ຄົນເຫຼົ່ານັ້ນຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ພວກເຮົາຈະມີຊີວິດຢູ່ໄປເຮັດຫຍັງ ຍ້ອນຄູບາທັງຫຼາຍບໍ່ຮັບນິມົນຂອງພວກເຮົາ

ພວກພິກຂຸໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ເມື່ອແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທີ່ທາຍົກນິມົນແລ້ວຮັບຂອງຫຍໍ້າຫຼືຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະດ້ວຍມືຕົນເອງແລ້ວຫຍໍ້າສັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸໃດ ບໍ່ໄດ້ຮັບນິມົນໄວ້ກ່ອນ ຮັບຂອງຫຍ້ຳ ຫຼື ຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະເຊັ່ນນັ້ນ ດ້ວຍມືຕົນເອງແລ້ວຫຍ້ຳຫຼືສັນ ພິກຂຸນັ້ນເພິ່ງສະແດງຄືນວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພິກຂຸຫຼາຍອົງ ຈົບ

## ເລື້ອງພິກຂຸອົງໜຶ່ງ

[໕໙໕] ສະໄໝນັ້ນ ພິກຂຸອົງໜຶ່ງເປັນພຣະປະຈຳຕະກູນຂອງຕະກູນນັ້ນ ເມື່ອເວລາເຊົ້າທ່ານຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປເຖິງຕະກູນນັ້ນ ເມື່ອເຖິງແລ້ວຈຶ່ງນັ່ງເທິງອາສະນະທີ່ເຂົາຈັດຖວາຍ ບັດນັ້ນ ພິກຂຸນັ້ນເປັນໄຂ້ ພວກຊາວບ້ານໄດ້ກ່າວອາຣາດທະນາພິກຂຸນັ້ນ ດັ່ງນີ້ວ່າ "ຄູບາ ນິມົນທ່ານສັນເທີ້ນ"

ຄັ້ງນັ້ນ ພິກຂຸນັ້ນມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງຫ້າມພິກຂຸທີ່ທາຍົກບໍ່ໄດ້ນິມົນໄວ້ກ່ອນຮັບຂອງຫຍ້ຳຂອງສັນໃນຕະກູນທີ່ໄດ້ສົມມຸດເປັນເສຂະ" ຈຶ່ງບໍ່ຮັບ ພິກຂຸນັ້ນບໍ່ສາມາດຫາບິນທະບາດສັນໄດ້ທັນ ຈຶ່ງບໍ່ໄດ້ສັນພັດຕາຫານ ເມື່ອໄປວັດຈຶ່ງບອກ ເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ຮັບຂອງຫຍ້ຳ ຫຼື ຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະດ້ວຍມືຕົນເອງແລ້ວຫຍ້ຳສັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໙໖] ອັນໜຶ່ງ ພິກຂຸໃດບໍ່ໄດ້ຮັບນິມົນໄວ້ກ່ອນ ບໍ່ເປັນໄຂ້ ຮັບຂອງຫຍ້ຳ ຫຼື ຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະເຊັ່ນນັ້ນດ້ວຍມືຕົນເອງແລ້ວຫຍ້ຳຫຼືສັນ ພິກຂຸນັ້ນເພິ່ງສະແດງຄືນວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ

### ເລື້ອງພິກຂຸອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໕໙໑] ຄຳວ່າ ຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ຄວາມວ່າ ຕະກູນທີ່ຊື່ວ່າອັນສົງສົມມຸດວ່າເປັນເສຂະ ໄດ້ແກ່ ຕະກູນມີສັດທາແຕ່ຂາດແຄນຊັບ ສົງຍ່ອມໃຫ້ສົມມຸດຕະກູນເຊັ່ນນີ້ເປັນເສຂະດ້ວຍຍັດຕິທຸຕິຍະກຳ

ຄຳວ່າ ອັນໜຶ່ງໆລໆໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງໆລໆໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະເຊັ່ນນັ້ນ ຄື ໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະເຊັ່ນນີ້

ທີ່ຊື່ວ່າ ບໍ່ໄດ້ຮັບນິມົນໄວ້ ຄື ພິກຂຸທີ່ເຂົາບໍ່ໄດ້ນິມົນເພື່ອສັນໃນວັນນີ້ ຫຼື ມື້ອື່ນ ແຕ່ເຂົານິມົນເມື່ອພິກຂຸຍ່າງຜ່ານອຸປະຈານເຮືອນເຂົ້າໄປແລ້ວ ນີ້ຊື່ວ່າບໍ່ໄດ້ຮັບນິມົນໄວ້

ທີ່ຊື່ວ່າ ໄດ້ຮັບນິມົນ ຄື ພິກຂຸທີ່ເຂົານິມົນເພື່ອສັນໃນວັນນີ້ ຫຼື ມື້ອື່ນ ຄື ເຂົານິມົນຂະນະທີ່ພິກຂຸຍັງບໍ່ໄດ້ຍ່າງຜ່ານອຸປະຈານເຂົ້າໄປ ນີ້ຊື່ວ່າ ໄດ້ຮັບນິມົນໄວ້

ທີ່ຊື່ວ່າ ບໍ່ເປັນໄຂ້ ຄື ພິກຂຸທີ່ສາມາດໄປບິນທະບາດໄດ້

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍໍ້າ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຕູ ປາ ຊີ້ນ

ພິກຂຸບໍ່ໄດ້ຮັບນິມົນໄວ້ ບໍ່ເປັນໄຂ້ ຮັບໄວ້ດ້ວຍຄິດວ່າ “ຈະຫຍໍ້າ ຈະສັນ” ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປະຕິເທສະນີຍະທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປະຕິເທສະນີຍະ

[໕໙໒] ຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸສຳຄັນວ່າເປັນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ບໍ່ໄດ້ຮັບນິມົນໄວ້ ບໍ່ເປັນໄຂ້ ຮັບຂອງຫຍໍ້າ ຫຼື ຂອງສັນດ້ວຍມືຕົນເອງແລ້ວຫຍໍ້າ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸບໍ່ແນໃຈ ບໍ່ໄດ້ຮັບນິມົນໄວ້ ບໍ່ເປັນໄຂ້ ຮັບຂອງຫຍໍ້າ ຫຼື ຂອງສັນດ້ວຍມືຕົນເອງແລ້ວຫຍໍ້າ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸສຳຄັນວ່າບໍ່ແມ່ນຕະກູນທີ່ໄດ້ຮັບສົມມຸດເປັນເສຂະບໍ່ໄດ້ຮັບນິມົນ ບໍ່ເປັນໄຂ້ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງແລ້ວຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

**ທຸກກົດ**

ພິກຂຸຮັບຂອງທີ່ເປັນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ເພື່ອເປັນອາຫານ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ບໍ່ແມ່ນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸສຳຄັນວ່າເປັນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ຕ້ອງອາບັດທຸກກົດ

ບໍ່ແມ່ນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ພິກຂຸສຳຄັນວ່າບໍ່ແມ່ນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໖໙] ໑. ພິກຂຸຮັບນິມົນໄວ້

໒. ພິກຂຸຜູ້ເປັນໄຂ້

໓. ພິກຂຸສັນຂອງເປັນເງື່ອນຂອງພິກຂຸຜູ້ຮັບນິມົນໄວ້ ຫຼື ຂອງພິກຂຸຜູ້ເປັນໄຂ້

໔. ພິກຂຸສັນອາຫານທີ່ເຂົາຈັດໄວ້ເພື່ອພິກຂຸອື່ນ ໆ

໕. ພິກຂຸສັນອາຫານທີ່ເຂົານຳຈາກເຮືອນໄປຖວາຍ

໖. ພິກຂຸສັນນິຕະຍະພັດ

໗. ພິກຂຸສັນສະລາກະພັດ

໘. ພິກຂຸສັນປັກຂິກະພັດ

໙. ພິກຂຸສັນອຸໂປສະຖິກະພັດ

໑໐. ພິກຂຸສັນປາຕິປະທິກະພັດ

໑໑. ພິກຂຸສັນຍາມະກາລິກ ສັດຕາຫະກາລິກ ຫຼື ຍາວະຊີວິກ ທີ່ເຂົາຖວາຍບອກວ່າເມື່ອມີເຫດຈຳເປັນກໍນິມົນສັນເທີ້ນ

໑໒. ພິກຂຸວິກົນຈະລິດ

໑໓. ພິກຂຸຕົ້ນບັນຍັດ

**ປະຕິເທສະນີຍະສິກຂາບົດທີ ໓ ຈົບ**

# ໔. ຈະຕຸດຖະປະຕິເທສະນີຍະສິກຂາບົດ

## ວ່າດ້ວຍການຮັບຂອງຫຍໍ້າຂອງສັນຈາກທາຍົກທີ່ບໍ່ໄດ້ແຈ້ງໄວ້ກ່ອນ

## ເລື່ອງຄືນຮັບໃຊ້ຂອງເຈົ້າສາກະຍະ

[໕໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ພວກຂ້າທາດຂອງເຈົ້າສາກະຍະກໍ່ການຮ້າຍ ພວກເຈົ້າຍິງສາກະຍະປາຖະໜາຈະຈັດພັດຕາຫານໄວ້ຖວາຍພິກຂຸຜູ້ຢູ່ໃນເສນາສະນະປ່າ ພວກຂ້າທາດຂອງເຈົ້າສາກະຍະໄດ້ຟັງຂ່າວວ່າ ພວກເຈົ້າຍິງສາກະຍະປາຖະໜາຈະຈັດພັດຕາຫານໄວ້ຖວາຍພິກຂຸຜູ້ຢູ່ໃນເສນາສະນະປ່າ ຈຶ່ງໄປດັກຊຸ່ມທີ່ຫົນທາງ ພວກເຈົ້າຍິງສາກະຍະນຳຂອງຫຍໍ້າຂອງສັນອັນປະນີດໄປສູ່ເສນາສະນະປ່າ ພວກຂ້າທາດຂອງເຈົ້າສາກະຍະ ຈຶ່ງອອກມາປຸ້ນ ແລະ ທຳຮ້າຍເຈົ້າຍິງສາກະຍະ

ພວກເຈົ້າສາກະຍະອອກໄປຈັບພວກໂຈນໄດ້ພ້ອມຂອງກາງແລ້ວຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ຄູບາທັງຫຼາຍ ຈຶ່ງບໍ່ບອກວ່າມີພວກໂຈນຢູ່ໃນອາຮາມນໍ"

ພິກຂຸທັງຫຼາຍ ໄດ້ຍິນພວກເຈົ້າສາກະຍະຕຳໜິ ປະນາມ ໂພນທະນາ ເມື່ອແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
ฯลฯ
໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸໃດ ຢູ່ໃນເສນາສະນະປ່າທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານເຊັ່ນນັ້ນ ບໍ່ໄດ້ຮັບແຈ້ງໄວ້ກ່ອນ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງໃນອາຮາມແລ້ວສັນ ພິກຂຸນັ້ນເພິ່ງສະແດງຄືນວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ"

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງຄົນຮັບໃຊ້ຂອງເຈົ້າສາກະຍະ ຈົບ

## ເລື້ອງພິກຂຸຜູ້ເປັນໄຂ້

[໕໗໑] ສະໄໝນັ້ນ ພິກຂຸອົງໜຶ່ງຜູ້ເປັນໄຂ້ຢູ່ໃນເສນາສະນະປ່າ ພວກຊາວບ້ານນຳ ຂອງຫຍ້ຳຂອງສັນໄປຖວາຍ ເມື່ອແລ້ວໄດ້ກ່າວອາຣາດທະນາພິກຂຸນັ້ນດັ່ງນີ້ວ່າ "ນິມົນສັນເທີ້ນ ຂ້ານ້ອຍ" ບັດນັ້ນ ພິກຂຸນັ້ນ ມີຄວາມຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມການຮັບຂອງຫຍ້ຳຂອງສັນໃນເສນາສະນະປ່າດ້ວຍມືຕົນເອງແລ້ວຫຍ້ຳສັນ" ຈຶ່ງບໍ່ຍອມຮັບ ທ່ານບໍ່ສາມາດທ່ຽວບິນທະບາດໄດ້ທັນ ຈຶ່ງບໍ່ໄດ້ສັນພັດຕາຫານ ທ່ານໄດ້ແຈ້ງເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ເມື່ອແລ້ວພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ພຣະພຸດທານຸຍາດພິເສດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ຮັບຂອງຫຍ້ຳຂອງສັນໃນເສນາສະນະປ່າດ້ວຍມືຕົນເອງແລ້ວຫຍ້ຳສັນໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໗໔] ອັນໜຶ່ງ ພິກຂຸໃດ ບໍ່ເປັນໄຂ້ຢູ່ໃນເສນາສະນະປ່າທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານເຊັ່ນນັ້ນ ບໍ່ໄດ້ຮັບແຈ້ງໄວ້ກ່ອນຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງ ໃນອາຮາມແລ້ວສັນ ພິກຂຸນັ້ນ ເພິ່ງສະແດງຄືນວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ ໜ້າຕຳໜິ ບໍ່ເປັນສັບປາຍະ ຂ້າພະເຈົ້າຂໍສະແດງຄືນທຳນັ້ນ

### ເລື້ອງພິກຂຸຜູ້ເປັນໄຂ້ ຈົບ

## ສິກຂາບົດວິພັງ

[໕໗໘] ຄຳວ່າ ເສນາສະນະປ່າ ຄວາມວ່າ ເສນາສະນະທີ່ຊື່ວ່າປ່າ ໄດ້ແກ່ ເສນາສະນະມີໄລຍະ ໕໐໐ ລູກທະນູເປັນຢ່າງຕ່ຳ

ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນອາຣາມ ອຸປະຈານແຫ່ງອາຣາມ ຜາກົດທີ່ຢູ່ ຜາກົດທີ່ກິນ ຜາກົດທີ່ຢືນ ຜາກົດທີ່ນັ່ງ ຜາກົດທີ່ນອນຂອງພວກໂຈນ

ທີ່ຊື່ວ່າ ມີໄພເປັນຕາຢ້ານ ຄື ໃນອາຣາມ ອຸປະຈານແຫ່ງອາຣາມ ຜາກົດມີມະນຸດຖືກພວກໂຈນຂ້າ ຜາກົດມີມະນຸດຖືກພວກໂຈນປຸ້ນ ຜາກົດມີມະນຸດຖືກພວກໂຈນທຸບຕີ

ຄຳວ່າ ກໍຯລຯໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍຯລຯ ໃດ

ຄຳວ່າ ພິກຂຸ ມີອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸ ໃນຄວາມໝາຍນີ້

ຄຳວ່າ ໃນເສນາສະນະເຊັ່ນນັ້ນ ຄື ເສນາສະນະເຊັ່ນນີ້

ທີ່ຊື່ວ່າ ບໍ່ໄດ້ຮັບແຈ້ງໄວ້ກ່ອນ ຄື ເຖິງຈະແຈ້ງແກ່ສະຫະທຳມິກທັງ ໕ ນີ້ຊື່ວ່າບໍ່ໄດ້ຮັບແຈ້ງໄວ້

ແຈ້ງ (ໃນທີ່ອື່ນ) ເວັ້ນອາຣາມ ອຸປະຈານແຫ່ງອາຣາມ ນີ້ກໍຊື່ວ່າບໍ່ໄດ້ຮັບແຈ້ງໄວ້

ທີ່ຊື່ວ່າ ຮັບແຈ້ງໄວ້ ຄື ຜູ້ໃດຜູ້ໜຶ່ງຈະເປັນຍິງຫຼືຊາຍກໍຕາມ ມາທີ່ອາຣາມ ຫຼື ອຸປະຈານແຫ່ງອາຣາມແລ້ວບອກວ່າ “ຄູບາ ທາຍົກທາຍິກາຈະນຳຂອງຫຍ້ຳ ຫຼື ຂອງສັນມາຖວາຍພິກຂຸຊື່ນີ້”

ຖ້າທີ່ນັ້ນໜ້າຫວາດຣະແວງ ພິກຂຸເພິ່ງບອກວ່າ “ໜ້າຫວາດຣະແວງ” ຖ້າທີ່ນັ້ນມີໄພເປັນຕາຢ້ານ ພິກຂຸເພິ່ງບອກວ່າ “ມີໄພເປັນຕາຢ້ານ”

ຖ້າເຂົາບອກວ່າ “ບໍ່ເປັນຫຍັງ ຂ້ານ້ອຍ ເຂົາຈັກນຳມາເອງ” ພິກຂຸຕ້ອງບອກພວກໂຈນວ່າ “ພວກຊາວບ້ານຈະເຂົ້າມາທີ່ນີ້ ພວກທ່ານຈົ່ງຫຼີບໄປ”

ເມື່ອພິກຂຸໄດ້ຮັບແຈ້ງດ້ວຍເຂົ້າຕົ້ມແລ້ວ ເຂົານຳເຄື່ອງບໍລິວານເຂົ້າຕົ້ມນັ້ນມາດ້ວຍນີ້ຊື່ວ່າໄດ້ຮັບແຈ້ງໄວ້

ເມື່ອພິກຂຸໄດ້ຮັບແຈ້ງດ້ວຍພັດຕາຫານແລ້ວ ເຂົານຳເຄື່ອງບໍລິວານພັດຕາຫານນັ້ນມາດ້ວຍນີ້ກໍຊື່ວ່າໄດ້ຮັບແຈ້ງໄວ້

ເມື່ອພິກຂຸໄດ້ຮັບແຈ້ງດ້ວຍຂອງຫຍ້ຳແລ້ວ ເຂົານຳເຄື່ອງບໍລິວານຂອງຫຍ້ຳນັ້ນມາດ້ວຍນີ້ກໍຊື່ວ່າໄດ້ຮັບແຈ້ງໄວ້

ເມື່ອພິກຂຸໄດ້ຮັບແຈ້ງສະເພາະຕະກູນ ພວກຄົນໃນຕະກູນນັ້ນນຳຂອງຫຍ້ຳຂອງສັນມາຖວາຍ ນີ້ກໍຊື່ວ່າໄດ້ຮັບແຈ້ງໄວ້

ເມື່ອພິກຂຸໄດ້ຮັບແຈ້ງສະເພາະໝູ່ບ້ານ ພວກຄົນໃນໝູ່ບ້ານນັ້ນນຳຂອງຫຍ້ຳຂອງສັນມາຖວາຍ ນີ້ກໍຊື່ວ່າໄດ້ຮັບແຈ້ງໄວ້

ເມື່ອພິກຂຸໄດ້ຮັບແຈ້ງສະເພາະສະມາຄົມ ພວກຄົນໃນສະມາຄົມນັ້ນນຳຂອງຫຍ້ຳຂອງສັນມາຖວາຍ ນີ້ກໍຊື່ວ່າໄດ້ຮັບແຈ້ງໄວ້

ທີ່ຊື່ວ່າ ຂອງຫຍ້ຳ ຄື ຍົກເວັ້ນໂພຊະນະ ໕ ຍາມະກາລິກ ສັດຕາຫະກາລິກ ແລະຍາວະຊີວິກ ນອກນັ້ນຊື່ວ່າຂອງຫຍ້ຳ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຕູ ປາ ຊີ້ນ

ທີ່ຊື່ວ່າ ໃນອາຣາມ ໄດ້ແກ່ ສຳລັບອາຣາມທີ່ມີຮົ້ວລ້ອມ ກຳນົດເອົາພາຍໃນອາຣາມ ສຳລັບອາຣາມທີ່ບໍ່ມີຮົ້ວລ້ອມ ກຳນົດເອົາອຸປະຈານອາຣາມ

ທີ່ຊື່ວ່າ ບໍ່ເປັນໄຂ້ ຄື ພິກຂຸຜູ້ສາມາດໄປບິນທະບາດສັນໄດ້

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ພິກຂຸຜູ້ບໍ່ສາມາດໄປບິນທະບາດໄດ້

ພິກຂຸບໍ່ເປັນໄຂ້ບໍ່ໄດ້ຮັບແຈ້ງ ຮັບປະເຄນດ້ວຍຕັ້ງໃຈ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປະຕິເທສະນີຍະທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປະຕິເທສະນີຍະ

[໕໗໔] ບໍ່ໄດ້ຮັບແຈ້ງໄວ້ ພິກຂຸສຳຄັນວ່າບໍ່ໄດ້ຮັບແຈ້ງໄວ້ ບໍ່ເປັນໄຂ້ ຮັບຂອງຫຍ້ຳ ຫຼືຂອງສັນດ້ວຍມືຕົນເອງໃນອາຣາມ ຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ໄດ້ຮັບແຈ້ງໄວ້ ພິກຂຸບໍ່ແນ່ໃຈ ບໍ່ເປັນໄຂ້ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງໃນອາຣາມ ຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ໄດ້ຮັບແຈ້ງໄວ້ ພິກຂຸສຳຄັນວ່າບໍ່ໄດ້ຮັບແຈ້ງໄວ້ ບໍ່ເປັນໄຂ້ ຮັບຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນເອງໃນອາຣາມ ຫຍ້ຳ ຫຼື ສັນ ຕ້ອງອາບັດປະຕິເທສະນີຍະ

### ທຸກກົດ

ພິກຂຸຮັບປະເຄນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ເພື່ອເປັນອາຫານ ຕ້ອງອາບັດ ທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ

ໄດ້ຮັບແຈ້ງໄວ້ແລ້ວ ພິກຂຸສຳຄັນວ່າບໍ່ໄດ້ຮັບແຈ້ງໄວ້ ຕ້ອງອາບັດທຸກກົດ

ໄດ້ຮັບແຈ້ງໄວ້ແລ້ວ ພິກຂຸບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ໄດ້ຮັບແຈ້ງໄວ້ແລ້ວ ພິກຂຸສຳຄັນວ່າໄດ້ຮັບແຈ້ງໄວ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໗໕] ໑. ພິກຂຸທີ່ໄດ້ຮັບແຈ້ງໄວ້ກ່ອນ
໒. ພິກຂຸຜູ້ເປັນໄຂ້
໓. ພິກຂຸທີ່ໄດ້ຮັບແຈ້ງໄວ້ ຫຼື ພິກຂຸສັນຂອງເປັນເງື່ອນ ຂອງພິກຂຸຜູ້ເປັນໄຂ້
໔. ພິກຂຸຮັບຂອງນອກອາຮາມມາສັນໃນອາຮາມ
໕. ພິກຂຸສັນຮາກໄມ້ ເປືອກໄມ້ ໃບໄມ້ ດອກໄມ້ ຫຼື ໝາກໄມ້ທີ່ເກີດໃນທີ່ນັ້ນ
໖. ພິກຂຸສັນຂອງເປັນຍາມະກາລິກ ສັດຕາຫະກາລິກ ແລະ ຍາວະຊີວິກ ເມື່ອມີເຫດຈຳເປັນ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ປະຕິເທສະນີຍະສິກຂາບົດທີ ໔ ຈົບ**

## ບົດສະຫຼຸບ

ທ່ານທັງຫຼາຍ ທຳຄືປະຕິເທສະນີຍະ ໔ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍ ໃນທຳຄືປະຕິເທສະນີຍະ ໔ ສິກຂາບົດເຫຼົ່ານັ້ນວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?

ທ່ານທັງຫຼາຍບໍລິສຸດແລ້ວ ໃນທຳຄືປະຕິເທສະນີຍະ ໔ ສິກຂາບົດນີ້ ດັ່ງນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ປະຕິເທສະນີຍະກັນ ຈົບ**

# ໗. ເສຂິຍະກັນ

ທ່ານທັງຫຼາຍ ທຳຄືເສຂິຍະທັງຫຼາຍເຫຼົ່ານີ້ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບດັ່ງນີ້

## ໑. ປະຣິມັນທະລະວັກ

## ໝວດວ່າດ້ວຍການນຸ່ງຫົ່ມຮຽບຮ້ອຍ

### ສິກຂາບົດທີ ໑

### ເລື້ອງພຣະສັບພັກຄີ

[໕໗໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ເໝືອນພວກຄະລຶຫັດຜູ້ບໍຣິໂພກການແນວນີ້ນໍ

ພິກຂຸທັງຫຼາຍ ໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງໃຫ້ປະຊຸມສົງ ຕັດຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກຄອງອັນຕະຣະວາສົກໃຫ້ຮຽບຮ້ອຍ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງຄອງອັນຕະຣະວາສົກໃຫ້ຮຽບຮ້ອຍ ຄືປົດບໍລິເວນສາຍບື ບໍລິເວນເຂົ່າ

ພິກຂຸໃດບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

## ສິກຂາບົດທີ ໒

## ເລື້ອງພຣະສັບພັກຄີ

[໕໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຄອງອຸດຕະຣາສົງຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ຯລຯ

## ພຣະບັນຍັດ

໒. ເພິ່ງໃສ່ໃຈວ່າ ເຮົາຈັກຄອງອຸດຕະຣາສົງໃຫ້ຮຽບຮ້ອຍ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງຄອງອຸດຕະຣາສົງໃຫ້ຮຽບຮ້ອຍ ຄື ເຮັດຊາຍຜ້າຈີວອນທັງສອງໃຫ້ສະເໝີກັນ

ພິກຂຸໃດບໍ່ເອື້ອເຟື້ອ ຄອງອຸດຕະຣາສົງ ຍ້ອຍຂ້າງໜ້າແດ່ ຍ້ອຍຂ້າງຫຼັງແດ່ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໔ ຈົບ

## ສິກຂາບົດທີ ໒

## ເລື້ອງພຣະສັບພັກຄີ

[໕໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງເປີດກາຍໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໒. ເພິ່ງໃສ່ໃຈວ່າ ເຮົາຈັກປົກປິດກາຍໃຫ້ດີ ໄປໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸເພິ່ງປົກປິດກາຍໃຫ້ດີ ໄປໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ຍ່າງເປີດກາຍໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໒ ຈົບ**

## ສິກຂາບົດທີ ໔
## ເລື້ອງພຣະສັບພັກຄີ

[໕໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງເປີດກາຍໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກປົກປິດກາຍໃຫ້ດີ ນັ່ງໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງປົກປິດກາຍໃຫ້ດີນັ່ງໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງເປີດກາຍໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຢູ່ໃນທີ່ພັກ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

## ສິກຂາບົດທີ ໕
## ເລື້ອງພຣະສັບພັກຄີ

[໕໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງຄະນອງມືແດ່ ຄະນອງຕີນແດ່ ໄປໃນບໍລິເວນບ້ານ ຯລຯ

### ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກສັງລວມດ້ວຍດີ ໄປໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

### ສິກຂາບົດວິພັງ

ພິກຂຸເພິ່ງສໍາລວມດ້ວຍດີ ໄປໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ຄະນອງມືແດ່ ຄະນອງຕີນແດ່ ໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໕ ຈົບ

## ສິກຂາບົດທີ ໖
## ເລື້ອງພຣະສັບພັກຄີ

[໕໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຄະນອງມືແດ່ ຄະນອງຕີນແດ່ ນັ່ງໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກສຳລວມດ້ວຍດີ ນັ່ງໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງສຳລວມດ້ວຍດີ ນັ່ງໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ຄະນອງມືແດ່ ຄະນອງຕີນແດ່ ນັ່ງໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໘. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໖ ຈົບ**

## ສິກຂາບົດທີ ໗

## ເລື້ອງພຣະສັບພັກຄີ

[໕໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງແນມເບິ່ງທີ່ນັ້ນ ໆ ໄປໃນບໍລິເວນບ້ານ ฯລฯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກທອດສາຍຕາລົງຕ່ຳ ໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງທອດສາຍຕາລົງຕ່ຳ ແນມເບິ່ງຊົ່ວແອກ ໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຍ່າງແນມເບິ່ງທີ່ນັ້ນ ໆ ໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘
## ເລື້ອງພຣະສັບພັກຄີ

[໕໘໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງແນມເບິ່ງທີ່ນັ້ນ ໆ ໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກມີສາຍຕາທອດລົງຕ່ຳ ນັ່ງໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງມີສາຍຕາທອດລົງຕ່ຳ ແນມເບິ່ງຊົ່ວແອກ ນັ່ງໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງແນມເບິ່ງທີ່ນັ້ນ ໆ ໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໓. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໒. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘

# ເລື້ອງພຣະສັບພັກຄີ

[໕໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງຈ້ອນຜ້າໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຈ້ອນຜ້າ ໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຈ້ອນຜ້າ ໄປໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ຈ້ອນຜ້າຂຶ້ນຂ້າງດຽວ ຫຼື ທັງສອງຂ້າງ ໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໓. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໒. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໑໐

### ເລື້ອງພຣະສັບພັກຄີ

[໕໗໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງຈ້ອນຜ້າໃນບໍລິເວນບ້ານ ຯລຯ

### ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງຈ້ອນຜ້າໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງເວີກຜ້າໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ນັ່ງເວີກຜ້າຂຶ້ນຂ້າງດຽວ ຫຼື ທັງສອງຂ້າງໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໔. ພິກຂຸວິກົນຈະລິດ
໕. ພິກຂຸບໍ່ມີສະຕິ
໖. ພິກຂຸຜູ້ເປັນໄຂ້
໗. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ປະຣິມັນທະລະວັກທີ ໑ ຈົບ

# ໔. ອຸດຊັກຄິກະວັກ

## ໝວດວ່າດ້ວຍການຫົວຂວນ

### ສິກຂາບົດທີ ໑

### ເລື້ອງພຣະສັບພັກຄີ

[໕໗໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຫົວສຽງດັງໄປໃນບໍລິເວນບ້ານ ຯລຯ

### ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຫົວສຽງດັງ ໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

### ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຫົວສຽງດັງ ໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຫົວສຽງດັງ ໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

**ອະນາປັດຕິວານ**

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸພຽງແຕ່ຍິ້ມ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໕໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງຫົວສຽງດັງໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງຫົວສຽງດັງໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງຫົວສຽງດັງໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງຫົວສຽງດັງໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸພຽງແຕ່ຍິ້ມ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໔ ຈົບ

# ສິກຂາບົດທີ ໓

## ເລື້ອງພຣະສັບພັກຄີ

[໕໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮ້ອງສຽງດັງໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໓. ເພິ່ງໃສ່ໃຈວ່າ ເຮົາຈັກເວົ້າສຽງຄ່ອຍ ໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງເວົ້າສຽງຄ່ອຍໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຮ້ອງສຽງດັງໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໓. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໒. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໓ ຈົບ**

## ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໕໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງຮ້ອງສຽງດັງໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກນັ່ງເວົ້າສຽງຄ່ອຍໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງນັ່ງເວົ້າສຽງຄ່ອຍໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງຮ້ອງສຽງດັ່ງໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໓. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໔ ຈົບ**

## ສິກຂາບົດທີ ໕

## ເລື້ອງພຣະສັບພັກຄີ

[໕໙໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງໂຫຍກກາຍໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງໂຫຍກກາຍໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຍ່າງໂຫຍກກາຍໄປ ເພິ່ງຍ່າງປະຄອງກາຍໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຍ່າງໂຫຍກກາຍໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໕ ຈົບ**

## ສິກຂາບົດທີ ໖

## ເລື້ອງພຣະສັບພັກຄີ

[໕໗໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງໂຫຍກກາຍໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງໂຫຍກກາຍໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງໂຫຍກກາຍ ເພິ່ງນັ່ງປະຄອງກາຍ ໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງໂຫຍກກາຍໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

## ສິກຂາບົດທີ ໗

## ເລື້ອງພຣະສັບພັກຄີ

[໕໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງແກວ່ງແຂນຫ້ອຍແຂນໄປໃນບໍລິເວນບ້ານ ຯລຯ

### ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງແກວ່ງແຂນໄປໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງແກວ່ງແຂນໄປ ເພິ່ງຍ່າງປະຄອງແຂນ ໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ແກວ່ງແຂນ ຍ່າງຫ້ອຍແຂນໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໗ ຈົບ

## ສິກຂາບົດທີ ໘

### ເລື້ອງພຣະສັບພັກຄີ

[໕໙໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງແກວ່ງແຂນຫ້ອຍແຂນໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງແກວ່ງແຂນໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງແກວ່ງແຂນ ເພິ່ງນັ່ງປະຄອງແຂນໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງແກວ່ງແຂນຫ້ອຍແຂນໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

| | |
|---|---|
| ໑. ພິກຂຸບໍ່ຈົງໃຈ | ໔. ພິກຂຸບໍ່ມີສະຕິ |
| ໓. ພິກຂຸຜູ້ບໍ່ຮູ້ | ໔. ພິກຂຸຜູ້ເປັນໄຂ້ |
| ໕. ພິກຂຸຢູ່ໃນທີ່ພັກ | ໖. ພິກຂຸຜູ້ມີເຫດຂັດຂ້ອງ |
| ໗. ພິກຂຸວິກົນຈະລິດ | ໘. ພິກຂຸຕົ້ນບັນຍັດ |

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘

## ເລື້ອງພຣະສັບພັກຄີ

[໕໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງໂຫຍກຫົວເຮັດຄໍພັບໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງໂຫຍກຫົວໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຍ່າງໂຫຍກຫົວໄປ ເພິ່ງຍ່າງປະຄອງຫົວ ໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຍ່າງໂຫຍກຫົວເຮັດຄໍພັບໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໙ ຈົບ**

## ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[៥៧៥] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງໂຫຍກຫົວເຮັດຄໍພັບໃນບໍລິເວນບ້ານ ฯລฯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງໂຫຍກຫົວໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງໂຫຍກຫົວ ເພິ່ງນັ່ງປະຄອງຫົວໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງໂຫຍກຫົວເຮັດຄໍພັບໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ອຸດຊັກຄິກະວັກທີ ໔ ຈົບ**

# ໒. ຂຳພະຕະກະວັກ

# ໝວດວ່າດ້ວຍການຄ້ຳແອວ

## ສິກຂາບົດທີ ໑

## ເລື້ອງພຣະສັບພັກຄີ

[໕໒໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງສ່າຍແອວໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງສ່າຍແອວໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຍ່າງສ່າຍແອວໄປໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ຍ່າງສ່າຍແອວຂ້າງດຽວ ຫຼື ສອງຂ້າງໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໑ ຈົບ**

## ສິກຂາບົດທີ ໔
## ເລື້ອງພຣະສັບພັກຄີ

[໕໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງຄ້ຳແອວໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງຄ້ຳແອວໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງຄ້ຳແອວໃນບໍລິເວນບ້ານ

ພິກຂຸໃດບໍ່ເອື້ອເຟື້ອ ນັ່ງຄ້ຳແອວຂ້າງດຽວ ຫຼື ສອງຂ້າງໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

## ສິກຂາບົດທີ ໓

## ເລື້ອງພຣະສັບພັກຄີ

[໕໙໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງຄຸມຫົວໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໓. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງຄຸມຫົວໄປໃນບໍລິເວນບ້ານ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຍ່າງຄຸມຫົວໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຍ່າງຄຸມຫົວໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໓ ຈົບ

## ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໕໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງຄຸມຫົວ ໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງຄຸມຫົວໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງຄຸມຫົວໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງຄຸມຫົວໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

| | |
|---|---|
| ໑. ພິກຂຸບໍ່ຈົງໃຈ | ໔. ພິກຂຸບໍ່ມີສະຕິ |
| ໓. ພິກຂຸຜູ້ບໍ່ຮູ້ | ໔. ພິກຂຸຜູ້ເປັນໄຂ້ |
| ໕. ພິກຂຸຢູ່ໃນທີ່ພັກ | ໖. ພິກຂຸຜູ້ມີເຫດຂັດຂ້ອງ |
| ໗. ພິກຂຸວິກົນຈະລິດ | ໘. ພິກຂຸຕົ້ນບັນຍັດ |

**ສິກຂາບົດທີ ໔ ຈົບ**

## ສິກຂາບົດທີ ໕

## ເລື້ອງພຣະສັບພັກຄີ

[໖໐໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໔. ພິກຂຸວິກົນຈະລິດ
໕. ພິກຂຸບໍ່ມີສະຕິ
໖. ພິກຂຸຜູ້ເປັນໄຂ້
໗. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

## ສິກຂາບົດທີ ໖

## ເລື້ອງພຣະສັບພັກຄີ

[໖໐໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງກອດເຂົ່າໃນບໍລິເວນບ້ານ ຯລຯ

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ນັ່ງກອດເຂົ່າໃນບໍລິເວນບ້ານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງນັ່ງກອດເຂົ່າໃນບໍລິເວນບ້ານ
ພິກຂຸໃດບໍ່ເອື້ອເຟື້ອ ນັ່ງກອດເຂົ່າດ້ວຍມື ຫຼືດ້ວຍຜ້າໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຢູ່ໃນທີ່ພັກ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

## ສິກຂາບົດທີ ໗
## ເລື້ອງພຣະສັບພັກຄີ

[໖໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮັບບິນທະບາດໂດຍບໍ່ໃຫ້ຄວາມສຳຄັນ ທຳທ່າເໝືອນຈະຖິ້ມ ฯລฯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກຮັບບິນທະບາດໂດຍເຄົາລົບ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງຮັບບິນທະບາດໂດຍເຄົາລົບ

ພິກຂຸໃດບໍ່ເອື້ອເຟື້ອ ຮັບບິນທະບາດໂດຍບໍ່ເຄົາລົບ ເຮັດເໝືອນຈະຖິ້ມ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້

໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘

## ເລື້ອງພຣະສັບພັກຄີ

[໖໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮັບບິນທະບາດແນມເບິ່ງໄປທົ່ວທິບ ເມື່ອເຂົາກຳລັງໃສ່ແດ່ ໃສ່ສຳເລັດແລ້ວແດ່ ກໍຍັງບໍ່ຮູ້ສຶກຕົວ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກແນມແຕ່ໃນບາດຂະນະຮັບບິນທະບາດ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸເພິ່ງໃຫ້ຄວາມສຳຄັນໃນບາດຂະນະຮັບບິນທະບາດ
ພິກຂຸໃດບໍ່ເອື້ອເຟື້ອ ຮັບບິນທະບາດແນມເບິ່ງໄປທົ່ວທິບ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ ໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໙

## ເລື້ອງພຣະສັບພັກຄີ

[໖໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີ ເມື່ອຮັບບິນທະບາດ ຮັບເອົາແຕ່ແກງເທົ່ານັ້ນ ຯລຯ

## ພຣະບັນຍັດ

໙. ເພິ່ງໃສ່ໃຈວ່າ ເຮົາຈັກຮັບບິນທະບາດພໍດີກັບແກງ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ທີ່ຊື່ວ່າ ແກງ ໄດ້ແກ່ແກງ ໒ ຊະນິດ ຄື (໑) ແກງຖົ່ວຂຽວ (໒) ແກງຖົ່ວເຫຼືອງທີ່ໃຊ້ມືຈັບໄດ້

ພິກຂຸເພິ່ງຮັບບິນທະບາດພໍດີກັບແກງ

ພິກຂຸໃດບໍ່ເອື້ອເຟື້ອ ເລືອກຮັບສະເພາະແກງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຮັບແກງຫຼາຍຢ່າງ
໖. ພິກຂຸຮັບຂອງຍາດຕິພີ່ນ້ອງ
໗. ພິກຂຸຮັບຂອງຜູ້ປະວາຣະນາ
໘. ພິກຂຸຮັບເພື່ອຜູ້ອື່ນ
໙. ພິກຂຸຊື້ມາດ້ວຍຊັບຂອງຕົນ
໑໐. ພິກຂຸຜູ້ມີເຫດຂັດຂ້ອງ
໑໑. ພິກຂຸວິກົນຈະລິດ
໑໒. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໙ ຈົບ

### ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[໖໐໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຮັບບິນທະບາດລົ້ນຂອບປາກບາດ ຯລຯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກຮັບບິນທະບາດສະເໝີຂອບປາກບາດ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸເພິ່ງຮັບບິນທະບາດສະເໝີຂອບປາກບາດ
ພິກຂຸໃດບໍ່ເອື້ອເຟື້ອ ຮັບບິນທະບາດຈົນລົ້ນຂອບປາກບາດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ມີເຫດຂັດຂ້ອງ
໕. ພິກຂຸວິກົນຈະລິດ
໖. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ຂໍາພະກະຕະວັກທີ ໓ ຈົບ

# ໔. ສັກກັດຈະວັກ

## ໝວດວ່າດ້ວຍຄວາມເຄົາລົບ

### ສິກຂາບົດທີ ໑

### ເລື້ອງພຣະສັບພັກຄີ

[໖໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນບິນທະບາດໂດຍບໍ່ເຄົາລົບ ເຮັດເໝືອນບໍ່ຢາກຈະສັນ ຯລຯ

### ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກສັນບິນທະບາດໂດຍເຄົາລົບ

**ເລື້ອງພຣະສັບພັກຄີ ຈົບ**

### ສິກຂາບົດວິພັງ

ພິກຂຸເພິ່ງສັນບິນທະບາດໂດຍເຄົາລົບ

ພິກຂຸໃດບໍ່ເອື້ອເຟື້ອ ສັນບິນທະບາດໂດຍບໍ່ເຄົາລົບ ເຮັດຄືບໍ່ຢາກສັນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

## ສິກຂາບົດທີ ໘
## ເລື້ອງພຣະສັບພັກຄີ

[໖໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນບິນທະບາດແນມເບິ່ງຊ້າຍເບິ່ງຂວາ ເມື່ອເຂົາໃສ່ບາດໃຫ້ຈົນແລ້ວ ກໍຍັງບໍ່ຮູ້ສຶກຕົວ ฯລฯ

### ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກໃຫ້ຄວາມສຳຄັນໃນບາດຂະນະສັນບິນທະບາດ

### ເລື້ອງພຣະສັບພັກຄີ ຈົບ

### ສິກຂາບົດວິພັງ

ພິກຂຸເພິ່ງໃຫ້ຄວາມສຳຄັນໃນບາດ ຂະນະສັນບິນທະບາດ
ພິກຂຸໃດ ບໍ່ເອື້ອເຟື້ອ ສັນບິນທະບາດແນມເບິ່ງຊ້າຍເບິ່ງຂວາ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໘ ຈົບ

## ສິກຂາບົດທີ ໙

## ເລື້ອງພຣະສັບພັກຄີ

[໖໐໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນບິນທະບາດຫຍຸມເຂົ້າລົງບໍ່ສະເໝີກັນ ฯລฯ

## ພຣະບັນຍັດ

໓. ເພິ່ງໃສ່ໃຈວ່າ ເຮົາຈັກສັນບິນທະບາດຫຍຸມເຂົ້າລົງໃຫ້ສະເໝີກັນ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸເພິ່ງສັນບິນທະບາດໄປຕາມລຳດັບ
ພິກຂຸໃດບໍ່ເອື້ອເຟື້ອ ສັນບິນທະບາດຫຍຸມເຂົ້າລົງບໍ່ສະເໝີກັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຕັກໃຫ້ຜູ້ອື່ນ
໖. ພິກຂຸຕັກເຂ່ຍລົງໃນພາຊະນະອື່ນ
໗. ພິກຂຸຕັກແກງອ່ອມ
໘. ພິກຂຸວິກົນຈະລິດ
໙. ພິກຂຸຜູ້ມີເຫດຂັດຂ້ອງ
໑໐. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໓ ຈົບ

### ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໖໐໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີ ສັນບິນທະບາດສັນສະເພາະແກງຫຼາຍ ໆລໆ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກສັນບິນທະບາດພໍດີກັບແກງ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ທີ່ຊື່ວ່າ ແກງ ໄດ້ແກ່ແກງ ໒ ຊະນິດ ຄື (໑) ແກງຖົ່ວຂຽວ (໒) ແກງຖົ່ວເຫຼືອງທີ່ໃຊ້ມືຈັບໄດ້

ພິກຂຸເພິ່ງສັນບິນທະບາດພໍດີກັບແກງ

ພິກຂຸໃດບໍ່ເອື້ອເຟື້ອ ສັນສະເພາະແກງຫຼາຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸສັນແກງຫຼາຍຢ່າງ
໖. ພິກຂຸສັນຂອງຍາດ
໗. ພິກຂຸສັນຂອງຜູ້ປະວາຣະນາ
໘. ພິກຂຸສັນເພື່ອຜູ້ອື່ນ
໙. ພິກຂຸຈ່າຍມາດ້ວຍຊັບຂອງຕົນ
໑໐. ພິກຂຸຜູ້ມີເຫດຂັດຂ້ອງ
໑໑. ພິກຂຸວິກົນຈະລິດ
໑໒. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

## ສິກຂາບົດທີ ໕

## ເລື້ອງພຣະສັບພັກຄີ

[໖໑໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນບິນທະບາດຫຍຸມລົງແຕ່ຍອດ ໆລໆ

## ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນບິນທະບາດຫຍຸມລົງແຕ່ຍອດ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນບິນທະບາດຫຍຸມລົງແຕ່ຍອດ

ພິກຂຸໃດບໍ່ເອື້ອເຟື້ອ ສັນບິນທະບາດຫຍຸມລົງແຕ່ຍອດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຕ້ອນໂຮບເຂົ້າທີ່ເຫຼືອລວມເປັນຄຳແລ້ວສັນ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໕ ຈົບ

### ສິກຂາບົດທີ ໖

## ເລື້ອງພຣະສັບພັກຄີ

[໖໑໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໃຊ້ເຂົ້າສຸກປົກແກງແດ່ ກັບເຂົ້າແດ່ ຍ້ອນຢາກໄດ້ຫຼາຍ ฯລฯ

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ໃຊ້ເຂົ້າສຸກປົກແກງ ຫຼື ກັບເຂົ້າ ຍ້ອນຢາກໄດ້ຫຼາຍ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງໃຊ້ເຂົ້າສຸກປົກແກງ ຫຼື ກັບເຂົ້າ ຍ້ອນຢາກໄດ້ຫຼາຍ

ພິກຂຸໃດບໍ່ເອື້ອເຟື້ອ ໃຊ້ເຂົ້າສຸກປົກແກງຫຼືກັບເຂົ້າ ຍ້ອນຢາກໄດ້ຫຼາຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸບໍ່ໄດ້ມຸ້ງປົກຍ້ອນໂລບຫຼາຍ
໔. ພິກຂຸວິກັນຈະລິດ
໕. ພິກຂຸບໍ່ມີສະຕິ
໖. ເຈົ້າຂອງປົກໄວ້ຖວາຍ
໗. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໗ ຈົບ

## ສິກຂາບົດທີ ໘

## ເລື້ອງພຣະສັບພັກຄີ

[໗໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີອອກປາກຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວ ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງອອກປາກຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວແນວນັ້ນນໍ ອາຫານທີ່ດີໃຜຈະບໍ່ພໍໃຈ ອາຫານທີ່ແຊບໃຜຈະບໍ່ມັກນໍ?

ພິກຂຸທັງຫຼາຍ ໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີ ຈຶ່ງອອກປາກຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງ ຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງອອກປາກຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຕັດຮັບສັ່ງໃຫ້ພິກຂຸທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກ. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ອອກປາກຂໍແກງ ຫຼື ເຂົ້າສຸກ ມາສັນສ່ວນຕົວ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸຜູ້ເປັນໄຂ້

[໙໑໓] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ພວກພິກຂຸຜູ້ມີໜ້າທີ່ສອບຖາມອາການໄຂ້ ໄດ້ກ່າວກັບພວກພິກຂຸຜູ້ເປັນໄຂ້ດັ່ງນີ້ວ່າ "ທ່ານທັງຫຼາຍ ສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ?

ພວກພິກຂຸຜູ້ເປັນໄຂ້ຕອບວ່າ "ເມື່ອກ່ອນພວກຂ້ານ້ອຍອອກປາກຂໍແກງແດ່ ເຂົ້າສຸກແດ່ ມາສັນສ່ວນຕົວໄດ້ຈຶ່ງມີຄວາມຜາສຸກ ແຕ່ດຽວນີ້ພວກຂ້ານ້ອຍມີຄວາມຢຳເກງຢູ່ວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ ຈຶ່ງບໍ່ກ້າອອກປາກຂໍ ດັ່ງນັ້ນຈຶ່ງບໍ່ມີຄວາມຜາສຸກ" ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ຂໍໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ອອກປາກຂໍແກງ ຫຼື ເຂົ້າສຸກມາສັນສ່ວນຕົວໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ເພິ່ງໃສ່ໃຈວ່າ ເຮົາບໍ່ເປັນໄຂ້ ຈັກບໍ່ອອກປາກຂໍແກງ ຫຼື ເຂົ້າສຸກມາສັນສ່ວນຕົວ

### ເລື້ອງພຣະຜູ້ເປັນໄຂ້ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເປັນໄຂ້ ບໍ່ເພິ່ງອອກປາກຂໍແກງ ຫຼື ເຂົ້າສຸກມາສັນສ່ວນຕົວ

ພິກຂຸໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ອອກປາກຂໍແກງ ຫຼື ເຂົ້າສຸກມາສັນສ່ວນຕົວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຂໍຈາກຍາດ
໗. ພິກຂຸຂໍເພື່ອຜູ້ອື່ນ
໙. ພິກຂຸຜູ້ມີເຫດຂັດຂ້ອງ
໑໑. ພິກຂຸຕົ້ນບັນຍັດ
໘. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸຂໍຈາກຄົນປະວາຣະນາ
໗. ພິກຂຸຈ່າຍມາດ້ວຍຊັບຂອງຕົນ
໑໐. ພິກຂຸວິກົນຈະລິດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໗

## ເລື້ອງພຣະສັບພັກຄີ

[ຜ໑໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີມຸ້ງຈັບຜິດ ຈຶ່ງແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ ฯລฯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ມຸ້ງຈັບຜິດ ແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງມຸ້ງຕຳໜິ ແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ
ພິກຂຸໃດບໍ່ເອື້ອເຟື້ອ ມຸ້ງຕຳໜິ ແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໘. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸແນມເບິ່ງດ້ວຍຕັ້ງໃຈວ່າຈະເຕີມຂອງສັນໃຫ້ ຫຼື ສັ່ງໃຫ້ເຂົາເຕີມຖວາຍ
໕. ພິກຂຸບໍ່ມຸ້ງຈະຕຳໜິ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໙

## ເລື້ອງພຣະສັບພັກຄີ

[ຜ໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີປັ້ນຄຳເຂົ້າໃຫຍ່ ຯລຯ

## ພຣະບັນຍັດ

໙. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ປັ້ນຄຳເຂົ້າໃຫ້ໃຫຍ່ຫຼາຍ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງປັ້ນຄຳເຂົ້າໃຫ້ໃຫຍ່ຫຼາຍ
ພິກຂຸໃດບໍ່ເອື້ອເຟື້ອ ປັ້ນຄຳເຂົ້າໃຫ້ໃຫຍ່ຫຼາຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸສັນຂອງຫຍໍ້າ
໖. ພິກຂຸສັນໝາກໄມ້ຕ່າງ ໆ
໗. ພິກຂຸສັນແກງອ່ອມ
໘. ພິກຂຸຜູ້ມີເຫດຂັດຂ້ອງ
໙. ພິກຂຸວິກົນຈະລິດ
໑໐. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

## ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[໖໑໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີປັ້ນຄຳເຂົ້າໃຫ້ຍາວ ຯລຯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກປັ້ນຄຳເຂົ້າໃຫ້ປ້ອມ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸເພິ່ງປັ້ນຄຳເຂົ້າໃຫ້ປ້ອມ
ພິກຂຸໃດບໍ່ເອື້ອເຟື້ອ ເຮັດຄຳເຂົ້າໃຫ້ຍາວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕ ພິກຂຸສັນຂອງຫຍໍ້າ
໗. ພິກຂຸສັນແກງອ່ອມ
໙. ພິກຂຸວິກົນຈະລິດ
໘. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸສັນໝາກໄມ້ຕ່າງ ໆ
໘. ພິກຂຸຜູ້ມີເຫດຂັດຂ້ອງ
໑໐. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ສັກກັດຈະວັກທີ ໔ ຈົບ

# ໕. ກະພະລະວັກ

## ໝວດວ່າດ້ວຍຄຳເຂົ້າ

### ສິກຂາບົດທີ ໑

### ເລື້ອງພຣະສັບພັກຄີ

[໖໑໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີ ອ້າປາກຖ້າຄຳເຂົ້າທີ່ຍັງບໍ່ເຂົ້າປາກ ຯລຯ

### ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ອ້າປາກຖ້າຄຳເຂົ້າທີ່ຍັງບໍ່ຮອດປາກ

**ເລື້ອງພຣະສັບພັກຄີ ຈົບ**

### ສິກຂາບົດວິພັງ

ພິກຂຸບໍ່ເພິ່ງອ້າປາກຖ້າຄຳເຂົ້າທີ່ຍັງບໍ່ຮອດປາກ

ພິກຂຸໃດບໍ່ເອື້ອເຟື້ອ ອ້າປາກຖ້າຄຳເຂົ້າທີ່ຍັງບໍ່ຮອດປາກ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ

໒. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້

໔. ພິກຂຸຜູ້ເປັນໄຂ້

໕. ພິກຂຸຜູ້ມີເຫດຂັດຂ້ອງ

໖. ພິກຂຸວິກົນຈະລິດ

໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

### ສິກຂາບົດທີ ໒

### ເລື້ອງພຣະສັບພັກຄີ

[໖໑໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຂະນະກຳລັງສັນສອດມືທັງໝົດເຂົ້າໃນປາກ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ຂະນະກຳລັງສັນ ເຮົາຈັກບໍ່ສອດມືທັງໝົດເຂົ້າໃນປາກ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸຂະນະກຳລັງສັນ ບໍ່ເພິ່ງສອດມືເຂົ້າໃນປາກ
ພິກຂຸໃດບໍ່ເອື້ອເຟື້ອ ຂະນະກຳລັງສັນສອດມືເຂົ້າໄປໃນປາກ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໓

## ເລື້ອງພຣະສັບພັກຄີ

[໖໑໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີໂອ້ລົມກັນໃນເວລາທີ່ໃນປາກມີຄຳເຂົ້າ ຯລຯ

## ພຣະບັນຍັດ

໓. ເພິ່ງໃສ່ໃຈວ່າ ຂະນະທີ່ໃນປາກມີຄຳເຂົ້າ ເຮົາຈັກບໍ່ໂອ້ລົມກັນ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງໂອ້ລົມກັນ ຂະນະທີ່ໃນປາກມີຄຳເຂົ້າ
ພິກຂຸໃດບໍ່ເອື້ອເຟື້ອ ໂອ້ລົມຂະນະທີ່ໃນປາກມີຄຳເຂົ້າ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

## ສິກຂາບົດທີ ໔
## ເລື້ອງພຣະສັບພັກຄີ

[໖໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນໂຍນຄຳເຂົ້າ ຯລຯ

## ພຣະບັນຍັດ

**໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນໂຍນຄຳເຂົ້າ**

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນໂຍນຄຳເຂົ້າ
ພິກຂຸໃດບໍ່ເອື້ອເຟື້ອ ສັນໂຍນຄຳເຂົ້າ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸສັນຂອງຫຍໍ້າ ໖. ພິກຂຸສັນໝາກໄມ້
໗. ພິກຂຸຜູ້ມີເຫດຂັດຂ້ອງ ໘. ພິກຂຸວິກົນຈະລິດ
໙. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

**ສິກຂາບົດທີ ໕**

## ເລື້ອງພຣະສັບພັກຄີ

[໖໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນກັດຄຳເຂົ້າ ໆລໆ

## ພຣະບັນຍັດ

໕. **ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນກັດຄຳເຂົ້າ**

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນກັດຄຳເຂົ້າ
ພິກຂຸໃດບໍ່ເອື້ອເຟື້ອ ສັນກັດຄຳເຂົ້າ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ ໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸສັນຄຳເຂົ້າເປັນກ້ອນ ໖. ພິກຂຸສັນໝາກໄມ້ຕ່າງ ໆ
໗. ພິກຂຸສັນແກງອ່ອມ ໘. ພິກຂຸຜູ້ມີເຫດຂັດຂ້ອງ
໙. ພິກຂຸວິກົນຈະລິດ ໑໐. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

## ສິກຂາບົດທີ ໖

## ເລື້ອງພຣະສັບພັກຄີ

[໖໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນອາຫານເຮັດແກ້ມໃຫ້ປຸ້ງອອກ ຯລຯ

### ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນອາຫານເຮັດແກ້ມໃຫ້ປຸ້ງອອກ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເຮັດແກ້ມໃຫ້ປຸ້ງອອກ

ພິກຂຸໃດບໍ່ເອື້ອເຟື້ອ ສັນເຮັດແກ້ມໃຫ້ປຸ້ງອອກຂ້າງດຽວ ຫຼື ທັງສອງຂ້າງ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸສັນໝາກໄມ້ຕ່າງ ໆ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

## ສິກຂາບົດທີ ໗

### ເລື້ອງພຣະສັບພັກຄີ

[໖໔໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນຊິດມື ຯລຯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນຊິດມື

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນຊິດມື
ພິກຂຸໃດບໍ່ເອື້ອເຟື້ອ ສັນຊິດມື ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຊິດມືຖິ້ມເສດອາຫານ
໗. ພິກຂຸວິກົນຈະລິດ
໘. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໗ ຈົບ

## ສິກຂາບົດທີ ໘

## ເລື້ອງພຣະສັບພັກຄີ

[໖໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນເຮັດເມັດເຂົ້າໃຫ້ຕົກ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນເຮັດເມັດເຂົ້າໃຫ້ຕົກ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເຮັດໃຫ້ເມັດເຂົ້າຕົກ
ພິກຂຸໃດບໍ່ເອື້ອເຟື້ອ ສັນເຮັດໃຫ້ເມັດເຂົ້າຕົກ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຖິ້ມເສດເມັດເຂົ້າຕິດໄປນຳ
໗. ພິກຂຸວິກົນຈະລິດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸຜູ້ມີເຫດຂັດຂ້ອງ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໙
## ເລື້ອງພຣະສັບພັກຄີ

[໖໔໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນ ແລບລີ້ນ ຯລຯ

## ພຣະບັນຍັດ

໙. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນແລບລີ້ນ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນແລບລີ້ນ
ພິກຂຸໃດບໍ່ເອື້ອເຟື້ອ ສັນແລບລີ້ນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໔. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

## ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[໖໘໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນເຮັດສຽງດັງຈັ໊ບ ໆ ຯລຯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນເຮັດສຽງດັງຈັ໊ບ ໆ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເຮັດສຽງດັງ ຈັ໊ບ ໆ
ພິກຂຸໃດບໍ່ເອື້ອເຟື້ອ ສັນເຮັດສຽງດັງຈັບ ໆ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ ໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ກະພະລະວັກທີ ໕ ຈົບ**

# ໖. ສຸຣຸສຸຣຸວັກ

## ໝວດວ່າດ້ວຍການສັນດັງຊູ້ດ ໆ

### ສິກຂາບົດທີ ໑

### ເລື້ອງພຣະອົງໜຶ່ງ

[໖໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ພາມຄົນໜຶ່ງປຸງນ້ຳນົມຖວາຍສົງ ພິກຂຸທັງຫຼາຍດື່ມນ້ຳນົມສຽງດັງຊູ້ດ ໆ ພິກຂຸຜູ້ເຄີຍເປັນນັກຟ້ອນອົງໜຶ່ງກ່າວຢ່າງນີ້ວ່າ "ສົງໝູ່ນີ້ ຄືຊິໜາວຫຼາຍແມ່ນບໍ?"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຈຶ່ງລົ້ລຽນສົງແນວນັ້ນນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ທ່ານລົ້ລຽນສົງ ແມ່ນບໍ?" ພິກຂຸນັ້ນທູນຮັບ ວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງລົ້ລຽນສົງນໍ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໄສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຈຶ່ງຊົງສະແດງທຳມີກະຖາ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກະທຳການລົ້ລຽນຜາຣົບພຣະພຸດ ພຣະທຳ ພຣະສົງ ພິກຂຸໃດກະທຳ ຕ້ອງອາບັດທຸກກົດ" ໃນບັດນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຕຳໜິພິກຂຸນັ້ນໂດຍປະການຕ່າງ ໆ ແລ້ວ ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

### ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນມີສຽງດັງຊູ້ດ ໆ

**ເລື້ອງພຣະອົງໜຶ່ງ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນນິສຽງດັ່ງຂູ້ດ ໆ
ພິກຂຸໃດບໍ່ເອື້ອເຟື້ອ ສັນນິສຽງດັ່ງຂູ້ດ ໆ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

## ສິກຂາບົດທີ ໔
## ເລື້ອງພຣະສັບພັກຄີ

[໖໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນເລຍມືໆລໆ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນເລຍມື

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເລຍມື
ພິກຂຸໃດບໍ່ເອື້ອເຟື້ອ ສັນເລຍມື ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໔. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໙

## ເລື້ອງພຣະສັບພັກຄີ

[໖໘໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມ ຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນເລຍບາດ ຯລຯ

## ພຣະບັນຍັດ

໙. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນເລຍບາດ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເລຍບາດ
ພິກຂຸໃດບໍ່ເອື້ອເຟື້ອ ສັນເລຍບາດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຕ້ອມເຂົ້າສຸກທີ່ເຫຼືອໜ້ອຍລວມກັນແລ້ວສັນ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

## ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໒໓໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສັນເລຍຣິມຝີປາກ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສັນເລຍຣິມຝີປາກ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສັນເລຍຣິມຝີປາກ
ພິກຂຸໃດບໍ່ເອື້ອເຟື້ອ ສັນເລຍຣິມຝີປາກ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໓. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

### ສິກຂາບົດທີ ໔ ຈົບ

## ສິກຂາບົດທີ ໕

## ເລື້ອງພຣະຫຼາຍອົງ

[໒໓໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນເພສະກະລາມະຣິຄະທາຍະວັນເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະ ຄັ້ງນັ້ນ ພິກຂຸໃຊ້ມືເປື້ອນອາຫານຈັບພາຊະນະ

ນ້ຳດື່ມ ທີ່ຜາສາດໂກກະນະທະ ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະ ເຊື້ອສາຍສາກະຍະບຸດ ຈຶ່ງໃຊ້ມືເປື້ອນອາຫານຈັບພາຊະນະນ້ຳດື່ມ ເໝືອນຄະລິຫັດຜູ້ບໍລິໂພກກາມນໍ

ພິກຂຸທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງໃຊ້ມືເປື້ອນອາຫານຈັບພາຊະນະນ້ຳດື່ມນໍ" ເມື່ອພິກຂຸທັງຫຼາຍ ຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸໃຊ້ມືເປື້ອນອາຫານຈັບພາຊະນະນ້ຳດື່ມແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງໃຊ້ມືເປື້ອນອາຫານຈັບພາຊະນະນ້ຳດື່ມນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຈັບພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ

### ເລື້ອງພຣະຫຼາຍອົງ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຈັບພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ
ພິກຂຸໃດບໍ່ເອື້ອເຟື້ອ ຈັບພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້

໕. ພິກຂຸຮັບປະເຄນໄວ້ຍ້ອນຄິດຈະລ້າງເອງ ຫຼື ໃຊ້ຜູ້ອື່ນລ້າງ

໖. ພິກຂຸຜູ້ມີເຫດຂັດຂ້ອງ

໗. ພິກຂຸວິກົນຈະລິດ ໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

## ສິກຂາບົດທີ ໖

## ເລື້ອງພຣະຫຼາຍອົງ

[໖໓໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ໃນເພສະກະລາມະຣິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະ ຄັ້ງນັ້ນ ພິກຂຸທັງຫຼາຍຖອກນ້ຳລ້າງບາດທີ່ມີເມັດເຂົ້າ ລົງໃນບໍລິເວນເຮືອນ ໃກ້ໂກກະນະທະຜາສາດ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງຖອກນ້ຳລ້າງບາດທີ່ມີເມັດເຂົ້າໃນບໍລິເວນເຮືອນ ເໝືອນຄະລຶຫັດຜູ້ບໍຣິໂພກກາມແນວນັ້ນບໍ?"

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງຖອກນ້ຳລ້າງບາດ ທີ່ມີເມັດເຂົ້າໃນບໍລິເວນບ້ານບໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນບ້ານ ແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງຖອກນ້ຳລ້າງບາດທີ່ມີເມັດເຂົ້າໃນບໍລິເວນບ້ານບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຖອກນ້ຳລ້າງບາດທີ່ມີເມັດເຂົ້າໃນບໍລິເວນບ້ານ

**ເລື້ອງພຣະຫຼາຍອົງ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນເຮືອນ
ພິກຂຸໃດບໍ່ເອື້ອເຟື້ອ ຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນບ້ານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸເກັບເມັດເຂົ້າອອກແລ້ວຖອກນ້ຳລ້າງບາດ ຫຼື ບີບເມັດເຂົ້າໃຫ້ລະລາຍ ຫຼື ຖອກນ້ຳລ້າງບາດໃນກະໂຖນນຳໄປຖອກຂ້າງນອກ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

## ສິກຂາບົດທີ ໗

## ເລື່ອງພຣະສັບພັກຄີ

[໖໓໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຜູ້ກັ້ງຄັນຮົ່ມ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງສະແດງທຳແກ່ຄົນຜູ້ກັ້ງຄັນຮົ່ມນໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານສະແດງທຳແກ່ ຄົນຜູ້ກັ້ງຄັນຮົ່ມແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງ ພວກທ່ານຈຶ່ງສະແດງທຳແກ່ຄົນຜູ້ກັ້ງຂັນຮົ່ມນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໄສໃຫ້ເຫຼື້ອມ

ໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກ. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນກັ້ງຄັນຮົ່ມ

### ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸຫຼາຍອົງ

[໓໖໔] ສະໄໝນັ້ນ ພິກຂຸທັງຫຼາຍຢຳເກງທີ່ຈະສະແດງທຳແກ່ຄົນໄຂ້ຜູ້ກັ້ງຄັນຮົ່ມ ພວກຊາວບ້ານຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງບໍ່ສະແດງທຳແກ່ຄົນໄຂ້ຜູ້ກັ້ງຄັນຮົ່ມນໍ" ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ເມື່ອແລ້ວພິກຂຸເຫຼົ່ານັ້ນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງອະນຸຍາດໃຫ້ສະແດງທຳແກ່ຄົນໄຂ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະແດງທຳແກ່ຄົນໄຂ້ຜູ້ກັ້ງຄັນຮົ່ມໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ກັ້ງຄັນຮົ່ມ

### ເລື້ອງພິກຂຸຫຼາຍອົງ ຈົບ

## ສິກຂາບົດວິພັງ

ທີ່ຊື່ວ່າ ຄັນຮົ່ມ ໄດ້ແກ່ ຄັນຮົ່ມ ໓ ຊະນິດ ຄື (໑) ຄັນຮົ່ມຜ້າຂາວ (໒) ຄັນຮົ່ມສາດລຳແພນ (໓) ຄັນຮົ່ມໃບໄມ້ທີ່ຫຍິບເປັນວົງຜູກຕິດກັນ

ທີ່ຊື່ວ່າ ທຳ ໄດ້ແກ່ ພຸດທະພາສິດ ສາວົກພາສິດ ລືສີພາສິດ ເທວະດາພາສິດທີ່ປະກອບດ້ວຍອັດຖະ ທີ່ປະກອບດ້ວຍທຳ

ບັດວ່າ ສະແດງ ຄື ພິກຂຸສະແດງເປັນບົດ ຕ້ອງອາບັດທຸກກົດທຸກ ໆ ບົດ ສະແດງເປັນອັກສອນ ຕ້ອງອາບັດທຸກກົດທຸກ ໆ ໂຕອັກສອນ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ກັ້ງຄັນຮົ່ມ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ກັ້ງຄັນຮົ່ມ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘
## ເລື້ອງພຣະສັບພັກຄີ

[໖໓໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຖືໄມ້ພອງ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືໄມ້ພອງ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ທີ່ຊື່ວ່າ ໄມ້ພອງ ໄດ້ແກ່ ໄມ້ພອງຍາວ ໔ ສອກ ຂະໜາດສອກຂອງຄົນສັນຖານປານກາງ ຍາວກວ່ານັ້ນບໍ່ແມ່ນໄມ້ພອງ ສັ້ນກວ່ານັ້ນ ກໍບໍ່ແມ່ນໄມ້ພອງ
ພິກຂຸບໍ່ເພິ່ງສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຖືໄມ້ພອງ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືໄມ້ພອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໔. ພິກຂຸບໍ່ມີສະຕິ

໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

**ສິກຂາບົດທີ ໘**

## ເລື້ອງພຣະສັບພັກຄີ

[໖໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຖືອາວຸດ ຯລຯ

## ພຣະບັນຍັດ

໘. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືອາວຸດ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ທີ່ຊື່ວ່າ ອາວຸດ ໄດ້ແກ່ ເຄື່ອງປະຫານມີຄົມຂ້າງດຽວ ມີຄົມ ໒ ຂ້າງ
ພິກຂຸບໍ່ເພິ່ງສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຖືອາວຸດ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຖືອາວຸດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ ໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ ໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

## ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[໖໓໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືອາວຸດ ຯລຯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືອາວຸດ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືອາວຸດ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຖືອາວຸດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ສຸຣຸສຸຣຸວັກທີ ໖ ຈົບ

# ກ. ປາຫຸກາວັກ

## ໝວດວ່າດ້ວຍຊຽງຕີນ

### ສິກຂາບົດທີ ໑

### ເລື້ອງພຣະສັບພັກຄີ

[๗๖๒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຜູ້ໃສ່ຊຽງຕີນ ຯລຯ

### ພຣະບັນຍັດ

໑. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ໃສ່ຊຽງຕີນ

**ເລື້ອງພຣະສັບພັກຄີ ຈົບ**

### ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ໃສ່ຊຽງຕີນ

ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ ຜູ້ຢຽບຊຽງຕີນ ໃສ່ຊຽງຕີນ ຫຼື ໃສ່ຊຽງຕີນຫຸ້ມສົ້ນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໓. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໑ ຈົບ**

## ສິກຂາບົດທີ ໔

## ເລື້ອງພຣະສັບພັກຄີ

[໗໓໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນໃສ່ເກີບ ຯລຯ

### ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ໃສ່ເກີບ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ໃສ່ເກີບ

ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ທີ່ຢຽບເທິງເກີບ ໃສ່ເກີບ ຫຼືໃສ່ເກີບຫຸ້ມສົ້ນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໔ ຈົບ

## ສິກຂາບົດທີ ໓

### ເລື້ອງພຣະສັບພັກຄີ

[໗໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຢູ່ໃນຍານ ຯລຯ

## ພຣະບັນຍັດ

໓. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຢູ່ໃນຍານ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ທີ່ຊື່ວ່າ ຍານ ໄດ້ແກ່ ຄານຫາມ ລົດ ກວຽນ ຕຽງຫາມ ວໍ ເປຫາມ
ພິກຂຸບໍ່ເພິ່ງສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຢູ່ໃນຍານ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຢູ່ໃນຍານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸບໍ່ຮູ້ສຶກຕົວ
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

## ສິກຂາບົດທີ ໔

**ເລື້ອງພຣະສັບພັກຄີ**

[໖໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຜູ້ຢູ່ເທິງທີ່ນອນ ຯລຯ

## ພຣະບັນຍັດ

໔. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຢູ່ເທິງທີ່ນອນ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຢູ່ເທິງທີ່ນອນ

ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຢູ່ເທິງທີ່ນອນ ໂດຍທີ່ສຸດຜູ້ນອນເທິງພື້ນດິນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

### ສິກຂາບົດທີ ໔ ຈົບ

## ສິກຂາບົດທີ ໕

## ເລື້ອງພຣະສັບພັກຄີ

[໖໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນທີ່ນັ່ງກອດເຂົ່າ ຯລຯ

## ພຣະບັນຍັດ

໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງກອດເຂົ່າ

### ເລື້ອງພຣະສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງກອດເຂົ່າ

ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງກອດເຂົ່າດ້ວຍມື ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໕ ຈົບ**

## ສິກຂາບົດທີ ໖

## ເລື້ອງພຣະສັບພັກຄີ

[໖໔໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຜູ້ໂພກຫົວ ຯລຯ

## ພຣະບັນຍັດ

໖. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ໂພກຫົວ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ທີ່ຊື່ວ່າ ຜູ້ໂພກຫົວ ຄື ພັນບໍ່ໃຫ້ເຫັນປາຍຜົມ
ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ໂພກຫົວ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ໂພກຫົວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້

໕. ພິກຂຸໃຫ້ເຂົາເປີດແກ້ຜົມທີ່ມັດໄວ້ແລ້ວຈຶ່ງສະແດງ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ ໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

## ສິກຂາບົດທີ ໗

## ເລື້ອງພຣະສັບພັກຄີ

[໖໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີສະແດງທຳແກ່ຄົນຜູ້ຄຸມຫົວ ຯລຯ

## ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຄຸມຫົວ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ທີ່ຊື່ວ່າ ຄຸມຫົວ ຄື ທ່ານກ່າວເຖິງຜູ້ທີ່ມຜ້າຄຸມຕະຫຼອດຫົວ
ພິກຂຸບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຄຸມຫົວ
ພິກຂຸໃດບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບໍ່ເປັນໄຂ້ຜູ້ຄຸມຫົວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ ໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້ ໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸໃຫ້ເຂົາເປີດຜ້າຄຸມຫົວແລ້ວຈຶ່ງສະແດງ ໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ ໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໗
## ເລື້ອງພຣະສັບພັກຄີ

[໗໔໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງເທິງພື້ນດິນສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະ ຯລຯ

### ພຣະບັນຍັດ

໗. ເພິ່ງໃສ່ໃຈວ່າ ເຮົານັ່ງທີ່ພື້ນດິນຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸນັ່ງຢູ່ເທິງພື້ນດິນບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະ

ພິກຂຸໃດບໍ່ເອື້ອເຟື້ອ ນັ່ງເທິງພື້ນດິນສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

## ສິກຂາບົດທີ ໘
## ເລື້ອງພຣະສັບພັກຄີ

[໗໔໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີນັ່ງເທິງອາສະນະຕ່ຳ ສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງພາກັນຕຳໜິປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງນັ່ງເທິງອາສະນະຕ່ຳສະແດງທຳ

ແກ່ຄົນຜູ້ນັ່ງເທິງອາສະນະສູງບໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງປະຊຸມສົງສະແດງທຳມີກະຖາ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານນັ່ງເທິງອາສະນະຕ່ຳສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງນັ່ງເທິງອາສະນະຕ່ຳສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງບໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ

## ເລື້ອງພັນລະຍາຂອງບຸຣຸດຈັນທານ

[໖໕໗] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພັນລະຍາຂອງບຸຣຸດຈັນທານຄົນໜຶ່ງ ໃນນະຄອນພາຣານະສີ ຖືພາ ເມື່ອແລ້ວນາງຈຶ່ງໄດ້ກ່າວກັບສາມີວ່າ "ອ້າຍ ເຮົາກຳລັງຖືພາ ຍາກກິນໝາກມ່ວງ

ສາມີຕອບວ່າ ໝາກມ່ວງບໍ່ມີຍ້ອນບໍ່ແມ່ນລະດູໝາກມ່ວງ

ນາງກ່າວວ່າ ຖ້າບໍ່ໄດ້ ເຮົາຕ້ອງຕາຍ

ຄັ້ງນັ້ນ ມີຕົ້ນໝາກມ່ວງຂອງຫຼວງເປັນໝາກທຸກລະດູຢູ່ຕົ້ນໜຶ່ງ ພິກຂຸທັງຫຼາຍ ເມື່ອແລ້ວບຸຣຸດຈັນທານຈຶ່ງໄປເຖິງທີ່ຕົ້ນໝາກມ່ວງ ເມື່ອເຖິງແລ້ວໄດ້ຂຶ້ນໄປລີ້ຢູ່ເທິງຕົ້ນ ພໍດີພຣະຣາຊາສະເດັດໄປເຖິງຕົ້ນໝາກມ່ວງນັ້ນພ້ອມກັບພາມປຸໂຣຫິດ ເມື່ອເຖິງແລ້ວຈຶ່ງປະທັບນັ່ງເທິງອາສະນະແລ້ວຊົງຮຽນມົນ

ພິກຂຸທັງຫຼາຍ ໃນບັດນັ້ນ ບຸຣຸດຈັນທານໄດ້ມີຄວາມຄິດດັ່ງນີ້ວ່າ ພຣະຣາຊາອົງນີ້ປະທັບນັ່ງເທິງອາສະນະສູງຮຽນມົນ ຊື່ວ່າ ບໍ່ແມ່ນພຣະຣາຊາຜູ້ຊົງທຳ ພາມຄົນນີ້ທີ່ນັ່ງເທິງອາສະນະຕ່ຳສອນມົນແກ່ຜູ້ນັ່ງເທິງອາສະນະສູງ ກໍຊື່ວ່າບໍ່ແມ່ນຜູ້ປະພຶດທຳ ແລະ ເຮົາຜູ້ທີ່ລັກໝາກມ່ວງຂອງຫຼວງຍ້ອນພັນລະຍາເປັນເຫດ ກໍຊື່ວ່າບໍ່ແມ່ນຜູ້ປະພຶດທຳ ແທ້ຈິງ ການກະທຳດັ່ງນີ້ລ້ວນຕ່ຳຊາມຈຶ່ງໄຕ່ລົງມາກ່າວວ່າ

ຄົນທັງ ໔ ຄື ພາມຜູ້ສອນມົນ
ແລະພຣະຣາຊາຜູ້ຊົງຮຽນມົນໂດຍບໍ່ເຄົາລົບທຳ
ຍ່ອມບໍ່ຮູ້ອັດຖະ ແລະ ບໍ່ເຫັນທຳ

ພາມກ່າວວ່າ

ຍ້ອນເຮົາກິນເຂົ້າສາລີປະສົມແກງຊີ້ນທີ່ສະອາດ ດັ່ງນັ້ນ
ຈຶ່ງບໍ່ປະພຶດທຳທີ່ພຣະອະຣິຍະເຈົ້າສັນເສີນ

ບຸຣຸດຈັນທານກ່າວວ່າ

ເຮົາຕຳໜິການໄດ້ຊັບແລະການໄດ້ກຽດຕິຍົດຍ້ອນພຶດຕິກຳເຊັ່ນນັ້ນ
ນັ້ນເປັນວິຖີຊີວິດອັນເປັນເຫດໃຫ້ຕົກຕ່ຳ
ແລະເປັນການຄອງຊີບໂດຍບໍ່ຊອບ
ການຄອງຊີບຢ່າງນັ້ນບໍ່ມີປະໂຫຍດ
ທ່ານມະຫາພາມ ທ່ານຟ້າວໄປເລີຍເທີ້ນ
ແມ່ນຄົນເຫຼົ່າອື່ນກໍຍັງຮູ້ຈັກຫຸງຫາກິນໄດ້
ຄວາມອາທຳທີ່ທ່ານປະພຶດຢ່າໄດ້ທຳລາຍທ່ານເໝືອນໝໍ້ນ້ຳແຕກ

**ເລື້ອງພັນລະຍາຂອງບຸຣຸດຈັນທານ ຈົບ**

## ຊົງຕຳໜິແລ້ວບັນຍັດສິກຂາບົດ

ພິກຂຸທັງຫຼາຍ ແມ່ນໃນການນັ້ນ ພາມນັ່ງເທິງອາສະນະຕ່ຳ ສອນມົນພຣະຣາຊາ ຜູ້ປະທັບນັ່ງເທິງອາສະນະສູງ ຍັງບໍ່ເປັນທີ່ພໍໃຈຂອງເຮົາ ແລ້ວເປັນຫຍັງນໍ ບັດນີ້ການທີ່ພິກຂຸນັ່ງເທິງອາສະນະຕ່ຳສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງ ຈຶ່ງຈັກເປັນທີ່ພໍໃຈຂອງເຮົາໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

໙. ເພິ່ງໃສ່ໃຈວ່າ ເຮົານັ່ງເທິງອາສະນະຕ່ຳ ຈັກບໍ່ສະແດງທຳແກ່ຄົນ ທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະສູງ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະສູງ

ພິກຂຸໃດບໍ່ເອື້ອເຟື້ອ ນັ່ງເທິງອາສະນະຕ່ຳ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະສູງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໙ ຈົບ**

## ສິກຂາບົດທີ ໑໐

## ເລື້ອງພຣະສັບພັກຄີ

[໖໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຢືນສະແດງທຳແກ່ຄົນຜູ້ນັ່ງຢູ່ ຯລຯ

## ພຣະບັນຍັດ

໑໐. ເພິ່ງໃສ່ໃຈວ່າ ເຮົາຢືນຢູ່ຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງຢູ່

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸຢືນຢູ່ ບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງຢູ່
ພິກຂຸໃດບໍ່ເອື້ອເຟື້ອ ຢືນຢູ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງຢູ່ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໑໐ ຈົບ**

## ສິກຂາບົດທີ ໑໑
## ເລື້ອງພຣະສັບພັກຄີ

[໗໔໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງຢູ່ຂ້າງຫຼັງສະແດງທຳແກ່ຄົນຜູ້ຍ່າງໄປຂ້າງໜ້າ ຯລຯ

### ພຣະບັນຍັດ

໑໑. ເພິ່ງໃສ່ໃຈວ່າ ເຮົາຍ່າງຢູ່ຂ້າງຫຼັງ ຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໄປຂ້າງໜ້າ

**ເລື້ອງພຣະສັບພັກຄີ ຈົບ**

### ສິກຂາບົດວິພັງ

ພິກຂຸຍ່າງຢູ່ຂ້າງຫຼັງ ບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໄປຂ້າງໜ້າ

ພິກຂຸໃດບໍ່ເອື້ອເຟື້ອ ຍ່າງຢູ່ຂ້າງຫຼັງ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໄປຂ້າງໜ້າ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑໑ ຈົບ**

## ສິກຂາບົດທີ ໑໒
## ເລື້ອງພຣະສັບພັກຄີ

[໗໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຍ່າງຢູ່ນອກທາງ ສະແດງທຳແກ່ຄົນຜູ້ຍ່າງໄປໃນທາງ ຯລຯ

## ພຣະບັນຍັດ

໑໘. ເພິ່ງໃສ່ໃຈວ່າ ເຮົາຍ່າງໄປນອກທາງຈັກບໍ່ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໃນທາງ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸຍ່າງໄປນອກທາງ ບໍ່ເພິ່ງສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໃນທາງ

ພິກຂຸໃດບໍ່ເອື້ອເຟື້ອ ຍ່າງຢູ່ນອກທາງ ສະແດງທຳແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໃນທາງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໕. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸຕົ້ນບັນຍັດ
໔. ພິກຂຸບໍ່ມີສະຕິ
໔. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ

**ສິກຂາບົດທີ ໑໘ ຈົບ**

## ສິກຂາບົດທີ ໑໒

## ເລື້ອງພຣະສັບພັກຄີ

[໖໕໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຢືນຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ຯລຯ

## ພຣະບັນຍັດ

໑໒. ເພິ່ງໃສ່ໃຈວ່າ ເຮົາບໍ່ເປັນໄຂ້ ຈັກບໍ່ຢືນຖ່າຍອຸດຈາຣະ ຫຼື ປັດສາວະ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເປັນໄຂ້ ບໍ່ເພິ່ງຢືນຖ່າຍອຸດຈາຣະ ຫຼື ປັດສາວະ
ພິກຂຸໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ຢືນຖ່າຍອຸດຈາຣະ ຫຼື ປັດສາວະ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸຜູ້ບໍ່ຮູ້
໓. ພິກຂຸຜູ້ມີເຫດຂັດຂ້ອງ
໔. ພິກຂຸບໍ່ມີສະຕິ
໕. ພິກຂຸຜູ້ເປັນໄຂ້
໖. ພິກຂຸວິກົນຈະລິດ
໗. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑໓ ຈົບ**

## ສິກຂາບົດທີ ໑໔

## ເລື້ອງພຣະສັບພັກຄີ

[໖໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃສ່ຂອງຂຽວ ໆລໆ

## ພຣະບັນຍັດ

໑໔. ເພິ່ງໃສ່ໃຈວ່າ ເຮົາບໍ່ເປັນໄຂ້ຈັກບໍ່ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍ ລົງໃສ່ຂອງຂຽວ

**ເລື້ອງພຣະສັບພັກຄີ ຈົບ**

## ສິກຂາບົດວິພັງ

ພິກຂຸບໍ່ເປັນໄຂ້ບໍ່ເພິ່ງຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃສ່ຂອງຂຽວ

ພິກຂຸໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນໍ້າລາຍລົງໃສ່ຂອງຂຽວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸບໍ່ຈົງໃຈ
໒. ພິກຂຸບໍ່ມີສະຕິ
໓. ພິກຂຸຜູ້ບໍ່ຮູ້
໔. ພິກຂຸຜູ້ເປັນໄຂ້
໕. ພິກຂຸຖ່າຍລົງໃນທີ່ບໍ່ມີຂອງຂຽວແຕ່ໄຫຼໄປໃສ່ຂອງຂຽວ
໖. ພິກຂຸຜູ້ມີເຫດຂັດຂ້ອງ
໗. ພິກຂຸວິກົນຈະລິດ
໘. ພິກຂຸຕົ້ນບັນຍັດ

**ສິກຂາບົດທີ ໑໔ ຈົບ**

## ສິກຂາບົດທີ ໑໕
## ເລື້ອງພຣະສັບພັກຄີ

[໖໕໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸສັບພັກຄີຖ່າຍອຸດຈາຣະແດ່ ປັດສາ ວະແດ່ ບ້ວນນໍ້າລາຍແດ່ ລົງໃສ່ນໍ້າ ພວກຊາວບ້ານຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດ ຈຶ່ງຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນໍ້າລາຍລົງໃສ່ນໍ້າ ເໝືອນພວກຄະລືຫັດຜູ້ບໍຣິໂພກກາມນໍ?

ພວກພິກຂຸໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ບ້ວນນໍ້າລາຍແດ່ ລົງໃສ່ນໍ້ານໍ" ເມື່ອພິກຂຸທັງຫຼາຍຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມແລ້ວບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸສັບພັກຄີວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກທ່ານຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນໍ້າລາຍແດ່ ລົງໃສ່ນໍ້າ ແມ່ນບໍ?" ພວກພິກຂຸສັບພັກຄີທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳ

ຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

໑໕. ເພິ່ງໃສ່ໃຈວ່າ ເຮົາຈັກບໍ່ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃສ່ນ້ຳ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸທັງຫຼາຍຢ່າງນີ້

## ເລື້ອງພຣະສັບພັກຄີ ຈົບ

## ເລື້ອງພິກຂຸຜູ້ເປັນໄຂ້

[ຜ໕໔] ສະໄໝນັ້ນ ພວກພິກຂຸຜູ້ເປັນໄຂ້ຢ້ຳເກງຢູ່ທີ່ຈະຖ່າຍອຸດຈາຣະແດ່ ປັດສາວະ ແດ່ ບ້ວນນ້ຳລາຍແດ່ ລົງໃສ່ນ້ຳ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮັບຮູ້

## ຊົງອະນຸຍາດພິກຂຸຜູ້ເປັນໄຂ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ຖ່າຍອຸຈາຣະ ແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃສ່ນ້ຳໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

**ເພິ່ງໃສ່ໃຈວ່າ ເຮົາບໍ່ເປັນໄຂ້ ຈັກບໍ່ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃສ່ນ້ຳ**

## ເລື້ອງພິກຂຸຜູ້ເປັນໄຂ້ ຈົບ

## ສິກຂາບົດວິພັງ

ພິກຂຸບໍ່ເປັນໄຂ້ ບໍ່ເພິ່ງຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃສ່ນ້ຳ

ພິກຂຸໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃສ່ນ້ຳ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

| | |
|---|---|
| ໑. ພິກຂຸບໍ່ຈິງໃຈ | ໒. ພິກຂຸບໍ່ມີສະຕິ |
| ໓. ພິກຂຸຜູ້ບໍ່ຮູ້ | ໔. ພິກຂຸຜູ້ເປັນໄຂ້ |
| ໕. ພິກຂຸຖ່າຍເທິງບົກແຕ່ໄຫຼລົງໃສ່ນ້ຳ | ໖. ພິກຂຸຜູ້ມີເຫດຂັດຂ້ອງ |
| ໗. ພິກຂຸວິກົນຈະລິດ | ໙. ພິກຂຸຈິດຟຸ້ງຊ່ານ |
| ໘. ພິກຂຸຖືກເວທະນາບີບຄັ້ນ | ໑໐. ພິກຂຸຕົ້ນບັນຍັດ |

**ສິກຂາບົດທີ ໑໕ ຈົບ**

**ປາທຸກາວັກທີ ໗ ຈົບ**

## ບົດສະຫຼຸບ

ທ່ານທັງຫຼາຍ ທຳຄືເສຂິຍະທັງຫຼາຍ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍ ໃນທຳຄືເສຂິຍະເຫຼົ່ານັ້ນວ່າ

ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ "ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ທ່ານທັງຫຼາຍ ບໍລິສຸດແລ້ວໃນທຳຄືເສຂິຍະເຫຼົ່ານີ້ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ເສຂິຍະ ຈົບ**

**ເສຂິຍະກັນ ຈົບ**

# ໘. ອະທິກະຣະນະສະມະຖະ

ທ່ານທັງຫຼາຍ ທຳຄືອະທິກະຣະນະສະມະຖະ ໗ ເຫຼົ່ານີ້ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບດັ່ງຕໍ່ໄປນີ້

(ທຳເປັນເຄື່ອງລະງັບອະທິກອນ ໗ ຢ່າງ ຄື)

[໖໕໕] ເພື່ອລະງັບອະທິກອນທີ່ເກີດຂຶ້ນແລ້ວ ໆ (໑) ເພິ່ງໃຫ້ສຳມຸຂາວິໄນ (໒) ເພິ່ງໃຫ້ສະຕິວິໄນ (໓) ເພິ່ງໃຫ້ອະມູລະຫະວິໄນ (໔) ເພິ່ງໃຫ້ປະຕິນຍາຕະກະຣະນະ (໕) ເພິ່ງໃຫ້ເຍພຸຍຍະຊິກາ (໖) ເພິ່ງໃຫ້ຕັດສະປາປີຍະສິກາ (໗) ເພິ່ງໃຫ້ຕິນະວັດຖາຣະກະ

## ບົດສະຫຼຸບ

ທ່ານທັງຫຼາຍ ທຳຄືອະທິກະຣະນະສະມະຖະ ໗ ຢ່າງ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມທ່ານທັງຫຼາຍ ໃນທຳ ຄື ອະທິກະຣະນະສະມະຖະເຫຼົ່ານັ້ນ ວ່າ

ທ່ານທັງຫຼາຍບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ "ທ່ານທັງຫຼາຍ ບໍລິສຸດແລ້ວບໍ?

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ "ທ່ານທັງຫຼາຍ ບໍລິສຸດແລ້ວບໍ?"

ທ່ານທັງຫຼາຍ ບໍລິສຸດແລ້ວໃນທຳ ຄື ອະທິກະຣະນະສະມະຖະ ໗ ເຫຼົ່ານີ້ ຍ້ອນເຫດນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ອະທິກະຣະນະສະມະຖະ ຈົບ**

# ຄຳນິຄົມ

ທ່ານທັງຫຼາຍ ນິທານ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

| | |
|---|---|
| ທຳ ຄື ປາຣາຊິກ ໔ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ສັງຄາທິເສດ ໑໓ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ອະນິຍະຕະ ໒ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ປາຈິດຕີ ໙໒ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ປະຕິເທສະນີຍະ ໔ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ເສຂິຍະທັງຫຼາຍ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ອະທິກະຣະນະສະມະຖະ ໗ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |

ສິກຂາບົດຂອງພຣະຜູ້ມີພຣະພາກເຈົ້ານັ້ນມີເທົ່ານີ້ ມາໃນສູດ ນັບເນື່ອງໃນສູດ ມາສູ່ອາຣະທີ່ຈະເພິ່ງຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກ ໆ ເຄິ່ງເດືອນ

ພວກເຮົາທັງໝົດ ເພິ່ງພ້ອມພຽງກັນ ຮ່ວມໃຈກັນ ບໍ່ວິວາດຜິດຖຽງກັນ ສຶກສາຢູ່ໃນສິກຂາທັງຫຼາຍນັ້ນ ເຖີ້ນ

**ມະຫາວິພັງ ຈົບ**